# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໐

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໘

## ທີຄະນິກາຍມະຫາວັກ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄໍາປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທໍາມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈໍານວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກໍາຄ່າໃຊ້ຈ່າຍ ຈົນສໍາເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄໍາສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລໍາພັງພຽງອົງດຽວຢູ່ຫໍທໍາມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສໍາເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສໍາເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສໍານວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນໍາເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄໍານໍາ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄໍາຜິດ ສໍານວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນໍາໃຫ້ລະມັດລະວັງໃນການນໍາໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອໍານວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນໍາໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນໍາເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທໍາຂອງອົງສົມເດັດ ພຣະສໍາມາສໍາພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

**໕. ຊະນະວະສະພະສູດ**

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໐

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໘

## ທີຄະນິກາຍມະຫາວັກ

**ຂໍນ້ອບນອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ**

## ໑. ມະຫາປະທານສູດ

### ວ່າດ້ວຍພຣະປະຫວັດຂອງພຣະພຸດທະເຈົ້າ ໗ ພຣະອົງ

### ເລື້ອງກ່ຽວກັບບຸບເພນິວາດ

[໑] ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ກະເຣຣີກຸດຕີ ໃນພຣະເຊຕະວັນອາຣາມ ຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ

ຄັ້ງນັ້ນ ພິກຂຸຫຼາຍອົງກັບຈາກບິນທະບາດ ພາຍຫຼັງສັນອາຫານແລ້ວ ໄດ້ນັ່ງປະຊຸມກັນ ໃນທໍານັ່ງໃກ້ກະເຣລິມັນທົບ ໄດ້ສົນທະນາທໍາອັນກ່ຽວກັບບຸບເພນິວາດວ່າ "ບຸບເພນິວາດມີໄດ້ ເພາະເຫດແນວນີ້ ໆ"

[໔] ພຣະຜູ້ມີພຣະພາກເຈົ້າ ຊົງສະດັບຄໍາສົນທະນາຂອງພິກຂຸເຫຼົ່ານັ້ນ ດ້ວຍທິບພະໂສຕະທາດ ອັນບໍລິສຸດເໜືອມະນຸດ ແລ້ວໄດ້ສະເດັດລຸກຈາກພຸດທະອາດເຂົ້າໄປທີ່ທໍານັ່ງໃກ້ກະເຣລິມັນທົບ ປະທັບນັ່ງເທິງພຸດທະອາດທີ່ປູລາດຖວາຍໄວ້ໃຫ້ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ "ດູຣາ ພິກຂຸທັງຫຼາຍ ບັດນີ້ ທ່ານທັງຫຼາຍນັ່ງປະຊຸມສົນທະນາກັນດ້ວຍເລື້ອງຫຍັງແດ່ ເລື້ອງອັນໃດທີ່ທ່ານທັງຫຼາຍສົນທະນາກັນຄ້າງໄວ້?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນ ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພວກຂ້າພຣະອົງທັງຫຼາຍ ເມື່ອກັບຈາກບິນທະບາດພາຍຫຼັງສັນອາຫານແລ້ວ ໄດ້ນັ່ງປະຊຸມກັນໃນຫໍນັ່ງໃກ້ກະເຣລິມັນທົບ ສົນທະນາທຳອັນກ່ຽວກັບບຸບເພນິວາດວ່າ "ບຸບເພນິວາດມີໄດ້ເພາະເຫດແນວນີ້ ໆ" ເລື້ອງນີ້ແລ ທີ່ຂ້າພຣະອົງທັງຫຼາຍສົນທະນາກັນຄ້າງໄວ້ພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ ຂ້ານ້ອຍ"

[໓] ພຣະຜູ້ມີພຣະພາກເຈົ້າ ຕັດຖາມວ່າ "ດູຣາ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຕ້ອງການຈະຟັງທຳມີກະຖາອັນກ່ຽວກັບບຸບເພນິວາດຫຼືບໍ່?"

ພວກພິກຂຸທູນຕອບວ່າ "ຂ້າແດ່ ພຣະຜູ້ມີພຣະພາກຜູ້ສຸຄົດເຈົ້າ ເຖິງການອັນສົມຄວນທີ່ພຣະຜູ້ມີພຣະພາກເຈົ້າຈະຊົງສະແດງທຳ ອັນມີກະຖາກ່ຽວກັບບຸບເພນິວາດ ເມື່ອພິກຂຸທັງຫຼາຍໄດ້ຟັງຈາກພຣະຜູ້ມີພຣະພາກເຈົ້າແລ້ວ ຈະໄດ້ຈື່ຈຳໄວ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ຂຶ້ນມາວ່າ

[໔] "ດູຣາ ພິກຂຸທັງຫຼາຍ ນັບຈາກກັບນີ້ຖອຍຫຼັງໄປ ໙໑ ກັບ ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ ໄດ້ສະເດັດອຸບັດຂຶ້ນໃນໂລກນັບຈາກກັບນີ້ຖອຍ ຫຼັງໄປ ໓໑ ກັບ ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີໄດ້ສະເດັດອຸບັດຂຶ້ນໃນໂລກໃນກັບທີ ໓໑ ນັ້ນເອງ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ເວດສະພູໄດ້ສະເດັດອຸບັດຂຶ້ນໃນໂລກໃນພັດທະກັບນີ້ເອງ ພຣະຜູ້ມີພຣະພາກອະຣະຫັນຕະສຳມາສັມພຸດທະເຈົ້າພຣະນາມວ່າ ກະກຸສັນທະ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ໂກນາຄະມະນະ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະນາມວ່າ ກັດສະປະ ໄດ້ສະເດັດອຸບັດຂຶ້ນໃນໂລກ ບັດນີ້ ເຮົາຜູ້ເປັນອະຣະຫັນຕະ ສຳມາສຳພຸດທະເຈົ້າກໍໄດ້ອຸບັດຂຶ້ນມາໃນໂລກໃນພັດທະກັບນີ້ຄືກັນ

[໕] ພຣະວິປັດສີພຸດທະເຈົ້າ ພຣະສິຂີພຸດທະເຈົ້າ ພຣະເວດສະພູພຸດທະເຈົ້າ ມີພຣະຊາດເປັນກະສັດໄດ້ສະເດັດອຸບັດຂຶ້ນໃນຕະກູນກະສັດ ພຣະກະກຸສັນທະພຸດທະເຈົ້າ ພຣະໂກນາຄະມະນະພຸດທະເຈົ້າ ພຣະກັດສະປະພຸດທະເຈົ້າມີພຣະຊາດເປັນພາມໄດ້ສະເດັດອຸບັດຂຶ້ນໃນຕະກູນພາມ ບັດນີ້ເຮົາຜູ້ເປັນອະຣະຫັນຕະ ສຳມາສຳພຸດທະເຈົ້າ ມີຊາດເປັນກະສັດໄດ້ອຸບັດຂຶ້ນໃນຕະກູນກະສັດ

[໖] ພຣະວິປັດສີພຸດທະເຈົ້າມີພຣະໂຄດວ່າ ໂກນທັນຍະ ພຣະສິຂີພຸດທະເຈົ້າມີພຣະໂຄດວ່າ ໂກນທັນຍະ ພຣະເວດສະພູພຸດທະເຈົ້າມີພຣະໂຄດວ່າ ໂກນທັນຍະ ພຣະກະກຸສັນທະພຸດທະເຈົ້າມີພຣະໂຄດວ່າ ກັດສະປະ ພຣະໂກນາຄະມະນະພຸດທະເຈົ້າມີພຣະໂຄດວ່າ ກັດສະປະ ພຣະກັດສະປະພຸດທະເຈົ້າມີພຣະໂຄດວ່າ ກັດສະປະ ບັດນີ້ ເຮົາຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າ ມີໂຄດວ່າ ໂຄຕະມະ

[໗] ພຣະວິປັດສີພຸດທະເຈົ້າ ມີພຣະຊົນມາຍຸປະມານ ໘໐,໐໐໐ ປີ ພຣະສິຂີພຸດທະເຈົ້າມີພຣະຊົນມາຍຸປະມານ ໗໐,໐໐໐ ປີ ພຣະເວດສະພູພຸດທະເຈົ້າມີພຣະຊົນມາຍຸປະມານ ໖໐,໐໐໐ ປີ ພຣະກະກຸສັນທະພຸດທະເຈົ້າມີພຣະຊົນມາຍຸປະມານ ໔໐,໐໐໐ ປີ ພຣະໂກນາຄະມະນະພຸດທະເຈົ້າມີພຣະຊົນມາຍຸປະມານ ໓໐,໐໐໐ ປີ ພຣະກັດສະປະພຸດທະເຈົ້າມີພຣະຊົນມາຍຸປະມານ ໒໐,໐໐໐ ປີ ບັດນີ້ເຮົາມີອາຍຸພຽງເລັກໜ້ອຍ ຜູ້ທີ່ມີອາຍຸຍືນກໍພຽງ ໑໐໐ ປີ ຫຼື ເກີນໄປອີກເລັກໜ້ອຍ

[໘] ພຣະວິປັດສີພຸດທະເຈົ້າຕັດສະຣູ້ຢູ່ກ້ອງຕົ້ນແຄຝອຍ ພຣະສິຂີພຸດທະເຈົ້າຕັດສະຣູ້ຢູ່ກ້ອງຕົ້ນໝາກມ່ວງ ພຣະເວດສະພູພຸດທະເຈົ້າ ຕັດສະຣູ້ຢູ່ກ້ອງຕົ້ນສາລະ ພຣະກະກຸສັນທະພຸດທະເຈົ້າຕັດສະຣູ້ຢູ່ກ້ອງຕົ້ນຊຶກ ພຣະໂກນາຄະມະນະພຸດທະເຈົ້າຕັດສະຣູ້ຢູ່ກ້ອງຕົ້ນມະເດື່ອ ພຣະກັດສະປະພຸດທະເຈົ້າຕັດສະຣູ້ຢູ່ກ້ອງຕົ້ນໄຮ ບັດນີ້ເຮົາຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າຕັດສະຣູ້ຢູ່ກ້ອງຕົ້ນອັດສັດຖະ (ຕົ້ນໂພ)

[໙] ພຣະວິປັດສີພຸດທະເຈົ້າ ຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນໄດ້ແກ່ ພຣະຂັນຖະແລະ ພຣະຕິດສະ ພຣະສິຂີພຸດທະເຈົ້າ ຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນໄດ້ແກ່ ພຣະອະພິພູ ແລະ ພຣະສັມພະວະ ພຣະເວດສະພູພຸດທະເຈົ້າຊົງມີຄູ່ພຣະອັກຄະຣະສາວົກເປັນ ຄູ່ທີ່ຈະເລີນໄດ້ແກ່ພຣະໂສນະ ແລະ ພຣະອຸດຕະຣະ ພຣະກະກຸສັນທະພຸດທະເຈົ້າຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນໄດ້ແກ່ພຣະວິທູຣະ ແລະ ພຣະສັນຊີວະ ພຣະໂກນາຄະມະນະພຸດທະເຈົ້າຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນ ໄດ້ແກ່ ພຣະພິຍະໂຍສະ ແລະ ພຣະອຸດຕະຣະ ພຣະກັດສະປະພຸດ ທະເຈົ້າ ຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນໄດ້ແກ່ ພຣະຕິດສະ ແລະ ພຣະພາລະທະວາຊະ ບັດນີ້ເຮົາມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນໄດ້ແກ່ ພຣະສາຣີບຸດ ແລະ ພຣະໂມກຄັນລານະ

[໑໐] ພຣະວິປັດສີພຸດທະເຈົ້າ ມີການປະຊຸມພຣະສາວົກ ໓ ເທື່ອ ເທື່ອທີ ໑ ມີພິກຂຸ ໑໖໘,໐໐໐ ອົງ ເທື່ອທີ ໔ ມີພິກຂຸ ໑໐໐,໐໐໐ ອົງ ເທື່ອທີ ໓ ມີພິກຂຸ ໘໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມທັງ ໓ ເທື່ອ ລ້ວນແຕ່ເປັນພຣະຂີນາສົບ

ພຣະສິຂີພຸດທະເຈົ້າ ມີການປະຊຸມພຣະສາວົກ ໓ ເທື່ອ ເທື່ອທີ ໑ ມີພິກຂຸ ໑໐໐,໐໐໐ ອົງ ເທື່ອທີ ໒ ມີພິກຂຸ ໘໐,໐໐໐ ອົງ ເທື່ອທີ ໓ ມີ ພິກຂຸ ໗໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມທັງ ໓ ເທື່ອລ້ວນແຕ່ເປັນພຣະຂີນາສົບ

ພຣະເວດສະພູພຸດທະເຈົ້າ ມີການປະຊຸມພຣະສາວົກ ໓ ເທື່ອ ເທື່ອທີ ໑ ມີພິກຂຸ ໘໐,໐໐໐ ອົງເທື່ອທີ ໒ ມີພິກຂຸ ໗໐,໐໐໐ ອົງ ເທື່ອທີ ໓ ມີພິກຂຸ ໖໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມທັງ ໓ ເທື່ອ ລ້ວນແຕ່ເປັນພຣະຂີນາສົບ

ພຣະກະກຸສັນທະພຸດທະເຈົ້າ ມີການປະຊຸມພຣະສາວົກຄັ້ງດຽວ ມີພິກຂຸ ໔໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມລ້ວນແຕ່ເປັນພຣະຂີນາສົບ

ພຣະໂກນາຄະມະນະພຸດທະເຈົ້າ ມີການປະຊຸມພຣະສາວົກເທື່ອດຽວ ມີພິກຂຸ ໓໐,໐໐໐ ອົງພຣະສາວົກທີ່ເຂົ້າປະຊຸມລ້ວນແຕ່ເປັນພຣະຂີນາສົບ

ພຣະກັດສະປະພຸດທະເຈົ້າ ມີການປະຊຸມພຣະສາວົກເທື່ອດຽວ ມີພິກຂຸ ໒໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມລ້ວນແຕ່ເປັນພຣະຂີນາສົບ

ບັດນີ້ ເຮົາມີການປະຊຸມພຣະສາວົກເທື່ອດຽວ ມີພິກຂຸ ໑,໒໕໐ ອົງ ພຣະສາວົກທີ່ເຂົ້າປະຊຸມລ້ວນແຕ່ເປັນພຣະຂີນາສົບ

[໑໑] ພຣະວິປັດສີພຸດທະເຈົ້າ ມີພິກຂຸອະໂສກະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ພຣະສິຂີພຸດທະເຈົ້າ ມີພິກຂຸເຂມັງກອນເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ພຣະເວດສະພູພຸດທະເຈົ້າ ມີພິກຂຸອຸປະສັນຕະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ພຣະກະກຸສັນທະພຸດທະເຈົ້າມີພິກຂຸວຸດຖິຊະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ພຣະໂກນາຄະມະນະພຸດທະເຈົ້າມີພິກຂຸໂສດຖິຊະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ພຣະກັດສະປະພຸດທະເຈົ້າ ມີພິກຂຸສັບພະມິດຕະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ບັດນີ້ ເຮົາມີພິກຂຸອານົນເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ

[໑໒] ພຣະວິປັດສີພຸດທະເຈົ້າ ມີພຣະເຈົ້າພັນທຸມາເປັນພຣະບິດາ ພຣະນາງພັນທຸມະດີເທວີເປັນພຣະມານດາຜູ້ໃຫ້ກຳເນີດ ເມືອງພັນທຸມະດີເປັນຣາດຊະທານີຂອງພຣະເຈົ້າພັນທຸມາ

ພຣະສິຂີພຸດທະເຈົ້າ ມີພຣະເຈົ້າອະຣຸນະເປັນພຣະບິດາ ພຣະນາງປະພາວະດີເທວີເປັນພຣະມານດາຜູ້ໃຫ້ກຳເນີດ ເມືອງອະຣຸນະວະດີເປັນຣາດຊະທານີຂອງພຣະເຈົ້າອະຣຸນະ

ພຣະເວດສະພູພຸດທະເຈົ້າ ມີພຣະເຈົ້າສຸບປະຕິຕະເປັນພຣະບິດາ ພຣະນາງຍະສະວະດີເທວີເປັນພຣະມານດາຜູ້ໃຫ້ກຳເນີດ ເມືອງອະໂນມະເປັນຣາດຊະທານີຂອງພຣະເຈົ້າສຸບປະຕິຕະ

ພຣະກະກຸສັນທະພຸດທະເຈົ້າ ມີພາມອັກຄີທັດເປັນພຣະບິດາ ນາງພາມມະນີວິສາຂາເປັນພຣະມານດາຜູ້ໃຫ້ກຳເນີດ ໃນສະໄໝນັ້ນ ໄດ້ມີພຣະຣາຊາຊົງພຣະນາມວ່າ ເຂມະ ເມືອງເຂມະວະດີເປັນຣາດຊະທານີຂອງພຣະເຈົ້າເຂມະ

ພຣະໂກນາຄະມະນະພຸດທະເຈົ້າ ມີພາມຍັນຍະທັດເປັນພຣະບິດາ ນາງພາມມະນີອຸດຕະຣາເປັນພຣະມານດາຜູ້ໃຫ້ກຳເນີດ ໃນສະໄໝນັ້ນ ໄດ້ມີພຣະຣາຊາຊົງພຣະນາມວ່າ ໂສພະ ເມືອງໂສພະວະດີເປັນຣາດຊະທານີຂອງພຣະເຈົ້າໂສພະ

ພຣະກັດສະປະພຸດທະເຈົ້າ ມີພາມພົມມະທັດເປັນພຣະບິດາ ນາງພາມມະນີທະນະວະດີເປັນພຣະມານດາຜູ້ໃຫ້ກຳເນີດ ໃນສະໄໝນັ້ນ ໄດ້ມີພຣະຣາຊາຊົງພຣະນາມວ່າ ກິງກີ ເມືອງພາຣານະສີເປັນຣາດຊະທານີຂອງພຣະເຈົ້າກິງກີ

ບັດນີ້ເຮົາ ມີພຣະເຈົ້າສຸດໂທທະນະເປັນພຣະບິດາ ພຣະນາງມາຍາເທວີເປັນພຣະມານດາຜູ້ໃຫ້ກຳເນີດ ເມືອງກະບິນລະພັດເປັນຣາດຊະທານີ" ພຣະຜູ້ມີພຣະພາກ ຜູ້ສຸຄົດໄດ້ຕັດເລື້ອງນີ້ແລ້ວຈຶ່ງສະເດັດລຸກຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

[໑໓] ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພິກຂຸເຫຼົ່ານັ້ນໄດ້ສົນທະນາເລື້ອງທີ່ຄ້າງໄວ້ຕໍ່ໄປແນວນີ້ວ່າ "ທ່ານຜູ້ມີອາຍຸ ເປັນຕາງຶດແທ້ນໍ ບໍ່ເຄີຍພົບກົດວ່າ ພຣະຕະຖາຄົດຊົງມີລິດຫຼາຍ ຊົງມີອານຸພາບຫຼາຍ ຊົງລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການ ຜູ້ຊົງໄດ້ປະຣິນິບພານນານແລ້ວ ຜູ້ຕັດຂາດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັຄຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແນວນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແນວນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແນວນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແນວນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແນວນີ້"

ທ່ານຜູ້ມີອາຍຸເປັນແນວໃດນໍ? ທີ່ພຣະຕະຖາຄົດຊົງມີປັນຍາແທງຕະຫຼອດທຳມະທາດນີ້ຈຶ່ງເປັນເຫດໃຫ້ຊົງລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການ ຜູ້ປະຣິນິບພານນານ

ແລ້ວ ຜູ້ຕັດຂາດຈາກທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແບບນີ້ແມ່ນບໍ?"

ຫຼື ວ່າ ເພາະເຫຼົ່າເທວະດາໄດ້ຂາບທູນຄວາມຂໍ້ນີ້ແດ່ ພຣະຕະຖາຄົດເຈົ້າ ຈຶ່ງເປັນເຫດໃຫ້ຊົງລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການ ຜູ້ປະຣິນິບພານແລ້ວ ຜູ້ຕັດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແບບນີ້" ພິກຂຸເຫຼົ່ານັ້ນ ສົນທະນາກັນໃນເລື້ອງນີ້ຄ້າງໄວ້ທໍ່ນີ້

[໑໔] ເມື່ອໃນເວລາເຢັນມາຮອດ ພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກການຫຼີບຫຼີກໃນທີ່ອັນສະຫງັດ ເຂົ້າໄປສູ່ທີ່ນັ່ງໃກ້ກະເຣຣິມົນດົບ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ໃຫ້ ແລ້ວຕັດຖາມພິກຂຸທັງຫຼາຍແບບນີ້ວ່າ "ດູຣາ ພິກຂຸທັງຫຼາຍ ບັດນີ້ ພວກທ່ານທັງຫຼາຍນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດ? ເລື້ອງຫຍັງແດ່? ທີ່ພວກທ່ານທັງຫຼາຍໄດ້ສົນທະນາກັນຄ້າງເອົາໄວ້"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ ພິກຂຸເຫຼົ່ານັ້ນ ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ຂ້າພຣະອົງທັງຫຼາຍໄດ້ສົນທະນາກັນໃນເລື້ອງທີ່ຄ້າງໄວ້ມີແບບນີ້ວ່າ "ທ່ານຜູ້ມີອາຍຸ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດມີມາກ່ອນວ່າ ພຣະຕະຖາຄົດເຈົ້າ ຊົງມີລິດຫຼາຍ ຊົງມີອານຸພາບຫຼາຍ ຊົງ

ລະນຶກເຖິງພຣະພຸດທະເຈົ້າທັງຫຼາຍ ໃນອະດີດຕະການ ຜູ້ປະຣິນິບພານແລ້ວ ຜູ້ຕັດຂາດຈາກທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແບບນີ້"

ທ່ານຜູ້ມີອາຍຸເປັນແບບໃດບໍ? ທີ່ພຣະຕະຖາຄົດ ຊົງມີປັນຍາແທງຕະຫຼອດທຳມະທາດນີ້ ຈຶ່ງເປັນເຫດໃຫ້ຊົງລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການຜູ້ປະຣິນິບພານນານແລ້ວຜູ້ຕັດຂາດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຫຼົ່ານັ້ນ ຈຶ່ງຊົງມີສີນແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແບບນີ້ແມ່ນບໍ?"

ຫຼື ວ່າ ເພາະເຫຼົ່າເທວະດາໄດ້ຂາບທູນຄວາມຂໍ້ນີ້ແດ່ ພຣະຕະຖາຄົດ ຈຶ່ງເປັນເຫດໃຫ້ຊົງລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການ ຜູ້ປະຣິນິບພານນານແລ້ວ ຜູ້ຕັດຂາດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຫຼົ່ານັ້ນ ຈຶ່ງຊົງມີປັນຍາແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກ

ເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແນວນີ້" ເລື່ອງນີ້ແລ ທີ່ພວກຂ້າພຣະອົງໄດ້ສົນທະນາຄ້າງໄວ້ ກໍພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາຮອດແນວນີ້ແລ ຂ້ານ້ອຍ"

[໑໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ພິກຂຸທັງຫຼາຍ ເພາະຕະຖາຄົດມີປັນຍາແທງຕະຫຼອດທຳມະທາດ ນີ້ຈຶ່ງເປັນເຫດໃຫ້ລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການ ຜູ້ປະຣິນິບພານນານແລ້ວ ຜູ້ຕັດຂາດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແນວນີ້"

ແມ່ນເຫຼົ່າເທວະດາ ກໍໄດ້ບອກຄວາມຂໍ້ນີ້ແກ່ຕະຖາຄົດ ຈຶ່ງເປັນເຫດໃຫ້ລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການ ຜູ້ປະຣິນິບພານນານແລ້ວ ຜູ້ຕັດຂາດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແນວນີ້ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແນວນີ້ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແນວນີ້" ພິກຂຸທັງຫຼາຍ ທ່ານທັງຫຼາຍ ຕ້ອງການຈະຟັງທຳມີກະຖາອັນກ່ຽວກັບບຸບເພນິວາດນອກເໜືອຈາກນີ້ອີກຫຼືບໍ່?"

ພວກພິກຂຸທູນຕອບວ່າ "ຂ້າແດ່ ພຣະຜູ້ມີພຣະພາກຜູ້ສຸຄົດເຈົ້າ ເຖິງການອັນສົມຄວນທີ່ພຣະຜູ້ມີພຣະພາກເຈົ້າ ຈະຊົງສະແດງທຳມີກະຖາ ອັນກ່ຽວກັບບຸບເພນິວາດນອກຈາກນີ້ອີກ ເມື່ອພິກຂຸທັງ ຫຼາຍໄດ້ຟັງຈາກພຣະຜູ້ມີພຣະພາກແລ້ວ ຈະໄດ້ຈື່ຈຳໄວ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານທັງຫຼາຍ ຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກຈຶ່ງໄດ້ຕັດເລື້ອງນີ້ວ່າ

## ພຣະປະຫວັດຂອງພຣະວິປັດສີພຸດທະເຈົ້າ

[໑໖] "ດູຣາ ພິກຂຸທັງຫຼາຍ ນັບຈາກກັບນີ້ຖອຍຫຼັງໄປ ໙໑ ກັບ ພຣະວິປັດສີພຸດທະເຈົ້າ ໄດ້ສະເດັດອຸບັດຂຶ້ນໃນໂລກມີພຣະຊາດເປັນກະສັດ ໄດ້ສະເດັດອຸບັດຂຶ້ນໃນຕະກູນກະສັດ ມີພຣະໂຄດວ່າ ໂກນທັນຍະ ມີພຣະຊົນມາຍຸປະມານ ໘໐,໐໐໐ ປີ ຕັດສະຣູ້ຢູ່ກ້ອງຕົ້ນແຄຝອຍຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນ ໄດ້ແກ່ພຣະຂັນຖະ ແລະ ພຣະຕິດສະມີການປະຊຸມພຣະສາວົກ ໓ ຄັ້ງ ເທື່ອທີ ໑ ມີພິກຂຸ ໑໖໘,໐໐໐ ອົງ ເທື່ອທີ ໒ ມີພິກຂຸ ໑໐໐,໐໐໐ ອົງ ເທື່ອທີ ໓ ມີພິກຂຸ ໘໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມທັງ ໓ ຄັ້ງ ລ້ວນແຕ່ເປັນພຣະຂີນາສົບມີພິກຂຸອະໂສກະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ມີພຣະເຈົ້າພັນທຸມາເປັນພຣະບິດາພຣະນາງພັນທຸມະດີເທວີເປັນພຣະມານດາຜູ້ໃຫ້ກຳເນີດ ເມືອງພັນທຸມະດີເປັນຣາດຊະທານີຂອງພຣະເຈົ້າພັນທຸມາ

## ກົດທຳມະດາຂອງພຣະໂພທິສັດ ໑໖ ປະການ

[໑໗] ໑. ດູຣາ ພິກຂຸທັງຫຼາຍ ພຣະວິປັດສີໂພທິສັດຊົງມີສະຕິສຳປະຊັນຍະ ຕະຫຼອດຕັ້ງແຕ່ຈຸ ຕິຈາກສະຫວັນຊັ້ນດຸສິດ ຈົນເຖິງສະເດັດລົງສູ່ພຣະອຸທອນຂອງພຣະມານດາ ຂໍ້ນີ້ ເປັນກົດທຳມະດາໃນເລື້ອງນີ້

[໑໘] ໒. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດຈຸຕິຈາກສະຫວັນຊັ້ນດຸສິດ ສະເດັດລົງສູ່ພຣະອຸທອນຂອງພຣະມານດາ ແສງສະຫວ່າງອັນຮຸ່ງເຮືອງຫາປະມານບໍ່ໄດ້ ຜາກົດຂຶ້ນໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດ ລ່ວງເທວານຸພາບຂອງເຫຼົ່າເທບ ແມ່ນໃນຊ່ອງວ່າງລະຫວ່າງໂລກ ເຊິ່ງບໍ່ມີຫຍັງຂັ້ນມີສະພາບມືດມິດ ຫຼື ທີ່ທີ່ແສງຂອງດວງຈັນ ແລະ ດວງອາທິດເຊິ່ງມີລິດຫຼາຍ ມີອານຸພາບຫຼາຍສ່ອງແສງໄປບໍ່ເຖິງກໍມີ ແສງສະຫວ່າງຮຸ່ງເຮືອງຫາປະມານບໍ່ໄດ້ຜາກົດຂຶ້ນລ່ວງເທວານຸພາບຂອງເຫຼົ່າເທບເພາະແສງສະຫວ່າງນັ້ນ ເຫຼົ່າສັດທີ່ເກີດໃນບ່ອນນັ້ນ ໆ ຈຶ່ງຮູ້ຈັກກັນ ແລະ ກັນວ່າ "ຍັງມີສັດອື່ນເກີດໃນບ່ອນນີ້ຄືກັນ" ແລະ ໝື່ນໂລກກະທາດນີ້ຍ່ອມຫວັ່ນໄຫວສັ່ນສະເທືອນ ທັງແສງສະຫວ່າງອັນຮຸ່ງເຮືອງຫາປະມານບໍ່ໄດ້ ກໍຜາກົດຂຶ້ນໃນໂລກ ລື່ນເທວານຸພາບຂອງເຫຼົ່າເທບ ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໑໗] ໓. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດສະເດັດລົງສູ່ພຣະອຸທອນຂອງພຣະມານດາເທບພະບຸດ ໔ ອົງ ເຂົ້າໄປອາຮັກຂາປະຈຳທັງ ໔ ທິດ ດ້ວຍຕັ້ງໃຈວ່າ "ມະ ນຸດ ຫຼື ອະມະນຸດໃດ ໆ ຢ່າໄດ້ບຽດບຽນພຣະໂພທິສັດ ຫຼື ພຣະມານດາຂອງພຣະໂພທິສັດເລີຍ" ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໔໐] ໔. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດສະເດັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາມີປົກກະຕິຊົງສິນ ຄື ເວັ້ນຈາກການຂ້າສັດ ເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຈາກການປະພຶດຜິດໃນກາມ ເວັ້ນຈາກການເວົ້າຕົວະ ເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາ ແລະ ເມໄລອັນເປັນເຫດແຫ່ງຄວາມປະໝາດ ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໔໑] ໕. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດສະເດັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງບໍ່ຊົງມີຄວາມຮູ້ສຶກທາງກາມາຣົມ ເປັນຜູ້ທີ່ບຸຣຸດຜູ້ມີຈິດກຳໜັດໃດ ໆ ກໍຕາມ ບໍ່ສາມາດລ່ວງເກີນໄດ້ ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໔໒] ໖. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດສະເດັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງຊົງໄດ້ກາມມະຄຸນ ໕ ເອີບອີ່ມ ພຽບພ້ອມ ໄດ້ຮັບການບົວຣະບັດຢູ່ດ້ວຍກາມມະຄຸນ ໕ ຂໍ້ນີ້ ເປັນກົດທຳມະດາໃນເລື້ອງນີ້

[໔໓] ໗. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດສະເດັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງບໍ່ຊົງມີຄວາມເຈັບປ່ວຍໃດ ໆ ຊົງມີຄວາມສຸກບໍ່ລຳບາກພຣະວໍຣະກາຍ ເຫັນພຣະໂພທິສັດຢູ່ພາຍໃນພຣະອຸທອນ ມີພຣະອະໄວຍະວະສົມບູນ ມີພຣະອິນຊີບໍ່ບົກພ່ອງ ດູຣາ ພິກຂຸທັງຫຼາຍ ປຽບຄືແກ້ວໄພທູນອັນງົດງາມຕາມທຳມະຊາດ ມີແປດຫຼ່ຽມທີ່ເຈຍຣະໄນດີແລ້ ວມີສີໃສເຫຼື້ອມໄດ້ສັດສ່ວນ ມີດ້າຍສີຂຽວ ເຫຼືອງ ແດງ ຂາວ ຫຼື ສີນວນ ຮ້ອຍຢູ່ຂ້າງໃນຄົນຕາເຖິງຈັບແກ້ວໄພທູນນັ້ນ ວາງໄວ້ໃນມືພິຈາລະນາແລ້ວຮູ້ວ່າ "ນີ້ຄືແກ້ວໄພທູນອັນງົດງາມຕາມທຳມະຊາດມີແປດຫຼ່ຽມ ທີ່ເຈຍຣະໄນດີແລ້ວມີສີໃສເຫຼື້ອມໄດ້ສັດສ່ວນມີດ້າຍສີຂຽວ ເຫຼືອງ ແດງ ຂາວ ຫຼື ສີນວນ ຮ້ອຍຢູ່ຂ້າງໃນ" ສັນໃດ ເວລາທີ່ພຣະໂພທິສັດສະເດັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງບໍ່ຊົງມີຄວາມເຈັບປ່ວຍໃດ ໆ ຊົງມີຄວາມສຸກບໍ່ລຳບາກພຣະວໍຣະກາຍ ເຫັນພຣະໂພທິສັດຢູ່ພາຍໃນພຣະອຸທອນ ມີພຣະອະໄວຍະວະສົມບູນ ມີພຣະອິນຊີບໍ່ບົກພ່ອງສັນນັ້ນຄືກັນ ໃນຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໔໘] ໗. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເມື່ອພຣະໂພທິສັດປະສູດໄດ້ ໗ ວັນ ພຣະມານດາຂອງພຣະອົງຈະຕ້ອງສະຫວັນນະຄົດຂຶ້ນໄປເກີດໃນສະຫວັນຊັ້ນດຸສິ ຂໍ້ນີ້ເປັນກົດທຳມະດາໃນ ເລື້ອງນີ້

[໔໕] ໘. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ພຣະມານດາຂອງພຣະໂພທິສັດບໍ່ປະສູດພຣະໂອຣົດຄືສະຕີທົ່ວໄປທີ່ເກີດລູກ ຫຼັງຈາກຖືພາໄດ້ ໙ ເດືອນ ຫຼື ໑໐ ເດືອນ ສ່ວນພຣະມານດາຂອງພຣະໂພທິສັດປະສູດພຣະໂອຣົດ ເມື່ອຊົງຖືພາຄົບ ໑໐ ເດືອນທ່ານັ້ນ ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໔໖] ໑໐. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ພຣະມານດາຂອງພຣະໂພທິສັດບໍ່ປະສູດພຣະໂອຣົດຄືສະຕີທົ່ວໄປ ເຊິ່ງຈະນັ່ງເກີດ ຫຼື ນອນເກີດກໍໄດ້ ສ່ວນພຣະມານດາຂອງພຣະໂພທິ ສັດປະທັບຢືນປະສູດທ່ານັ້ນ ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໔໗] ໑໑. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາໃນຕອນເທື່ອທຳອິດ ເຫຼົ່າເທບຈະເຮັດພິທີຕ້ອນຮັບຫຼັງຈາກນັ້ນ ເປັນໜ້າທີ່ຂອງມະນຸດ ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໔໘] ໑໒. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ຍັງບໍ່ທັນສຳຜັດແຜ່ນດິນ ເທບພະບຸດ ໔ ອົງຊ່ອຍກັນອູ້ມພຣະໂພທິສັດໄປໄວ້ເບື້ອງພຣະພັກຂອງພຣະມານດາ ແລ້ວຂາບທູນວ່າ “ໂຜດພໍພຣະທະໄທເທີ້ນພຣະເທວີ ພຣະຣາດຊະໂອຣົດຂອງພຣະອົງທີ່ສະເດັດອຸບັດຂຶ້ນເປັນຜູ້ມີສັກໃຫຍ່” ຂໍ້ນີ້ ເປັນກົດທຳມະດາໃນເລື້ອງນີ້

[໔໙] ໑໓. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາຈະຊົງສະເດັດອອກໂດຍງ່າຍ ບໍ່ເປິເປື້ອນດ້ວຍນ້ຳເມືອກ ເລືອດ ຫຼື ສິ່ງປະ ຕິກູນໃດ ໆ ເປັນຜູ້ສະອາດບໍລິສຸດ ຄື ແກ້ວມະນີທີ່ບຸກຄົນວາງໄວ້ໃນຜ້າກາສີກະພັດຍ່ອມບໍ່ເຮັດໃຫ້ຜ້າກາສີກະພັດເປິເປື້ອນ ເຖິງຜ້າກາສີກະພັດກໍບໍ່ເຮັດໃຫ້ແກ້ວມະນີເປິເປື້ອນ ໃນຂໍ້ນັ້ນເພາະເຫດຫຍັງ? ເພາະສິ່ງທັງສອງເປັນຂອງສະອາດບໍລິສຸດສັນໃດ ດູຣາ ພິກຂຸທັງຫຼາຍ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ສະເດັດອອກໄດ້ໂດຍງ່າຍ ບໍ່ເປິເປື້ອນດ້ວຍນ້ຳເມືອກ ເລືອດ ຫຼື ສິ່ງປະຕິກູນໃດ ໆ ເປັນຜູ້ສະອາດບໍລິສຸດສັນນັ້ນຄືກັນ ຂໍ້ນີ້ເປັນກົດທຳມະດາໃນເລື້ອງນີ້

[໓໐] ໑໔. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ມີທານນ້ຳຜາກົດໃນອາກາດ ໔ ສາຍ ຄື ສາຍນ້ຳເຢັນ ແລະ ສາຍນ້ຳອຸ່ນ ເພື່ອລ້າງສ່ວຍພຣະໂພທິສັດ ແລະ ພຣະມານດາ ຂໍ້ນີ້ ເປັນກົດທຳມະດາໃນເລື້ອງນີ້

[໓໑] ໑໕. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເມື່ອພຣະໂພທິສັດປະສູດໄດ້ບຶດໜຶ່ງຊົງຢືນໄດ້ຢ່າງໝັ້ນຄົງດ້ວຍພຣະບາດທັງສອງທີ່ສະເໝີກັນ ຊົງອວ່າຍພຣະພັກໄປທາງທິດເໜືອຊົງສະເດັດຍ່າງໄປໄດ້ ໗ ກ້າວ ໃນຂະນະທີ່ໝູ່ເທວະດາກັ້ງເສດຕະສັດຕາມສະເດັດທອດພຣະເນດໄປສູ່ທິດຕ່າງ ໆ ແລ້ວຊົງເປັ່ງພຣະອາດສະພິວາຈາ (ວາຈາຢ່າງອົງອາດ) ວ່າ "ເຮົາຄືຜູ້ເລີດຂອງໂລກ ເຮົາຄືຜູ້ຈະເລີນທີ່ສຸດໃນໂລກ ເຮົາຄືຜູ້ປະເສີດທີ່ສຸດໃນໂລກ ຊາດນີ້ ເປັນຊາດສຸດທ້າຍ ບັດນີ້ ພົບໃໝ່ບໍ່ມີອີກ" ຂໍ້ນີ້ ເປັນກົດທຳມະດາໃນເລື້ອງນີ້

[໓໔] ໑໖. ດູຣາ ພິກຂຸທັງຫຼາຍ ມີກົດທຳມະດາດັ່ງນີ້ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ແສງສະຫວ່າງອັນຮຸ່ງເຮືອງຫາປະມານບໍ່ໄດ້ ຜາກົດຂຶ້ນໃນໂລກພ້ອມທັງເທວະໂລກ ມານໂລກ ພົມໂລກໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດ ລ່ວງເທວານຸພາບຂອງເຫຼົ່າເທບ ແມ່ນໃນຊ່ອງວ່າງລະຫວ່າງໂລກເຊິ່ງບໍ່ມີຫຍັງຂັ້ນ ມີສະພາບມືດມິດ ຫຼື ທີ່ທີ່ແສງຂອງດວງຈັນ ແລະ ດວງອາທິດ ເຊິ່ງມີລິດຫຼາຍ ມີອານຸພາບຫຼາຍສ່ອງແສງໄປບໍ່ເຖິງ ກໍມີແສງສະຫວ່າງອັນຮຸ່ງເຮືອງຫາປະມານບໍ່ໄດ້ ຜາກົດຂຶ້ນ ລ່ວງເທວານຸພາບຂອງເຫຼົ່າເທບເພາະແສງສະ ຫວ່າງນັ້ນ ເຫຼົ່າສັດທີ່ເກີດໃນບ່ອນນັ້ນ ໆ ຈຶ່ງຮູ້ຈັກກັນ ແລະ ກັນວ່າ "ຍັງມີສັດອື່ນເກີດໃນບ່ອນນີ້ຄືກັນ" ແລະ ໝື່ນໂລກກະທາດນີ້ ຍ່ອມຫວັ່ນໄຫວສັ່ນສະເທືອນ ທັງແສງສະຫວ່າງອັນຮຸ່ງເຮືອງຫາປະ ມານບໍ່ໄດ້ກໍຜາກົດຂຶ້ນໃນໂລກ ລ່ວງເທວານຸພາບຂອງເຫຼົ່າເທບ ຂໍ້ນີ້ ເປັນກົດທຳມະດາໃນເລື້ອງນີ້

## ລັກສະນະມະຫາບຸຣຸດ ໓໒ ປະການ

[໓໓] ດູຣາ ພິກຂຸທັງຫຼາຍ ເມື່ອພຣະວິປັດສີຣາດຊະກຸມານປະສູດແລ້ວ ພວກອຳມາດໄດ້ຂາບທູນພຣະເຈົ້າພັນທຸມາວ່າ "ຂ້າແຕ່ ມະຫາຣາຊະ ພຣະຣາດຊະໂອຣົດຂອງພຣະອົງປະສູດແລ້ວໂຜດທອດພຣະເນດເທີ້ນ" ພຣະເຈົ້າພັນທຸມາໄດ້ທອດພຣະເນດວິປັດສີຣາດຊະກຸມານແລ້ວຮັບສັ່ງໃຫ້ເຊີນພາມໂຫຣາຈານມາຕັດວ່າ "ພາມໂຫຣາຈານ ຈົ່ງທຳນາຍວິປັດສີຣາດຊະກຸມານ" ພວກພາມໂຫຣາຈານເຫັນພຣະວິປັດສີຣາດຊະກຸມານແລ້ວ ໄດ້ຂາບທູນພຣະເຈົ້າພັນທຸມາວ່າ"ຂ້າແຕ່ ມະຫາຣາຊະ ໂຜດພໍພຣະທະໄທເທີ້ນ ພຣະຣາດຊະໂອຣົດຂອງພຣະອົງທີ່ສະເດັດອຸບັດຂຶ້ນເປັນຜູ້ມີສັກໃຫຍ່ ນັບວ່າເປັນລາບອັນປະເສີດຂອງພຣະອົງ ຜູ້ໄດ້ພຣະຣາດຊະໂອຣົດແນວນີ້ຢູ່ໃນຣາດຕະກູນເພາະພຣະຣາດຊະກຸມານນີ້ ສົມບູນດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ ທີ່ເປັນເຫດໃຫ້ມະຫາບຸຣຸດມີຄະຕິ໌ ໒ ຢ່າງ ບໍ່ເປັນຢ່າງອື່ນ ຄື

໑. ຖ້າຢູ່ຄອງເຮືອນ ຈະໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທໍາ ຄອງຣາດໂດຍທໍາ ຊົງເປັນໃຫຍ່ໃນແຜ່ນດິນ ມີມະຫາສະໝຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະມີພຣະຣາດຊອານາຈັກໝັ້ນຄົງ ສົມບູນດ້ວຍແກ້ວ ໗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ(໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາດຊະໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານມີຮູບຊົງສົມເປັນວິຣະກະສັດ ສາມາດຜາບແພ້ຣາດຊະສັດຕູໄດ້ ພຣະອົງຊົງຊະນະໂດຍທໍາ ບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ສາດຕາ ຄອບຄອງແຜ່ນດິນນີ້ ມີສາຄອນເປັນຂອບເຂດ

໒. ຖ້າສະເດັດອອກຈາກພຣະຣາດຊະວັງ ບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າ ຜູ້ບໍ່ມີກິເລດ ຜູ້ປະເສີດໃນໂລກ

[໓໒] ຂ້າແດ່ ມະຫາຣາຊະ ພຣະຣາດຊະກຸມານນີ້ ຊົງສົມບູນດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ ມີຫຍັງແດ່ ທີ່ເປັນເຫດໃຫ້ມະຫາບຸຣຸດມີຄະຕິ ໒ ຢ່າງບໍ່ເປັນຢ່າງອື່ນຄື

໑. ຖ້າຢູ່ຄອງເຮືອນ ຈະໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທໍາ ຄອງຣາດໂດຍທໍາ ຊົງເປັນໃຫຍ່ໃນແຜ່ນດິນ ມີມະຫາສະໝຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະມີພຣະຣາດອານາຈັກໝັ້ນຄົງ ສົມບູນດ້ວຍແກ້ວ ໗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາດໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມເປັນວິຣະກະສັດ ສາມາດຜາບແພ້ຣາດຊະສັດຕູໄດ້ ພຣະອົງຊົງຊະນະໂດຍທໍາ ບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ສາດຕາ ຄອບຄອງແຜ່ນດິນນີ້ ມີສາຄອນເປັນຂອບເຂດ

໒. ຖ້າສະເດັດອອກຈາກພະຣາດຊະວັງ ອອກໄປບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າ ຜູ້ບໍ່ມີກິເລດ ຜູ້ປະເສີດທີ່ສຸດໃນໂລກ

[໓໕] ຂ້າແດ່ ມະຫາຣາຊະ ຄື ພຣະຣາດຊະກຸມານນີ້

໑. ມີຝາພຣະບາດ (ພື້ນຕີນ) ຮາບພຽງສະເໝີກັນ ຂໍ້ທີ່ ພຣະຣາດຊະກຸມານມີຝາພຣະບາດຮາບພຽງສະເໝີກັນນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒. ພື້ນພຣະບາດທັງສອງຂອງພຣະຣາດຊະກຸມານນີ້ ມີຮູບກົງຈັກເຊິ່ງມີດິ້ວຂ້າງລະ ໑,໐໐໐ ດິ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ ຂໍ້ທີ່ ພື້ນພຣະບາດທັງສອງຂອງພຣະຣາດຊະກຸມານນີ້ມີຮູບກົງຈັກເຊິ່ງມີດິ້ວຂ້າງລະ ໑,໐໐໐ ດິ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງນີ້ເປັນລັກສະນະມະ ຫາບຸຣຸດຂອງມະຫາບຸຣຸດນັ້ນ

໖. ມີສົ້ນນ່ອງຍື່ນຍາວອອກໄປ ຂໍ້ທີ່ພຣະຣາດຊະກຸມານ ມີສົ້ນນ່ອງຍື່ນຍາວອອກໄປນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໘. ມີພຣະອົງຄຸລີຍາວ ຂໍ້ທີ່ພຣະຣາດຊະກຸມານ ມີພຣະອົງຄຸລີຍາວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໕. ມີພຣະຫັດ ແລະ ພຣະບາດອ່ອນນວນ ຂໍ້ທີ່ ພຣະຣາດຊະກຸມານ ມີພຣະຫັດ ແລະ ພຣະບາດອ່ອນນວນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໖. ຝາພຣະຫັດ ແລະ ຝາພຣະບາດ ມີລາຍເສັ້ນຢູ່ຂໍ້ອົງຄຸລີຈອດຕິດກັນເປັນຮູບຕາໜ່າງ ຂໍ້ທີ່ ພຣະຣາດຊະກຸມານມີຝາພຣະຫັດ ແລະ ຝາພຣະບາດ ມີລາຍເສັ້ນຢູ່ຂໍ້ອົງຄຸລີຈອດຕິດກັນເປັນຮູບຕາໜ່າງນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໗. ມີຂໍ້ພຣະບາດສູງ ເໝືອນຫອຍສັງຂວ່ຳ ຂໍ້ທີ່ພຣະຣາດຊະກຸມານມີຂໍ້ພຣະບາດສູງເໝືອນຫອຍສັງຂວ່ຳນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໘. ຊົງມີໜ້າແຄ່ງກົມສ້ວຍຄືແຄ່ງໂຕກະຊາຍ ຂໍ້ທີ່ພຣະຣາດຊະກຸມານຊົງມີແຄ່ງກົມສ້ວຍຄືແຄ່ງໂຕກະຊາຍນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໙. ເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງ ກໍຊົງໃຊ້ພຣະຫັດທັງສອງລູບຄຳເຖິງພຣະຊານຸໄດ້ ຂໍ້ທີ່ພຣະຣາດຊະກຸມານ ເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງກໍຊົງໃຊ້ພຣະຫັດທັງສອງລູບຄຳເຖິງພຣະຊານຸໄດ້ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໐. ມີພຣະຄຸຍຫະຖານຫົດຢູ່ໃນປົ້ ຂໍ້ທີ່ພຣະຣາດຊະກຸມານມີພຣະຄຸຍຫະຖານຫົດຢູ່ໃນປົ້ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໑. ມີພຣະສະຫວີວັນສີຄຳ ມີພຣະສະຫວີວັນຜ່ອງໃສຄືຄຳ ຂໍ້ທີ່ພຣະຣາດຊະກຸມານມີພຣະສະຫວີວັນຄືຄຳ ມີພຣະສະວີວັນຜ່ອງໃສຄືຄຳນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໘. ມີພຣະສະຫວີວັນລະອຽດ ຈົນຝຸ່ນໄຫງ່ບໍ່ອາດຈັບຕິດພຣະວໍຣະກາຍໄດ້ ຂໍ້ທີ່ພຣະຣາດຊະກຸມານມີພຣະສະຫວີວັນລະອຽດ ຈົນຝຸ່ນໄຫງ່ບໍ່ອາດຈັບຕິດພຣະວໍຣະກາຍໄດ້ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໓. ມີພຣະໂລມະຊາດເສັ້ນດຽວ ຄື ໃນແຕ່ລະຂຸມມີພຽງເສັ້ນດຽວ ຂໍ້ທີ່ພຣະຣາດຊະກຸມານມີພຣະໂລມະຊາດເສັ້ນດຽວ ຄື ໃນແຕ່ລະຂຸມມີພຽງເສັ້ນດຽວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໔. ມີພຣະໂລມະຊາດປາຍງໍຂື້ນ ຄື ພຣະໂລມະຊາດຂອດເປັນວົງວຽນຂວາ ຄື ຕູ້ມຫູສີຄາມເຂັ້ມ ຄື ດອກອັນຊັນ ຂໍ້ທີ່ພຣະຣາດຊະກຸມານມີພຣະໂລມະຊາດປາຍງໍຂື້ນ ຄື ພຣະໂລມະຊາດຂອດເປັນວົງວຽນຂວາ ຄື ຕູ້ມຫູສີຄາມເຂັ້ມ ຄື ດອກອັນຊັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໕. ມີພຣະວໍຣະກາຍຕັ້ງຊື່ ຄື ກາຍພຣະພົມ ຂໍ້ທີ່ພຣະຣາດຊະກຸມານມີພຣະວໍຣະກາຍຕັ້ງຊື່ ຄື ກາຍພຣະພົມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໖. ມີພຣະມັງສະໃນທີ່ ໗ ແຫ່ງ ເຕັມບໍລິບູນ ຂໍ້ທີ່ພຣະຣາດຊະກຸມານມີພຣະມັງສະໃນທີ່ ໗ ແຫ່ງເຕັມບໍລິບູນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໗. ມີພຣະວໍຣະກາຍທຸກສ່ວນບໍລິບູນຄືເລົາຄີງທ່ອນໜ້າຂອງຣາດຊະສີ ຂໍ້ທີ່ພຣະຣາດຊະກຸມານມີພຣະວໍຣະກາຍທຸກສ່ວນບໍລິບູນຄືເລົາຄີງທ່ອນໜ້າຂອງຣາດຊະສີນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໘. ມີຮ່ອງປິດສະດາງ (ຫຼັງ) ເຕັມສະເໝີກັນ ຂໍ້ທີ່ພຣະຣາດຊະກຸມານມີຮ່ອງປິດສະດາງເຕັມສະເໝີກັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໙. ມີພຣະວໍຣະກາຍເປັນປະຣິມົນທົນ ຄື ປະຣິມົນທົນຂອງຕົ້ນໄຮ ພຣະວໍຣະກາຍສູງເທົ່າກັບ ໑ ວາ ຂອງພຣະອົງ ໑ ວາ ຂອງພຣະອົງເທົ່າກັບສ່ວນສູງຂອງພຣະວໍຣະກາຍ ຂໍ້ທີ່ພຣະຣາດຊະກຸມານມີພຣະວໍຣະກາຍເປັນປະຣິມົນທົນ ຄື ປະຣິມົນທົນຂອງຕົ້ນໄຮ ພຣະວໍຣະກາຍສູງເທົ່າກັບ ໑ ວາ ຂອງພຣະອົງ ໑ ວາຂອງພຣະອົງເທົ່າກັບ ສ່ວນສູງພຣະວໍຣະກາຍນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໐. ມີລຳພຣະສໍ (ກ້ານຄໍ) ກົມທ່ຳກັນຕະຫຼອດ ຂໍ້ທີ່ພຣະຣາດຊະກຸມານມີລຳພຣະສໍ (ກ້ານຄໍ) ກົມທ່ຳກັນຕະຫຼອດນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໑. ມີເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີ ຂໍ້ທີ່ພຣະຣາດຊະກຸມານມີເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໔. ມີພຣະຫະນຸ (ຄາງ) ຄື ຄາງຣາດຊະສີ ຂໍ້ທີ່ພຣະຣາດຊະກຸມານມີພຣະຫະນຸ (ຄາງ) ຄື ຄາງຣາດຊະສີນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໕. ມີພຣະທັນຕະ (ແຂ້ວ) ໔໐ ເຫຼັ້ມ ຂໍ້ທີ່ພຣະຣາດຊະກຸມານມີພຣະທັນຕະ (ແຂ້ວ) ໔໐ ເຫຼັ້ມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໔. ມີພຣະທັນຕະພຽງສະເໝີກັນ ຂໍ້ທີ່ພຣະຣາດຊະກຸມານມີພຣະທັນຕະພຽງສະເໝີກັນ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໕. ມີພຣະທັນຕະບໍ່ຫ່າງກັນ ຂໍ້ທີ່ພຣະຣາດຊະກຸມານມີພຣະທັນຕະບໍ່ຫ່າງກັນນີ້ ເປັນລັກສະ ນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໖. ມີພຣະແຂ້ວແກ້ວ (ແຂ້ວແງ) ຂາວງາມ ຂໍ້ທີ່ພຣະຣາດຊະກຸມານມີພຣະແຂ້ວແກ້ວ (ແຂ້ວແງ) ຂາວງາມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໗. ມີພຣະຊິວຫາ (ລີ້ນ) ໃຫຍ່ຍາວ ຂໍ້ທີ່ພຣະຣາດຊະກຸມານມີພຣະຊິວຫາໃຫຍ່ຍາວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໘. ມີພຣະສຸຣະສຽງຄືສຽງພຣະພົມ ຕັດຄືສຽງຮ້ອງຂອງນົກກາຣະວິກ ຂໍ້ທີ່ພຣະຣາດຊະກຸມານມີພຣະສຸຣະສຽງຄືສຽງພຣະພົມ ຕັດຄືສຽງຮ້ອງຂອງນົກກາຣະວິກນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔໙. ມີພຣະເນດດຳສະນິດ ຂໍ້ທີ່ພຣະຣາດຊະກຸມານມີພຣະເນດດຳສະນິດນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໕໐. ມີດວງພຣະເນດແຈ່ມໃສຄືຕາລູກງົວຫາກໍເກີດ ຂໍ້ທີ່ພຣະຣາດຊະກຸມານມີດວງພຣະເນດແຈ່ມໃສຄືຕາລູກງົວຫາກໍເກີດນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໕໑. ມີພຣະອຸນາໂລມລະຫວ່າງພຣະເຂນົງສີຂາວອ່ອນຄືປຸຍນຸ່ນ ຂໍ້ທີ່ພຣະຣາດຊະກຸມານມີພຣະອຸນາໂລມລະຫວ່າງພຣະເຂນົງສີຂາວອ່ອນຄືປຸຍນຸ່ນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໕໒. ມີພຣະສຽນຄືປະດັບດ້ວຍຂອບພຣະພັກ ຂໍ້ທີ່ພຣະຣາດຊະກຸມານມີພຣະສຽນຄືປະດັບດ້ວຍຂອບພຣະພັກນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

[໓໖] ຂ້າແດ່ ມະຫາຣາຊະ ພຣະຣາດຊະກຸມານນີ້ ຊົງສົມບູນດ້ວຍພຣະລັກສະນະມະຫາບຸຣຸດ ໓໒ ປະການນີ້ ນີ້ເປັນເຫດໃຫ້ມະຫາບຸຣຸດມີຄະຕິພຽງ ໒ ຢ່າງ ບໍ່ເປັນຢ່າງອື່ນໄດ້ ຄື

໑. ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຜູ້ຊົງທຳຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນ ມີມະຫາສະໝຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະ ມີພຣະຣາດຊະອານາຈັກໝັ້ນຄົງສົມບູນດ້ວຍແກ້ວ ໗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາດໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມເປັນວີຣະກະສັດ ສາມາດຂົ່ມຣາດຊະສັດຕູໄດ້ ພຣະອົງຊົງຊະນະໂດຍທຳບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ສາດຕາ ຄອບຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ

໒. ຖ້າສະເດັດອອກຈາກພຣະຣາດຊະວັງ ບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຜູ້ບໍ່ມີກິເລດໃນໂລກ”

## ເຫດທີ່ຊົງໄດ້ພຣະນາມວ່າວິປັດສີ

[໓໗] ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະເຈົ້າພັນທຸມາ ໂຜດໃຫ້ພວກພາມໂຫຣາຈານນຸ່ງຫົ່ມຜ້າໃໝ່ ຊົງລ້ຽງໃຫ້ອີ່ມພຽງພໍດ້ວຍສິ່ງທີ່ຕ້ອງການທຸກຢ່າງແລ້ວ ຮັບສັ່ງໃຫ້ຕັ້ງເອື້ອຍລ້ຽງນາງນົມແກ່ພຣະວິປັດສີຣາດຊະກຸມານ ຄື ແມ່ຍິງພວກໜຶ່ງໃຫ້ພຣະຣາດຊະກຸມານສະເຫວີຍນ້ຳນົມ ພວກໜຶ່ງໃຫ້ຊົງສົງນ້ຳ ພວກໜຶ່ງຄອຍຖ້າອະພິບານຮັກສາ ພວກໜຶ່ງຄອຍຖ້າອູ້ມ ນັບຕັ້ງແຕ່ປະສູດພຣະວິປັດສີຣາດຊະກຸມານ ມີພວກຣາດຊະບຸຣຸດກໍຄອຍຖ້າກັ້ງສະເວດຕະສັດຖວາຍທັງກາງເວັນ ແລະ ກາງຄືນ ດ້ວຍຕັ້ງໃຈວ່າ “ຄວາມໜາວ ຄວາມຮ້ອນ ຝຸ່ນ ລະອອງ ຫຼື ນ້ຳໝອກ ຢ່າໄດ້ບຽດບຽນພຣະຣາດຊະກຸມານເລີຍ”

ຕັ້ງແຕ່ປະສູດ ພຣະວິປັດສີຣາດຊະກຸມານ ກໍຊົງກາຍເປັນທີ່ຮັກເປັນທີ່ພໍໃຈຂອງຊົນເປັນຈຳນວນຫຼາຍ ປຽບຄື ດອກອຸບົນ ດອກປະທຸມ ຫຼື ດອກບຸນທະຣິກ ເປັນທີ່ຮັກ ເປັນທີ່ພໍໃຈຂອງຊົນເປັນຈຳນວນຫຼາຍ ສັນໃດ ພຣະວິປັດສີຣາດຊະກຸມານຊົງເປັນທີ່ຮັກ ເປັນທີ່ພໍໃຈຂອງຊົນເປັນຈຳນວນຫຼາຍສັນນັ້ນຄືກັນ ໃນວ່າ ພຣະວິປັດສີຣາດຊະກຸມານນັ້ນ ໄດ້ຮັບການຜັດປ່ຽນກັນອູ້ມຢູ່ສະເໝີ ໆ

[໓໘] ດູຣາ ພິກຂຸທັງຫຼາຍ ຕັ້ງແຕ່ປະສູດພຣະວິປັດສີຣາດຊະກຸມານ ຊົງເປັນຜູ້ມີພຣະສຸຣະສຽງຄືສຽງພຣະພົມມ່ວນຫຼາຍ ເປັນຕາອອນຊອນ ມ່ວນຫູ ຈັບໃຈ ໝູ່ນົກກາຣະວິກທີ່ພູຫິມມະພານເປັນສັດມີສຳນຽງມ່ວນຫຼາຍ ເປັນຕາອອນຊອນ ມ່ວນຫູ ຈັບໃຈ ສັນໃດ ພຣະວິປັດສີຣາດ

ຊະກຸມານກໍເປັນຜູ້ມີພຣະສຸຣະສຽງຄືສຽງພຣະພົມ ມ່ວນຫຼາຍ ເປັນຕາອອນຊອນ ມ່ວນຫູ ຈັບໃຈ ສັນນັ້ນຄືກັນ

[໓໙] ດູຣາ ພິກຂຸທັງຫຼາຍ ຕັ້ງແຕ່ ປະສູດພຣະວິປັດສີຣາດຊະກຸມານ ຊົງມີທິບພະຈັກຂຸ ອັນເກີດຈາກວິບາກກຳທີ່ເປັນເຫດໃຫ້ແນມເຫັນໄກໄດ້ຕະຫຼອດ ໑ ໂຍດໂດຍຮອບ ທັງກາງເວັນ ແລະ ກາງຄືນ

[໔໐] ດູຣາ ພິກຂຸທັງຫຼາຍ ຕັ້ງແຕ່ປະສູດ ພຣະວິປັດສີຣາດຊະກຸມານ ຊົງແນມເບິ່ງໂດຍບໍ່ພັບ ພຣະເນດ ເໝືອນພວກເທວະດາຊັ້ນຕາວະຕິງສາແນມເບິ່ງບໍ່ພັບຕາສັນໃດ ດູຣາ ພິກຂຸທັງຫຼາຍ ພຣະວິປັດສີຣາດຊະກຸມານ ຊົງແນມເບິ່ງບໍ່ພັບພຣະເນດ ສັນນັ້ນຄືກັນ ຈຶ່ງເກີດມີພຣະນາມວ່າ "ວິປັດສີ ວິປັດສີ"

[໔໑] ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະເຈົ້າພັນທຸມາປະທັບໃນສານຕັດສິນຄະດີ ຊົງໃຫ້ພຣະວິປັດສີຣາດກຸມານປະທັບເທິງພຣະເພົາ (ເທິງຕັກ) ໃນຂະນະຊົງພິຈາລະນາຄະດີ ຊ່າລືກັນວ່າ ພຣະວິປັດສີຣາດຊະກຸມານ ເມື່ອປະທັບນັ່ງເທິງບັນລັງຂອງພຣະຊະນົກໃນສານຕັດສິນຄະດີນັ້ນ ຊົງພິຈາລະ ນາໃຫ້ຄະດີດຳເນີນໄປດ້ວຍພຣະຍານ ດູຣາ ພິກຂຸທັງຫຼາຍ ຍ້ອນຄຳຊ່າລືວ່າ "ພຣະຣາດຊະກຸມານພິຈາລະນາໃຫ້ຄະດີດຳເນີນໄປດ້ວຍພຣະຍານ" ມີປະລິມານຫຼາຍຂຶ້ນຈຶ່ງເກີດມີພຣະນາມວ່າ "ວິປັດສີ ວິປັດສີ"

[໔໒] ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະເຈົ້າພັນທຸມາໂຜດໃຫ້ສ້າງຜາສາດ ໓ ຫຼັງ ສຳລັບພຣະວິປັດສີຣາດຊະກຸມານ ຫຼັງໜຶ່ງສຳລັບປະທັບໃນລະດູຝົນ ຫຼັງໜຶ່ງສຳລັບປະທັບໃນລະດູໜາວ ຫຼັງໜຶ່ງສຳລັບປະທັບໃນລະດູຮ້ອນ ໂຜດໃຫ້ບົວຣະບັດພຣະຣາດຊະກຸມານດ້ວຍກາມມະຄຸນ ໕ ດູຣາ ພິກຂຸທັງຫຼາຍ ພຣະວິປັດສີຣາດຊະກຸມານ ຊົງໄດ້ຮັບການບຳລຸງດ້ວຍດົນຕີທີ່ບໍ່ມີບຸຣຸດປະປົນ ໃນຜາສາດສຳລັບປະທັບໃນລະດູຝົນ ບໍ່ໄດ້ສະເດັດລົງມາຊັ້ນລຸ່ມຜາສາດຕະຫຼອດເວລາ ໔ ເດືອນ

**ພານະວານທີ ໑ ຈົບ**

## ເທວະທູດ ໔

## ຄົນເຖົ້າ

[໔໓] ດູຣາ ພິກຂຸທັງຫຼາຍ ເມື່ອເວລາລ່ວງໄປຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ພຣະວິປັດສີຣາດຊະກຸມານ ຮັບສັ່ງຮຽກນາຍສາຣະຖີມາຕັດວ່າ "ສະຫາຍສາຣະຖີ ທ່ານຈົ່ງກະກຽມຍານພາຫະນະຄັນງາມ ໆ ເອົາໄວ້ ເຮົາຈະໄປສູ່ອຸດທະຍານທ່ຽວຊົມພູມີປະເທດທີ່ງົດງາມ"

ນາຍສາຣະຖີ ທູນຮັບພຣະບັນຊາແລ້ວ ກໍກະກຽມຍານພາຫະນະຄັນງາມ ໆ ແລ້ວຂາບທູນວ່າ "ຂ້າແຕ່ ພຣະຣາດຊະກຸມານ ຂ້ານ້ອຍໄດ້ກະກຽມຍານພາຫະນະຄັນງາມ ໆ ໄວ້ໃຫ້ແລ້ວ ຂໍພຣະອົງຈົ່ງຊົງກຳນົດເວລາອັນສົມຄວນໃນບັດນີ້ເທີ້ນ" ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນແລ ພຣະວິປັດສີຣາດຊະກຸມານ ຊົງຂຶ້ນຍານພາຫະນະຄັນງາມນັ້ນ ສະເດັດທ່ຽວຊົມອຸດທະຍານ ພ້ອມດ້ວຍຍານພາຫະນະຄັນງາມ ໆ ຕາມສະເດັດອີກຫຼາຍຄັນ

[໔໔] ດູຣາ ພິກຂຸທັງຫຼາຍ ໃນຂະນະທີ່ສະເດັດທ່ຽວຊົມອຸດທະຍານ ພຣະວິປັດສີຣາດຊະກຸມານໄດ້ທອດພຣະເນດເຫັນຊາຍຊະຣາຜູ້ເຖົ້າ ຜູ້ມີກະດູກຂ້າງຄົດຄືໄລປະຕູ ຫຼັງກ່ອມ ຍ່າງຖືໄມ້ກ້ານເທົ້າ ງົກ ໆ ເງິ່ນ ໆ ມີຮ່າງກາຍສັ່ນສາຍໂຊເຊ ເບີດຄວາມໜຸ່ມແໜ້ນ ຈຶ່ງຕັດຖາມນາຍສາຣະຖີວ່າ "ສະຫາຍສາຣະຖີ ຊາຍຄົນນີ້ຖືກໃຜເຮັດຫຍັງໃຫ້ ເປັນຫຍັງ? ເສັ້ນຜົມ ແລະ ຮ່າງກາຍຂອງເຂົາຈຶ່ງບໍ່ຄືຂອງຄົນອື່ນ"

ນາຍສາຣະຖີທູນຕອບວ່າ "ຂ້າແດ່ພຣະກຸມານ ຜູ້ນີ້ຊື່ວ່າຄົນເຖົ້າ"

"ເປັນຫຍັງ? ເຂົາຈຶ່ງໄດ້ຊື່ວ່າ ຄົນເຖົ້າ"

"ຜູ້ນີ້ຂຶ້ນຊື່ວ່າຄົນເຖົ້າ ເພາະວ່າເຂົາຈະມີຊີວິດຢູ່ໄດ້ອີກບໍ່ດົນ ຂ້ານ້ອຍ"

"ເຖິງແມ່ນວ່າໂຕເຮົາເອງ ກໍຈະຕ້ອງແກ່ເຖົ້າເປັນທຳມະດາໜີບໍ່ພົ້ນຈັ່ງຊັ້ນບໍ?"

"ແມ່ນແລ້ວ ທັງພຣະອົງ ແລະ ຂ້າພຣະອົງ ລ້ວນແຕ່ຕ້ອງແກ່ເຖົ້າເປັນທຳມະດາໜີບໍ່ພົ້ນຂ້ານ້ອຍ"

"ສະຫາຍສາຣະຖີ ຖ້າຈັ່ງຊັ້ນ ມື້ນີ້ການຊົມອຸທະຍານພໍແລ້ວ ທ່ານຈົ່ງຂັບລົດກັບເຂົ້າເມືອງເທີ້ນ"

ນາຍສາຣະຖີທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດກັບເຂົ້າໄປໃນເມືອງທັນທີ

ພຣະວິປັດສີຣາດຊະກຸມານ ເມື່ອສະເດັດເຖິງພຣະຣາດຊະຖານຊັ້ນໃນແລ້ວແລ້ວ ຊົງມີທຸກ ມີພຣະທະໄທບໍ່ຍິນດີ ຊົງພຣະດຳຣິວ່າ "ຂຶ້ນຊື່ວ່າຄວາມເກີດເປັນຕາໜ່າຍແທ້ນໍ ເພາະເມື່ອມີຄວາມເກີດກໍຈະຕ້ອງມີຄວາມເຖົ້າແກ່ຕິດຕາມມາ"

[໔໕] ດູຣາ ພິກຂຸທັງຫຼາຍ ຕໍ່ມາ ພຣະເຈົ້າພັນທຸມາຮັບສັ່ງໃຫ້ຮຽກນາຍສາຣະຖີມາ ແລ້ວຕັດຖາມວ່າ "ສະຫາຍສາຣະຖີ ຣາດຊະກຸມານຍິນດີໃນການທ່ຽວອຸດທະຍານຫຼືບໍ່?"

ນາຍສາຣະຖີທູນຕອບວ່າ "ຂໍເດຊະ ພຣະຣາດຊະກຸມານ ບໍ່ຊົງຍິນດີໃນການທ່ຽວຊົມພຣະອຸດ ທະຍານ ບໍ່ຊົງພໍພຣະທະໄທໃນພຣະອຸດທະຍານເລີຍ"

ພຣະອົງຕັດຖາມອີກວ່າ "ໃນຂະນະທີ່ທ່ຽວຊົມອຸທະຍານ ພຣະຣາດຊະກຸມານໄດ້ພົບເຫັນຫຍັງແດ່?"

ນາຍສາຣະຖີທູນຕອບວ່າ "ໃນຂະນະທີ່ສະເດັດທ່ຽວຊົມພຣະອຸດທະຍານ ພຣະຣາດຊະກຸມານໄດ້ທອດພຣະເນດເຫັນ ຊາຍຊະຣາຜູ້ເຖົ້າ ຜູ້ມີກະດູກຫຼັງຄົດງໍ ຄືໄລປະຕູ ຫຼັງກ່ອມ ຍ່າງຖືໄມ້ກ້ານເທົ້າ ງົກ ໆ ເງິ່ນ ໆ ມີ ຮ່າງກາຍສັ່ນສາຍໂຊເຊ ເປີດຄວາມໜຸ່ມແໜ້ນ ຈຶ່ງຕັດຖາມຂ້າພຣະອົງວ່າ "ສະ ຫາຍສາຣະຖີ ຊາຍຄົນນີ້ຖືກໃຜເຮັດຫຍັງໃຫ້ ເປັນຫຍັງ? ເສັ້ນຜົມ ແລະ ຮ່າງກາຍຂອງເຂົາຈຶ່ງບໍ່ຄືຂອງຄົນອື່ນ"

ຂ້າພຣະອົງທູນຕອບວ່າ "ຂ້າແຕ່ ພຣະກຸມານຜູ້ນີ້ຊື່ວ່າຄົນເຖົ້າ ຂ້ານ້ອຍ"

"ເປັນຫຍັງ? ເຂົາຈຶ່ງຊື່ວ່າຄົນເຖົ້າ"

"ຜູ້ນີ້ໄດ້ຂື້ນຊື່ວ່າຄົນຊະຣາເພາະເວລານີ້ເຂົາຈະມີຊີວິດໄດ້ຢູ່ອີກບໍ່ດົນ ຂ້ານ້ອຍ"

"ເຖິງເຮົາເອງກໍຈະຕ້ອງແກ່ເຖົ້າເປັນທຳມະດາໜີບໍ່ພົ້ນຈັ່ງຊັ້ນບໍ?"

"ແມ່ນແລ້ວ ທັງພຣະອົງ ແລະ ຂ້າພຣະອົງ ລ້ວນແຕ່ຕ້ອງແກ່ເຖົ້າເປັນທຳມະດາ ໜີບໍ່ພົ້ນຂ້ານ້ອຍ"

"ສະຫາຍສາຣະຖີ ຖ້າເປັນແນວນັ້ນ ມື້ນີ້ການທ່ຽວຊົມອຸທະຍານພໍແລ້ວ ທ່ານຈົ່ງຂັບລົດກັບເຂົ້າໄປໃນເມືອງເທີ້ນ"

ຂ້າພຣະອົງທູນຮັບພຣະບັນຊາ ແລ້ວຂັບຣາດຊະລົດກັບເຂົ້າມາໃນເມືອງທັນທີ ເມື່ອພຣະລາດຊະກຸມານສະເດັດເຖິງພຣະຣາດຊະຖານຊັ້ນໃນແລ້ວ ຊົງມີທຸກ ມີພຣະທະໄທບໍ່ຍິນດີ ຊົງພຣະດຳຣິວ່າ "ຂື້ນຊື່ວ່າຄວາມເກີດເປັນຕາໜ່າຍແທ້ນໍ ເພາະເມື່ອມີຄວາມເກີດກໍມີຄວາມແກ່ເຖົ້າຕາມມາ" ຂ້ານ້ອຍ

## ຄົນເຈັບ

[໔໗] ດູຣາ ພິກຂຸທັງຫຼາຍ ຕໍ່ມາ ພຣະເຈົ້າພັນທຸມາຊົງພຣະດຳຣິວ່າ "ຂໍຢ່າໃຫ້ວິປັດສີກຸມານບໍ່ຍອມຄອງຣາດເລີຍ ຢ່າໄດ້ອອກຈາກວັງບວດເປັນບັນພະຊິດເລີຍ ຄຳທຳນາຍຂອງພາມໂຫຣາຈານຢ່າໄດ້ເປັນຈິງເລີຍ" ຈຶ່ງຮັບສັ່ງໃຫ້ບົວຣະບັດພຣະວິປັດສີຣາດຊະກຸມານ ດ້ວຍກາມມະຄຸນ ໕ ຫຼາຍຂື້ນກວ່າເກົ່າ ເພື່ອວ່າພຣະວິປັດສີຣາດຊະກຸມານຈະຢູ່ຄອງຣາດສົມດັ່ງຄວາມຕັ້ງໃຈ ບໍ່ສະເດັດອອກຈາກພຣະຣາດຊະວັງບວດເປັນບັນພະຊິດ ແລະ ຄຳທຳນາຍຂອງພາມໂຫຣາຈານກໍຈະບໍ່ເປັນຄວາມຈິງ

ດູຣາ ພິກຂຸທັງຫຼາຍ ຕໍ່ນັ້ນມາ ພຣະວິປັດສີຣາດຊະກຸມານ ຊົງອີ່ມອົກອີ່ມໃຈພັ່ງພ້ອມບໍລິບູນ ໄດ້ຮັບການບົວຣະບັດຢູ່ດ້ວຍກາມມະຄຸນ ໕ ໃນພຣະຣາດຊະຖານນັ້ນ ດູຣາ ພິກຂຸທັງຫຼາຍ

ເມື່ອເວລາລ່ວງໄປອີກຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ພຣະວິປັດສີຣາດຊະກຸມານໄດ້ຮັບສັ່ງຮຽກນາຍສາຣະຖີມາຕັດວ່າ "ສະຫາຍສາຣະຖີ ທ່ານຈົ່ງກະກຽມຍານພາຫະນະຄັນງາມ ໆ ເອົາໄວ້ ເຮົາຈະອອກໄປທ່ຽວອຸດທະຍານ ຊົມພູມີປະເທດທີ່ງົດງາມ"

ນາຍສາຣະຖີທູນຮັບພຣະບັນຊາແລ້ວ ໄດ້ກະກຽມຍານພາຫະນະຄັນງາມ ໆ ເມື່ອພ້ອມແລ້ວໄດ້ຂາບທູນວ່າ "ຂ້າແດ່ ພຣະຣາດຊະກຸມານ ຂ້າພຣະອົງໄດ້ກະກຽມຍານພາຫະນະຄັນງາມ ໆ ໄວ້ແລ້ວ ຂໍພຣະອົງຈົ່ງຊົງກຳນົດເວລາທີ່ສົມຄວນເທີ້ນ" ພຣະວິປັດສີຣາດຊະກຸມານ ຊົງຂຶ້ນຍານພາຫະນະຄັນງາມ ໆ ສະເດັດອອກທ່ຽວຊົມອຸດທະຍານ ພ້ອມດ້ວຍຍານພາຫະນະຄັນງາມ ໆ ຕາມສະເດັດອີກຫຼາຍຄັນ

[໔໗] ດູຣາ ພິກຂຸທັງຫຼາຍ ເມື່ອສະເດັດທ່ຽວຊົມອຸດທະຍານອີກ ພຣະວິປັດສີຣາດຊະກຸມານໄດ້ທອດພຣະເນດເຫັນຄົນເຈັບທົນທຸກ ເພາະພະຍາດນອນທໍລະມານ ຈົມກອງອຸດຈາຣະປັດສາວະຂອງຕົນຢູ່ ຄົນອື່ນຕ້ອງໄດ້ຊ່ອຍກັນໂຊມປ້ອນອາຫານໃຫ້ກິນ ຈຶ່ງຕັດຖາມນາຍສາຣະຖີວ່າ "ສະຫາຍສາຣະຖີ ຊາຍຄົນນີ້ຖືກໃຜເຮັດຫຍັງໃຫ້ ເປັນຫຍັງ? ໃນໜ່ວຍຕາທັງສອງ ແລະຫົວຂອງເຂົາຈຶ່ງບໍ່ຄືຂອງຄົນອື່ນ"

ນາຍສາຣະຖີທູນຕອບວ່າ "ຂ້າແດ່ ພຣະກຸມານຜູ້ນີ້ຊື່ວ່າຄົນເຈັບ ຂ້ານ້ອຍ"

"ເປັນຫຍັງ? ເຂົາຈຶ່ງໄດ້ຊື່ວ່າຄົນເຈັບ"

"ຜູ້ນີ້ໄດ້ຊື່ວ່າຄົນເຈັບ ເພາະວ່າເຂົາຫາຍຈາກພະຍາດທີ່ເປັນໄດ້ຍາກ ຂ້ານ້ອຍ"

"ເຖິງແມ່ນວ່າເຮົາເອງກໍຈະຕ້ອງເປັນພະຍາດນັ້ນ ເປັນທຳມະດາໜີບໍ່ພົ້ນຄືກັນແມ່ນບໍ?"

"ແມ່ນແລ້ວທັງພຣະອົງ ແລະ ຂ້າພຣະອົງ ກໍຈະຕ້ອງເປັນພະຍາດນີ້ເປັນທຳມະດາໜີບໍ່ພົ້ນຄືກັນ ຂ້ານ້ອຍ"

"ສະຫາຍສາຣະຖີ ຖ້າເປັນແນວນັ້ນ ມື້ນີ້ການທ່ຽວ ຊົມອຸທະຍານພໍແລ້ວ ທ່ານຈົ່ງຂັບລົດກັບເຂົ້າໄປໃນເມືອງເທີ້ນ"

ນາຍສາຣະຖີທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດກັບເຂົ້າໄປໃນເມືອງທັນທີ

ພຣະວິປັດສີຣາດຊະກຸມານ ເມື່ອສະເດັດເຖິງພຣະຣາດຊະຖານຊັ້ນໃນແລ້ວແລ້ວ ໄດ້ຊົງມີທຸກມີພຣະຫະໄທບໍ່ຍິນດີ ຊົງພຣະດຳຣິວ່າ "ຂຶ້ນຊື່ວ່າຄວາມເກີດເປັນຕາໜ່າຍແທ້ນໍ ເພາະເມື່ອມີຄວາມເກີດ ກໍມີຄວາມແກ່ ຄວາມເຈັບຕາມມາເປັນທຳມະດາ"

[໔໘] ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະເຈົ້າພັນທຸມາຮັບສັ່ງໃຫ້ຮຽກນາຍສາຣະຖີມາແລ້ວຕັດຖາມວ່າ "ສະຫາຍສາຣະຖີ ຣາດຊະກຸມານຍິນດີໃນການທ່ຽວອຸດທະຍານຫຼືບໍ່? ພໍໃຈໃນອຸດທະຍານນັ້ນຫຼືບໍ່?"

ນາຍສາຣະຖີທູນຕອບວ່າ "ຂ້າແຕ່ ມະຫາຣາຊະ ພຣະຣາດຊະກຸມານ ບໍ່ຊົງຍິນດີໃນພຣະອຸດທະຍານ ບໍ່ຊົງພໍພຣະທະໄທໃນພຣະອຸດທະຍານ ຂ້ານ້ອຍ"

ພຣະອົງຕັດຖາມວ່າ "ໃນຂະນະທ່ຽວຊົມອຸທະຍານ ຣາດຊະກຸມານພົບເຫັນຫຍັງແນ?"

ນາຍສາຣະຖີທູນຕອບວ່າ "ໃນຂະນະທີ່ສະເດັດທ່ຽວຊົມພຣະອຸດທະຍານ ພຣະຣາດຊະກຸມານໄດ້ທອດພຣະເນດເຫັນຄົນເຈັບທົນທຸກເພາະພະຍາດນອນທໍລະມານ ຈົມກອງອຸດຈາຣະປັດສາວະຂອງຕົນຢູ່ ຄົນອື່ນຕ້ອງໄດ້ຊ່ອຍກັນໂຊມປ້ອນອາຫານໃຫ້ກິນ ຈຶ່ງຕັດຖາມຂ້າພຣະອົງວ່າ "ສະຫາຍສາຣະຖີ ຊາຍຄົນນີ້ຖືກໃຜເຮັດຫຍັງໃຫ້ ເປັນຫຍັງ? ໃນໜ່ວຍຕາທັງສອງ ແລະຫົວຂອງເຂົາຈຶ່ງບໍ່ຄືຂອງຄົນອື່ນ?"

ຂ້າພຣະອົງທູນຕອບວ່າ "ຂ້າແດ່ ພຣະກຸມານ ຜູ້ນີ້ຊື່ວ່າຄົນເຈັບ ຂ້ານ້ອຍ"

"ເປັນຫຍັງ? ເຂົາຈຶ່ງໄດ້ຊື່ວ່າຄົນເຈັບ"

"ຜູ້ນີ້ໄດ້ຊື່ວ່າຄົນເຈັບ ເພາະເຂົາຫາຍຈາກພະຍາດນັ້ນໄດ້ຍາກ ຂ້ານ້ອຍ"

"ເຖິງເຮົາເອງກໍຈະຕ້ອງເຈັບປ່ວຍເປັນພະຍາດ ເປັນທຳມະດາໜີບໍ່ພົ້ນຄືກັນແມ່ນບໍ?"

"ແມ່ນແລ້ວ ທັງພຣະອົງ ແລະ ຂ້າພຣະອົງ ກໍຈະຕ້ອງເຈັບປ່ວຍເປັນພະຍາດເປັນເລື້ອງທຳມະດາໜີບໍ່ພົ້ນຄືກັນ ຂ້ານ້ອຍ"

"ສະຫາຍສາຣະຖີ ຖ້າເປັນແນວນັ້ນ ມື້ນີ້ການທ່ຽວຊົມອຸທະຍານພໍແລ້ວ ທ່ານຈົ່ງຂັບລົດກັບເຂົ້າໄປໃນເມືອງເທີ້ນ"

ຂ້າພຣະອົງທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດກັບເຂົ້າໄປໃນເມືອງທັນທີ ພຣະຣາດຊະກຸມານ ເມື່ອສະເດັດເຖິງພຣະຣາດຊະຖານຊັ້ນໃນແລ້ວ ຊົງມີທຸກ ມີພຣະທະໄທບໍ່ຍິນດີ ຊົງພຣະດຳຣິວ່າ "ຂຶ້ນຊື່ວ່າຄວາມເກີດເປັນຕາໜ່າຍແທ້ນໍ ເພາະເມື່ອມີຄວາມເກີດ ກໍມີຄວາມແກ່ ແລະ ຄວາມເຈັບຕິດ ຕາມມາ" ຂ້ານ້ອຍ"

## ຄົນຕາຍ

[໔໙] ດູຣາ ພິກຂຸທັງຫຼາຍ ຕໍ່ມາ ພຣະເຈົ້າພັນທຸມາ ຊົງພຣະດຳຣິວ່າ "ຂໍຢ່າໃຫ້ວິປັດສີກຸມານ ບໍ່ຍອມຄອງຣາດເລີຍ ຢ່າໄດ້ອອກຈາກວັງໄປບວດເປັນບັນພະຊິດເລີຍ ຄຳທຳນາຍຂອງພາມໂຫຣາຈານຢ່າໄດ້ເປັນຈິງເລີຍ" ຈຶ່ງຮັບສັ່ງໃຫ້ບົວຣະບັດພຣະວິປັດສີຣາດຊະກຸມານດ້ວຍການມະຄຸນ ໕ ຫຼາຍຂຶ້ນກວ່າເກົ່າ ເພື່ອວ່າພຣະວິປັດສີຣາດຊະກຸມານຈະຢູ່ຄອງຣາດ ຈະບໍ່ສະເດັດອອກຈາກພຣະຣາດຊະວັງໄປບວດເປັນບັນພະຊິດ ແລະ ຄຳທຳນາຍຂອງພາມໂຫຣາຈານກໍຈະບໍ່ເປັນຈິງ

ເມື່ອພຣະຣາດຊະກຸມານຊົງອີ່ມອົກອີ່ມໃຈ ພ້ອມພັ່ງໄດ້ຮັບການບໍາລຸງບໍາເຣີຍຢູ່ດ້ວຍກາມມະຄຸນ ໕ ໃນພຣະຣາດຊະຖານນັ້ນ ເມື່ອເວລາລ່ວງໄປຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ພຣະວິປັດສີຣາດຊະກຸມານໄດ້ຮັບສັ່ງຮຽກນາຍສາຣະຖີມາຕັດວ່າ “ສະຫາຍສາຣະຖີທ່ານຈົ່ງກະກຽມຍານພາຫະນະຄັນງາມ ໆ ເຮົາຈະອອກໄປຊົມອຸດທະຍານ ແລະ ພູມປະເທດທີ່ງົດງາມ”

ນາຍສາຣະຖີທູນຮັບພຣະບັນຊາແລ້ວ ໄດ້ກະກຽມຍານພາຫະນະຄັນງາມ ໆ ເມື່ອພ້ອມແລ້ວໄດ້ຂາບທູນວ່າ “ຂ້າແດ່ ພຣະຣາດຊະກຸມານ ຂ້າພຣະອົງໄດ້ກະກຽມຍານພາຫະນະຄັນງາມ ໆ ໄວ້ພ້ອມແລ້ວ ຂໍພຣະອົງຈົ່ງຊົງກໍານົດເວລາທີ່ສົມຄວນໃນບັດນີ້ເທີ້ນ” ພຣະຣາດຊະກຸມານຊົງຂຶ້ນຍານພາຫະນະຄັນງາມ ໆ ສະເດັດທ່ຽວຊົມອຸດທະຍານ ພ້ອມດ້ວຍຍານພາ ຫະນະຄັນງາມ ໆ ຕາມສະເດັດອີກຫຼາຍຄັນ

[໕໐] ດູຣາ ພິກຂຸທັງຫຼາຍ ເມື່ອພຣະວິປັດສີຣາດຊະກຸມານ ສະເດັດທ່ຽວຊົມອຸດທະຍານອີກ ໄດ້ທອດພຣະເນດເຫັນໝູ່ຊົນຊຸມນຸມກັນ ແລະ ກໍາລັງພາກັນຫາມຄານທີ່ປະດັບດ້ວຍຜ້າຫຼາຍສີ ຈຶ່ງຕັດຖາມນາຍສາຣະຖີວ່າ “ສະຫາຍສາຣະຖີ ໝູ່ຊົນທີ່ກໍາລັງຊຸມນຸມກັນຫາມຄານປະດັບດ້ວຍຜ້າຫຼາຍສີນັ້ນແມ່ນຫຍັງ?”

ນາຍສາຣະຖີທູນຕອບວ່າ “ຂ້າແດ່ ພຣະຣາດຊະກຸມານ ຜູ້ນີ້ຊື່ວ່າ ຄົນຕາຍ ຂ້ານ້ອຍ”

ພຣະວິປັດສີຣາດຊະກຸມານຮັບສັ່ງວ່າ “ສະຫາຍສາຣະຖີ ຖ້າເປັນແນວນັ້ນ ທ່ານຈົ່ງຂັບລົດໄປທາງຄົນຕາຍນັ້ນ”

ນາຍສາຣະຖີທູນຮັບພຣະບັນຊາ ແລ້ວຂັບຣາດຊະລົດໄປທາງຄົນຕາຍນັ້ນ

ພຣະຣາດຊະກຸມານທອດພຣະເນດເຫັນຄົນຕາຍ ຈຶ່ງຕັດຖາມນາຍສາຣະຖີວ່າ “ເປັນຫຍັງເຂົາຈຶ່ງໄດ້ຊື່ວ່າຄົນຕາຍ”

ນາຍສາຣະຖີທູນຕອບວ່າ “ຜູ້ນີ້ໄດ້ຊື່ວ່າ ເປັນຄົນຕາຍເພາະເວລານີ້ ມານດາ ບິດາ ຫຼື ຍາດສາຍໂລຫິດອື່ນ ໆ ຈະບໍ່ໄດ້ພົບເຫັນເຂົາອີກ ຕົວເຂົາເອງກໍຈະບໍ່ໄດ້ພົບເຫັນມານດາ ບິດາ ຫຼື ຍາດສາຍໂລຫິດອື່ນ ໆ ອີກ ຂ້ານ້ອຍ”

“ເຖິງເຮົາເອງກໍຈະຕ້ອງຕາຍເປັນທໍາມະດາໜີບໍ່ພົ້ນ ພຣະມານດາ ພຣະບິດາ ຫຼື ພຣະປະຍູນຣະຍາດອື່ນ ໆ ຈະບໍ່ໄດ້ພົບເຫັນເຮົາອີກ ແມ່ນເຮົາກໍຈະບໍ່ໄດ້ພົບເຫັນພຣະມານດາ ພຣະບິດາ ຫຼື ພຣະປະຍູນຣະຍາດອື່ນ ໆ ອີກ ຖ້າຕົກຢູ່ໃນສະພາບນີ້ຈັ່ງຊັ້ນແມ່ນບໍ?”

“ທັງພຣະອົງ ແລະ ຂ້າພຣະອົງ ກໍຕ້ອງຕາຍເປັນທໍາມະດາໜີບໍ່ພົ້ນ ຂ້ານ້ອຍ ພຣະເຈົ້າແຜ່ນ ດິນ ພຣະຣາຊິນີ ຫຼື ພຣະປະຍູນຣະຍາດອື່ນ ໆ ຈະບໍ່ຊົງສາມາດພົບເຫັນພຣະອົງໄດ້ອີກ

ແມ່ນພຣະອົງເອງກໍຈະບໍ່ສາມາດຊົງພົບເຫັນພຣະເຈົ້າແຜ່ນດິນ ພຣະຣາຊິນີ ຫຼື ພຣະປະຍູນຣະຍາດອື່ນ ໆ ໄດ້ອີກ ຖ້າຕົກຢູ່ໃນສະພາບແນວນັ້ນຄືກັນ ຂ້ານ້ອຍ"

"ສະຫາຍສາຣະຖີ ຖ້າເປັນແນວນັ້ນ ມື້ນີ້ການຊົມອຸທະຍານພໍແລ້ວ ທ່ານຈົ່ງຂັບລົດກັບເຂົ້າເມືອງເທີ້ນ"

ນາຍສາຣະຖີທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດກັບເຂົ້າໄປໃນເມືອງທັນທີ

ເມື່ອພຣະວິປັດສີຣາດຊະກຸມານ ສະເດັດເຖິງພຣະຣາດຊະຖານຊັ້ນໃນແລ້ວ ຊົງມີທຸກມີພຣະຫະໄທບໍ່ຍິນດີ ຊົງພຣະດຳຣິວ່າ "ຂຶ້ນຊື່ວ່າຄວາມເກີດ ເປັນຕາໜ່າຍແທ້ນໍ ເພາະເມື່ອມີຄວາມເກີດ ກໍມີຄວາມແກ່ ຄວາມເຈັບ ຄວາມຕາຍຕິດຕາມມາ"

[໔໑] ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະເຈົ້າພັນທຸມາ ຮັບສັ່ງໃຫ້ຮຽກນາຍສາຣະຖີມາແລ້ວຕັດຖາມວ່າ "ສາະຫາຍສາຣະຖີ ຣາດຊະກຸມານຍິນດີໃນອຸດທະຍານ ຫຼື ບໍ່ພໍໃຈໃນອຸດທະຍານນໍ"

ນາຍສາຣະຖີທູນຕອບວ່າ "ຂ້າແດ່ ມະຫາຣາຊະ ພຣະຣາດຊະກຸມານບໍ່ຊົງຍິນດີໃນພຣະອຸດ ທະຍານ ບໍ່ຊົງພໍພຣະຫະໄທໃນພຣະອຸດທະຍານ ໃນການອອກໄປທ່ຽວຊົມໃນເທື່ອນີ້ເລີຍຂ້ານ້ອຍ"

ພຣະອົງຕັດຖາມວ່າ "ຂະນະທີ່ທ່ຽວຊົມອຸດທະຍານ ຣາດຊະກຸມານພົບເຫັນຫຍັງແດ່?"

ນາຍສາຣະຖີທູນຕອບວ່າ "ຂະນະທີ່ສະເດັດທ່ຽວຊົມພຣະອຸດທະຍານ ພຣະຣາດຊະກຸມານໄດ້ທອດພຣະເນດເຫັນໝູ່ຊົນຊຸມນຸມກັນ ກຳລັງຫາມຄານທີ່ປະດັບດ້ວຍຜ້າຫຼາຍສີ ຈຶ່ງຕັດຖາມຂ້າພຣະອົງວ່າ "ສະຫາຍສາຣະຖີ ໝູ່ຊົນຊຸມນຸມກັນ ແລະ ກຳລັງຫາມຄານທີ່ປະດັບດ້ວຍຜ້າຫຼາຍສີນັ້ນແມ່ນຫຍັງ?"

ຂ້າພຣະອົງທູນຕອບວ່າ "ຂ້າແດ່ ພຣະກຸມານ ຜູ້ນີ້ຊື່ວ່າ ຄົນຕາຍ ຂ້ານ້ອຍ"

ພຣະຣາດຊະກຸມານຮັບສັ່ງວ່າ "ສະຫາຍສາຣະຖີ ຖ້າເປັນແນວນັ້ນ ທ່ານຈົ່ງຂັບລົດໄປທາງຄົນຕາຍນັ້ນ"

"ຂ້າພຣະອົງທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດໄປທາງຄົນຕາຍນັ້ນ"

ພຣະຣາດຊະກຸມານທອດພຣະເນດເຫັນຄົນຕາຍ ຈຶ່ງຕັດຖາມຂ້າພຣະອົງອີກວ່າ "ເປັນຫຍັງ? ເຂົາຈຶ່ງໄດ້ຊື່ວ່າ ຄົນຕາຍ"

ຂ້າພຣະອົງທູນຕອບວ່າ "ຜູ້ນີ້ຊື່ວ່າຄົນຕາຍ ເພາະເວລານີ້ມານດາບິດາ ຫຼື ຍາດສາຍໂລຫິດອື່ນ ໆ ຈະບໍ່ໄດ້ພົບເຫັນເຂົາອີກ ໂຕເຂົາເອງກໍຈະບໍ່ໄດ້ພົບເຫັນມານດາບິດາ ຫຼື ຍາດສາໂລຫິດອື່ນໆ ອີກ ຂ້ານ້ອຍ"

"ເຖິງເຮົາເອງ ກໍຈະຕ້ອງຕາຍເປັນທຳມະດາໜີບໍ່ພົ້ນ ພຣະມານດາ ພຣະບິດາ ຫຼື ພຣະປະຍູນຣະຍາດອື່ນ ໆ ຈະບໍ່ໄດ້ພົບເຫັນເຮົາ ແມ່ນເຮົາເອງກໍຈະບໍ່ໄດ້ພົບເຫັນພຣະມານດາ ພຣະບິດາ ຫຼື ພຣະປະຍູນຣະຍາດອື່ນ ໆ ຖ້າຕົກຢູ່ໃນສະພາບແນວນັ້ນ ຈັ່ງຊັ້ນແມ່ນບໍ?"

"ທັງພຣະອົງ ແລະ ຂ້າພຣະອົງ ກໍຈະຕ້ອງຕາຍເປັນທຳມະດາໜີບໍ່ພົ້ນ ພຣະເຈົ້າແຜ່ນດິນ ພຣະຣາຊິນີ ຫຼື ພຣະປະຍູນຣະຍາດອື່ນ ໆ ຈະບໍ່ຊົງພົບເຫັນພຣະອົງ ແມ່ນພຣະອົງກໍຈະບໍ່ຊົງພົບເຫັນພຣະເຈົ້າແຜ່ນດິນ ພຣະຣາຊິນີ ຫຼື ພຣະປະຍູນຣະຍາດອື່ນ ໆ ອີກ ຂ້ານ້ອຍ"

"ສະຫາຍສາຣະຖີ ຖ້າເປັນແນວນັ້ນ ມື້ນີ້ການຊົມອຸທະຍານພໍແລ້ວ ທ່ານຈົ່ງຂັບລົດກັບເຂົ້າເມືອງເທີ້ນ"

ຂ້າພຣະອົງທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດກັບເຂົ້າເມືອງທັນທີ ພຣະຣາດຊະກຸມານສະເດັດເຖິງພຣະຣາດຊະຖານຊັ້ນໃນແລ້ວ ຊົງມີທຸກມີພຣະຫະໄທບໍ່ຍິນດີ ຊົງພຣະດຳຣິວ່າ "ຂຶ້ນຊື່ວ່າຄວາມເກີດ ເປັນຕາໜ່າຍແທ້ນໍ ເພາະເມື່ອມີຄວາມເກີດກໍມີຄວາມແກ່ ຄວາມເຈັບ ຄວາມຕາຍຕິດຕາມມາ" ຂ້ານ້ອຍ"

## ບັນພະຊິດ

[໕໘] ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະເຈົ້າພັນທຸມາຊົງພຣະດຳຣິວ່າ "ຂໍຢ່າໃຫ້ວິປັດສີກຸມານບໍ່ຍອມຄອງຣາດເລີຍ ຢ່າໄດ້ອອກຈາກວັງໄປບວດເປັນບັນພະຊິດເລີຍ ຄຳທຳນາຍຂອງພາມໂຫຣາຈານຢ່າໄດ້ເປັນຈິງເລີຍ" ຈຶ່ງຮັບສັ່ງໃຫ້ບົວຣະບັດພຣະວິປັດສີຣາດຊະກຸມານດ້ວຍການມະຄຸນ ໕ ຫຼາຍຂຶ້ນກວ່າເກົ່າ ເພື່ອວ່າພຣະວິປັດສີຣາດຊະກຸມານຈະຢູ່ຄອງຣາດ ຈະບໍ່ສະເດັດອອກຈາກພຣະຣາດຊະວັງໄປບວດເປັນບັນພະຊິດ ແລະ ຄຳທຳນາຍຂອງພາມໂຫຣາຈານກໍຈະບໍ່ເປັນຈິງ

ພຣະວິປັດສີຣາດຊະກຸມານ ເມື່ອຊົງອີ່ມອົກອີ່ມໃຈ ພ້ອມພັ່ງ ໄດ້ຮັບການບົວຣະບັດຢູ່ດ້ວຍການມະຄຸນ ໕ ໃນພຣະຣາດຊະຖານນັ້ນ ເມື່ອເວລາລ່ວງໄປອີກຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ພຣະວິປັດສີຣາດຊະກຸມານ ໄດ້ຮັບສັ່ງຮຽກນາຍສາຣະຖີມາຕັດວ່າ "ສະຫາຍສາຣະຖີທ່ານຈົ່ງກະກຽມຍານພາ ຫະນະຄັນງາມ ໆ ເອົາໄວ້ ເຮົາຈະອອກໄປອຸດທະຍານຊົມພູມີປະເທດທີ່ງົດງາມ"

ນາຍສາຣະຖີທູນຮັບພຣະບັນຊາແລ້ວ ກະກຽມຍານພາຫະນະຄັນງາມ ໆ ເມື່ອພ້ອມແລ້ວ ໄດ້ຂາບທູນວ່າ "ຂ້າແດ່ ພຣະຣາດຊະກຸມານ ຂ້າພຣະອົງກະກຽມຍານພາຫະນະຄັນງາມ ໆ ໄວ້ພ້ອມແລ້ວ ຂໍພຣະອົງຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ" ພຣະວິປັດສີຣາດຊະກຸມານຊົງຂຶ້ນຍານ ພາຫະນະຄັນງາມ ໆ ສະເດັດທ່ຽວຊົມອຸດທະຍານພ້ອມດ້ວຍຍານພາຫະນະຄັນງາມ ໆ ຕາມສະເດັດອີກຫຼາຍຄັນ

[໕໓] ດູຣາ ພິກຂຸທັງຫຼາຍ ພຣະວິປັດສີຣາດຊະກຸມານ ສະເດັດທ່ຽວຊົມອຸດທະຍານອີກ ໄດ້ທອດພຣະເນດເຫັນບຸຣຸດມີຫົວໂລ້ນນຸ່ງຫົ່ມຜ້າກາສາວະພັດ ຈຶ່ງຕັດຖາມນາຍສາຣະຖີວ່າ "ສະຫາຍສາຣະຖີ ຊາຍຄົນນີ້ຖືກໃຜເຮັດຫຍັງໃຫ້ ເປັນຫຍັງ? ຫົວ ແລະ ເຄື່ອງນຸ່ງຫົ່ມຂອງເຂົາຈຶ່ງບໍ່ຄືຂອງຄົນອື່ນ?"

ນາຍສາຣະຖີທູນຕອບວ່າ "ຂ້າແດ່ ພຣະຣາດຊະກຸມານ ຜູ້ນີ້ຊື່ວ່າບັນພະຊິດ ຂ້ານ້ອຍ"

"ເປັນຫຍັງ? ເຂົາຈຶ່ງໄດ້ຊື່ວ່າບັນພະຊິດ"

"ຜູ້ນັ້ນຊື່ວ່າ ບັນພະຊິດ ເພາະການປະພຶດທຳເປັນຄວາມດີ ການປະພຶດສະໝ່ຳສະເໝີເປັນຄວາມດີ ການເຮັດກຸສົນເປັນຄວາມດີ ການເຮັດບຸນເປັນຄວາມດີ ການບໍ່ບຽດບຽນເປັນຄວາມດີ ແລະ ການອະນຸເຄາະໝູ່ສັດເປັນຄວາມດີ ຂ້ານ້ອຍ"

"ບັນພະຊິດນີ້ດີແທ້ນໍ ເພາະການປະພຶດທຳເປັນຄວາມດີ ການປະພຶດສະໝ່ຳສະເໝີເປັນຄວາມດີ ການເຮັດກຸສົນເປັນຄວາມດີ ການເຮັດບຸນເປັນຄວາມດີ ການບໍ່ບຽດບຽນເປັນຄວາມດີ ແລະ ການອະນຸເຄາະໝູ່ສັດເປັນຄວາມດີ ຖ້າເປັນແນວນັ້ນ ທ່ານຈົ່ງຂັບລົດໄປທາງບັນພະຊິດນັ້ນ"

"ດູຣາ ພິກຂຸທັງຫຼາຍ ນາຍສາຣະຖີທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດໄປທາງບັນພະຊິດນັ້ນ"

ດູຣາ ພິກຂຸທັງຫຼາຍ ພຣະຣາດຊະກຸມານໄດ້ຕັດຖາມບັນພະຊິດນັ້ນ ວ່າ "ສະຫາຍ ເປັນຫຍັງ? ຫົວ ແລະ ເຄື່ອງນຸ່ງຫົ່ມຂອງທ່ານຈຶ່ງບໍ່ຄືຂອງຄົນອື່ນ?"

ບັນພະຊິດນັ້ນທູນຕອບວ່າ "ຂໍຖວາຍພຣະພອນ ອາດຕະມາຊື່ວ່າ ບັນພະຊິດ"

"ທ່ານຊື່ວ່າ ບັນພະຊິດເພາະເຫດໃດ?"

"ຂໍຖວາຍພຣະພອນ ອາດຕະມາຊື່ວ່າ ບັນພະຊິດ ເພາະການປະພຶດທຳເປັນຄວາມດີ ການປະພຶດສະໝ່ຳສະເໝີເປັນຄວາມດີ ການເຮັດກຸສົນເປັນຄວາມດີ ການເຮັດບຸນເປັນຄວາມດີ ການບໍ່ບຽດບຽນເປັນຄວາມດີ ແລະ ການອະນຸເຄາະໝູ່ສັດເປັນຄວາມດີ"

## ພຣະໂພທິສັດສະເດັດອອກບວດ

[໕໔] ພິກຂຸທັງຫຼາຍ ລຳດັບນັ້ນ ພຣະວິປັດສີຣາດຊະກຸມານໄດ້ຮັບສັ່ງຮຽກນາຍສາຣະຖີມາຕັດວ່າ "ສະຫາຍສາຣະຖີ ຖ້າເປັນແນວນັ້ນ ທ່ານຈົ່ງນຳລົດກັບເຂົ້າໄປໃນເມືອງ ເຮົາຈັກແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດບໍ່ກັບວັງໄປບວດເປັນບັນພະຊິດໃນອຸດທະຍານນີ້"

ນາຍສາຣະຖີທູນຮັບພຣະບັນຊາແລ້ວ ຂັບຣາດຊະລົດກັບເຂົ້າເມືອງທັນທີ ສ່ວນພຣະວິປັດສີຣາດຊະກຸມານ ຊົງປົງພຣະເກສາ (ຜົມ) ແລະ ພຣະມັດສຸ (ໜວດ) ຊົງຄອງຜ້າກາສາວະພັດສະ ເດັດອອກຈາກພຣະຣາດຊະວັງ ບວດເປັນບັນພະຊິດໃນອຸດທະຍານນັ້ນ

## ມະຫາຊົນອອກບວດຕາມສະເດັດ

[໕໕] ດູຣາພິກຂຸທັງຫຼາຍ ມະຫາຊົນໃນເມືອງພັນທຸມະດີ ມີປະມານ ໘໔,໐໐໐ ຄົນ ໄດ້ຮູ້ຂ່າວວ່າພຣະວິປັດສີຣາດຊະກຸມານ ຊົງປົງພຣະເກສາ ແລະ ພຣະມັດສຸ ຊົງຄອງຜ້າກາສາວະພັດ ສະເດັດອອກຈາກພຣະຣາດຊະວັງບວດເປັນບັນພະຊິດ ຈຶ່ງຄິດວ່າ "ພຣະທຳວິໄນ ແລະ ການບັນພະຊາທີ່ພຣະວິປັດສີຣາດຊະກຸມານໄດ້ປົງພຣະເກສາ ແລະ ພຣະມັດສຸ ຊົງຄອງຜ້າກາສາວະພັດ ສະເດັດອອກຈາກພຣະຣາດຊະວັງ ອອກໄປບວດເປັນບັນພະຊິດນັ້ນຄົງຈະບໍ່ຕ່ຳຕ້ອຍ ຄົນລະດັບພຣະວິປັດສີຣາດຊະກຸມານຍັງຊົງປົງພຣະເກສາ ແລະ ພຣະມັດສຸຊົງຄອງຜ້າກາສາວະພັດ ສະເດັດອອກຈາກພຣະຣາດຊະວັງ ອອກໄປບວດເປັນບັນພະຊິດໄດ້ ເປັນຫຍັງພວກເຮົາຈຶ່ງຈະອອກບວດແດ່ບໍ່ໄດ້ນໍ"

ມະຫາຊົນປະມານ ໘໔,໐໐໐ ຄົນໄດ້ພາກັນແຖຜົມ ແລະ ໜວດນຸ່ງຫົ່ມຜ້າກາສາວະ ພັດອອກຈາກເຮືອນໄປບວດເປັນບັນພະຊິດ ຕາມສະເດັດພຣະວິປັດສີໂພທິສັດ ພຣະວິປັດສີໂພທິສັດຊົງມີບໍລິສັດຫ້ອມລ້ອມຕາມສະເດັດຈາຣິກໄປໃນໝູ່ບ້ານ ນິຄົມ ຊົນນະບົດ (ແຄວ້ນ) ແລະ ຣາດຊະທານີທັງຫຼາຍ

[໕໖] ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະວິປັດສີໂພທິສັດປະທັບຫຼີບຫຼີກຢູ່ໃນບ່ອນສະຫງັດ ຊົງມີພຣະຮໍ່າເພິງແນວນີ້ວ່າ "ການທີ່ເຮົາຢູ່ສັບປົນດ້ວຍໝູ່ຄະນະແນວນີ້ ບໍ່ເປັນການສົມຄວນເລີຍ ທາງທີ່ດີເຮົາຄວນຫຼີກອອກຈາກໝູ່ຢູ່ພຽງລຳພັງ" ດູຣາ ພິກຂຸທັງຫຼາຍ ຕໍ່ມາພຣະວິປັດສີໂພທິສັດ

ສະເດັດຫຼີກອອກຈາກໝູ່ຄະນະ ປະທັບຢູ່ຜູ້ດຽວ ບັນພະຊິດ ໘໔,໐໐໐ ອົງນັ້ນ ໄດ້ແຍກໄປທາງໜຶ່ງ ພຣະວິປັດສີໂພທິສັດກໍສະເດັດໄປອີກທາງໜຶ່ງ

## ພຣະໂພທິສັດຕັດສະຣູ້

[໕໗] ດູຣາ ພິກຂຸທັງຫຼາຍ ຕໍ່ມາ ພຣະວິປັດສີໂພທິສັດປະທັບຫຼີບຫຼີກຢູ່ໃນບ່ອນສະຫງັດ ຊົງມີພຣະຮໍາເພີງແນວນີ້ວ່າ “ສັດໂລກທັງຫຼາຍພາກັນຕົກຢູ່ໃນຄວາມຄັບແຄ້ນ ຈຶ່ງເກີດ ແກ່ ເຈັບ ຕາຍ ວຽນຕາຍ ແລະ ວຽນເກີດ ກໍບຸກຄົນຜູ້ບໍ່ຮູ້ອຸບາຍໃຫ້ອອກຈາກທຸກ ຄື ຄວາມຊະຣາ (ຄວາມແກ່) ມໍຣະນະ (ຄວາມຕາຍ) ນີ້ ເທິງປານໃດ ຈຶ່ງຈະພົ້ນຈາກທຸກ ຄື ຊະຣາ ມໍຣະນະ ນີ້ໄດ້ນໍ?”

ດູຣ າພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພຣະດໍາຣິວ່າ “ເມື່ອມີຫຍັງ? ຊະຣາ ມໍຣະນະຈຶ່ງມີ ເພາະຫຍັງ ເປັນປັດໄຈຊະຣາ ມໍຣະນະຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອມີຊາດ (ຄວາມເກີດ) ຊະຣາ ມໍຣະນະຈຶ່ງມີ ເພາະຊາດເປັນປັດໄຈ ຊະຣາ ມໍຣະນະຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນຊົງພຣະດໍາຣິອີກວ່າ “ເມື່ອມີຫຍັງ? ຊາດຈຶ່ງມີ ເພາະມີຫຍັງເປັນປັດໄຈ ຊາດຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອມີພົບ (ຄວາມມີຄວາມເປັນ) ຊາດຈຶ່ງມີ ເພາະພົບເປັນປັດໄຈຊາດຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພຣະດໍາຣິຕື່ມອີກວ່າ “ເມື່ອມີຫຍັງ? ພົບຈຶ່ງມີ ເພາະມີຫຍັງເປັນປັດໄຈ ພົບຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ລໍາດັບນັ້ນພຣະອົງຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອມີອຸປາທານ (ຄວາມຢຶດໝັ້ນຖືໝັ້ນ) ພົບຈຶ່ງມີ ເພາະອຸປາທານເປັນປັດໄຈພົບຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນຊົງພຣະດໍາຣິວ່າ “ເມື່ອມີຫຍັງ? ອຸປາທານຈຶ່ງມີ ເພາະມີຫຍັງເປັນປັດໄຈອຸປາທານຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອຕັນຫາ (ຄວາມຢາກ) ມີ ອຸປາທານຈຶ່ງມີ ເພາະຕັນຫາເປັນປັດໄຈ ອຸປາທານຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນ ພຣະອົງຊົງພຣະດໍາຣິວ່າ “ເມື່ອມີຫຍັງ? ຕັນຫາຈຶ່ງມີ ເພາະມີຫຍັງເປັນປັດໄຈ ຕັນຫາຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພິຈາຣະນາຢ່າງ

ເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອເວທະນາ (ຄວາມຮູ້ສຶກ) ມີ ຕັນຫາຈຶ່ງມີ ເພາະເວທະນາເປັນປັດໄຈຕັນຫາຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນ ພຣະອົງຊົງພຣະດຳຣິວ່າ “ເມື່ອມີຫຍັງ? ເວທະນາຈຶ່ງມີ ເພາະຫຍັງເປັນປັດໄຈ ເວທະນາຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພິຈາຣະນາຢ່າງ ເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອຜັດສະ (ສຳຜັດ) ມີ ເວທະນາຈຶ່ງມີ ເພາະ ຜັດສະເປັນປັດໄຈເວທະນາຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນ ພຣະອົງຊົງພຣະດຳຣິວ່າ “ເມື່ອມີຫຍັງ? ຜັດສະຈຶ່ງມີ ເພາະຫຍັງເປັນປັດໄຈຜັດສະຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ພຣະອົງຊົງພິຈາຣະນາຢ່າງເລິກເຊິ່ງຈຶ່ງ ໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອສະລາຍະຕະນະ (ອາຍະຕະນະ ໖) ມີ ຜັດສະຈຶ່ງມີ ເພາະສະລາຍະຕະນະເປັນປັດໄຈຜັດສະຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນ ພຣະອົງຊົງພຣະດຳຣິວ່າ “ເມື່ອມີຫຍັງ? ສະລາຍະຕະນະ ຈຶ່ງມີ ເພາະຫຍັງເປັນປັດໄຈສະລາຍະຕະນະຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງ ຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອນາມຮູບ (ນາມມະທຳ ແລະ ຮູບປະທຳ) ມີ ສະລາຍະຕະນະຈຶ່ງມີ ເພາະນາມຮູບເປັນປັດໄຈສະລາຍະຕະນະຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພຣະດຳຣິວ່າ “ເມື່ອມີຫຍັງ? ນາມຮູບຈຶ່ງມີ ເພາະຫຍັງເປັນປັດໄຈ ນາມຮູບຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພິຈາຣະນາຢ່າງ ເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອວິນຍານ (ຄວາມຮູ້ແຈ້ງອາລົມ) ມີ ນາມຮູບ ຈຶ່ງມີ ເພາະວິນຍານເປັນປັດໄຈນາມຮູບຈຶ່ງມີ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພຣະດຳຣິວ່າ “ເມື່ອມີຫຍັງ? ວິນຍານຈຶ່ງມີ ເພາະຫຍັງເປັນປັດໄຈວິນຍານຈຶ່ງມີ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພິຈາຣະນາຢ່າງ ເລິກເຊິ່ງຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອນາມຮູບມີ ວິນຍານຈຶ່ງມີ ເພາະນາມຮູບເປັນ ປັດໄຈວິນຍານຈຶ່ງມີ”

[໕໗] ດູຣາ ພິກຂຸທັງຫຼາຍ ຈາກນັ້ນພຣະອົງຊົງພຣະດຳຣິວ່າ “ວິນຍານນີ້ຍ່ອມໝູນວຽນຢູ່ ໃນນາມຮູບນີ້ທີ່ນັ້ນບໍ່ໜີໄປຈາກນີ້ ເພາະການໝູນວຽນຢູ່ຢ່າງນີ້ສັດໂລກຈຶ່ງເກີດແດ່ ແກ່ແດ່ ຕາຍ ແດ່ ຈຸຕິແດ່ ອຸບັດແດ່ ຄວາມເປັນໄປນັ້ນ ຄື

| | |
|---|---|
| ເພາະນາມຮູບເປັນປັດໄຈ | ວິນຍານຈຶ່ງມີ |
| ເພາະວິນຍານເປັນປັດໄຈ | ນາມຮູບຈຶ່ງມີ |

| | |
|---|---|
| ເພາະນາມຮູບເປັນປັດໄຈ | ສະລາຍະຕະນະຈຶ່ງມີ |
| ເພາະສະລາຍະຕະນະເປັນປັດໄຈ | ຜັດສະຈຶ່ງມີ |
| ເພາະຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ເພາະເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ເພາະຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ເພາະອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ເພາະພົບເປັນປັດໄຈ | ຊາດຈຶ່ງມີ |

ເພາະຊາດເປັນປັດໄຈ ຊະຣາ (ຄວາມເຖົ້າ) ມໍຣະນະ (ຄວາມຕາຍ) ໂສກະ (ຄວາມໂສກ) ປະຣິເທວະ (ອຸກອັ່ງໃຈ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ)ຈຶ່ງມີ ຄວາມເກີດຂື້ນແຫ່ງກອງທຸກທັງມວນນີ້ ມີຂຶ້ນໄດ້ດ້ວຍອາການແນວນີ້”

[໕໙] ພິກຂຸທັງຫຼາຍ ຈັກຂຸເກີດຂື້ນແລ້ວ ຍານເກີດຂື້ນແລ້ວ ປັນຍາເກີດຂື້ນແລ້ວ ວິດຊາເກີດຂື້ນແລ້ວ ແສງສະຫວ່າງເກີດຂື້ນແລ້ວ ແກ່ພຣະວິປັດສີໂພທິສັດ ໃນທຳທັງຫຼາຍ ທີ່ບໍ່ເຄີຍສະດັບມາກ່ອນວ່າ ນີ້ແມ່ນ “ສະມຸໄທ ສະມຸໄທ (ເຫດພາໃຫ້ເກີດທຸກ ເຫດພາໃຫ້ເກີດທຸກ)”

[໖໐] ດູຣາ ພິກຂຸທັງຫຼາຍ ຈາກນັ້ນ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ “ເມື່ອຫຍັງບໍ່ມີ? ຊະຣາ ມໍຣະນະຈຶ່ງບໍ່ມີ ເພາະຫຍັງດັບ ຊະຣາ ມໍຣະນະຈຶ່ງດັບ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນ ພຣະວິປັດສີໂພທິສັດ ຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອຊາດບໍ່ມີ ຊະຣາ ມໍຣະນະ ຈຶ່ງບໍ່ມີ ເພາະຊາດດັບ ຊະຣາ ມໍຣະນະຈຶ່ງດັບ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດ ຊົງພຣະດຳຣິວ່າ “ເມື່ອຫຍັງບໍ່ມີຊາດຈຶ່ງບໍ່ມີ ເພາະຫຍັງດັບ ຊາດຈຶ່ງດັບ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດ ຊົງພິຈາຣະນາຢ່າງເລິກເຊິ່ງຈຶ່ງໄດ້ຊົງຮູ້ແຈ້ງ ດ້ວຍພຣະປັນຍາວ່າ “ເມື່ອພົບບໍ່ມີ ຊາດຈຶ່ງບໍ່ມີ ເພາະພົບດັບ ຊາດຈຶ່ງດັບ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ “ເມື່ອຫຍັງບໍ່ມີພົບຈຶ່ງບໍ່ມີ ເພາະຫຍັງດັບພົບຈຶ່ງດັບ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ “ເມື່ອອຸປາທານບໍ່ມີ ພົບຈຶ່ງບໍ່ມີເພາະອຸປາທານດັບພົບຈຶ່ງດັບ”

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ “ເມື່ອຫຍັງບໍ່ມີອຸປາທານຈຶ່ງບໍ່ມີ ເພາະຫຍັງດັບອຸປາທານຈຶ່ງດັບ” ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດ

ສີໂພທິສັດຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ "ເມື່ອຕັນຫາບໍ່ມີ ອຸປາທານຈຶ່ງບໍ່ມີ ເພາະຕັນຫາດັບ ອຸປາທານຈຶ່ງດັບ"

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ "ເມື່ອຫຍັງບໍ່ມີ ຕັນຫາຈຶ່ງບໍ່ມີ ເພາະຫຍັງດັບ ຕັນຫາຈຶ່ງດັບ" ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ "ເມື່ອເວທະນາບໍ່ມີ ຕັນຫາຈຶ່ງບໍ່ມີ ເພາະເວທະນາດັບ ຕັນຫາຈຶ່ງດັບ"

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ "ເມື່ອຫຍັງບໍ່ມີ ເວທະນາຈຶ່ງບໍ່ມີ ເພາະຫຍັງດັບເວທະນາຈຶ່ງດັບ" ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ "ເມື່ອຜັດສະບໍ່ມີ ເວທະນາຈຶ່ງບໍ່ມີ ເພາະຜັດສະດັບເວທະນາຈຶ່ງດັບ"

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ "ເມື່ອຫຍັງບໍ່ມີ ຜັດສະຈຶ່ງບໍ່ມີ ເພາະຫຍັງດັບ ຜັດສະຈຶ່ງດັບ" ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ "ເມື່ອສະລາຍະຕະນະບໍ່ມີ ຜັດສະຈຶ່ງບໍ່ມີ ເພາະສະລາຍະຕະນະດັບ ຜັດສະຈຶ່ງດັບ"

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ "ເມື່ອຫຍັງບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ເພາະຫຍັງດັບ ສະລາຍະຕະນະຈຶ່ງດັບ" ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດ ຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ "ເມື່ອນາມຮູບບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ເພາະນາມຮູບດັບ ສະລາຍະຕະນະຈຶ່ງດັບ"

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ "ເມື່ອຫຍັງບໍ່ມີ ນາມຮູບຈຶ່ງບໍ່ມີ ເພາະຫຍັງດັບ ນາມຮູບຈຶ່ງດັບ" ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ "ເມື່ອວິນຍານບໍ່ມີ ນາມຮູບຈຶ່ງບໍ່ມີ ເພາະວິນຍານດັບ ນາມຮູບຈຶ່ງດັບ"

ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ "ເມື່ອຫຍັງບໍ່ມີ ວິນຍານຈຶ່ງບໍ່ມີ ເພາະຫຍັງດັບ ວິນຍານຈຶ່ງດັບ" ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພິຈາຣະນາຢ່າງເລິກເຊິ່ງ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ "ເມື່ອນາມຮູບບໍ່ມີວິນຍານຈຶ່ງບໍ່ມີ ເພາະນາມຮູບດັບ ວິນຍານຈຶ່ງດັບ"

[໖໑] ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ພຣະວິປັດສີໂພທິສັດຊົງພຣະດຳຣິວ່າ ທາງເພື່ອຄວາມຕັດສະຣູ້ເຮົາໄດ້ບັນລຸແລ້ວ ຄື

| | |
|---|---|
| ເພາະນາມຮູບດັບ | ວິນຍານຈຶ່ງດັບ |
| ເພາະວິນຍານດັບ | ນາມຮູບຈຶ່ງດັບ |
| ເພາະນາມຮູບດັບ | ສະລາຍະຕະນະຈຶ່ງດັບ |
| ເພາະສະລາຍະຕະນະດັບ | ຜັດສະຈຶ່ງດັບ |
| ເພາະຜັດສະດັບ | ເວທະນາຈຶ່ງດັບ |
| ເພາະເວທະນາດັບ | ຕັນຫາຈຶ່ງດັບ |
| ເພາະຕັນຫາດັບ | ອຸປາທານຈຶ່ງດັບ |
| ເພາະອຸປາທານດັບ | ພົບຈຶ່ງດັບ |
| ເພາະພົບດັບ | ຊາດຈຶ່ງດັບ |

ເພາະຊາດດັບ ຊະຣາ ມໍຣະນະ ໂສກະປະຣິເທວະ ທຸກໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍອາການແບບນີ້”

[໖໘] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ພຣະວິປັດສີໂພທິສັດໃນທຳທັງຫຼາຍ ທີ່ບໍ່ເຄີຍສະດັບມາກ່ອນວ່າ “ນິໂຣທະ ນິໂຣທະ (ຄວາມດັບທຸກ ຄວາມດັບທຸກ)”

[໖໓] ດູຣາ ພິກຂຸທັງຫຼາຍ ຈາກນັ້ນແລ ໂດຍສະໄໝອື່ນອີກ ພຣະວິປັດສີໂພທິສັດຊົງພິຈາລະນາເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນອຸປາທານຂັນ ໕ ຢູ່ວ່າ “ຮູບເປັນ ແບບນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແບບນີ້ ຄວາມດັບແຫ່ງຮູບເປັນແບບນີ້ ເວທະນາເປັນແບບນີ້ ຄວາມເກີດຂຶ້ນແຫ່ງເວທະນາເປັນແບບນີ້ ຄວາມດັບແຫ່ງເວທະນາເປັນແບບນີ້ ສັນຍາເປັນແບບນີ້ ຄວາມເກີດຂຶ້ນແຫ່ງສັນຍາເປັນແບບນີ້ ຄວາມດັບແຫ່ງສັນຍາເປັນແບບນີ້ ສັງຂານເປັນແບບນີ້ ຄວາມເກີດຂຶ້ນແຫ່ງສັງຂານເປັນແບບນີ້ ຄວາມດັບແຫ່ງສັງຂານເປັນແບບນີ້ ວິນຍານເປັນແບບນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແບບນີ້ ຄວາມດັບແຫ່ງວິນຍານເປັນແບບນີ້” ເມື່ອຊົງພິຈາລະນາເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນອຸປາທານຂັນ ໕ ຢູ່ ບໍ່ດົນປານໃດຈິດກໍຫຼຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນ ດັ່ງນີ້ແລ ”

**ພານະວານທີ ໘ ຈົບ**

## ທ້າວມະຫາພົມທູນອາຣາດນາໃຫ້ຊົງສະແດງທຳ

[໓໔] ດູຣາ ພິກຂຸທັງຫຼາຍ ຄັ້ງນັ້ນແລ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ມີພຣະຮ່ຳເພີງແນວນີ້ວ່າ "ເຮົາຄວນສະແດງທຳນີ້" ດູຣາ ພິກຂຸທັງຫຼາຍ ຄັ້ງນັ້ນແລ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ຊົງພຣະດຳຣິຕໍ່ອີກວ່າ "ທຳທີ່ເຮົາບັນລຸແລ້ວນີ້ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະຫງົບ ປະນີດ ບໍ່ແມ່ນວິໄສຕັກກະ (ຄາດຄະເນເອົາບໍ່ໄດ້) ລະອຽດ ບັນດິດຈຶ່ງຈະຮູ້ໄດ້ ກໍແລ ໝູ່ປະຊານີ້ເປັນຜູ້ຕິກຢູ່ໃນອາການພໍໃຈ ໃນກາມະຄຸນ ໕ ຍິນດີໃນກາມະຄຸນ ໕ ເພີດເພີນໃນກາມະຄຸນ ໕ ສຳລັບໝູ່ປະຊາຜູ້ລື້ນລົມໃນກາມະຄຸນ ໕ ຍິນດີໃນກາມະຄຸນ ໕ ເພີດເພີນໃນກາມະຄຸນ ໕ ສະພາວະແນວນີ້ເປັນສິ່ງທີ່ເຫັນໄດ້ຍາກ ໄດ້ແກ່ ຫຼັກອິທັປປັດຈະຍະຕາ[໒] ຫຼັກປະຕິດຈະສະມຸບບາດ[໓] ເຖິງແມ່ນສະພາວະອັນນີ້ກໍເປັນສິ່ງທີ່ເຫັນໄດ້ຍາກຫຼາຍ ຄວາມສະຫງົບລະງັບແຫ່ງສັງຂານທັງປວງ ຄວາມສະລັດອຸປະທິທັງປວງ ຄວາມສິ້ນຕັນຫາ ວິຣາຄະ ນິໂຣທະ ນິບພານ ກໍຖ້າເຮົາຈະສະແດງທຳຜູ້ອື່ນຈະບໍ່ເຂົ້າໃຈເຮົາ ໃນຂໍ້ນີ້ກໍຈະເປັນຄວາມອິດເມື່ອຍແກ່ເຮົາລ້າ ໆເປັນຄວາມລຳບາກແກ່ເຮົາລ້າ ໆ"

[໓໕] ດູຣາ ພິກຂຸທັງຫຼາຍ ອັນໜຶ່ງ ອະນັດສະຣິຍະຄາຖາ (ຄາຖາໜ້າອັດສະຈັນ) ເຫຼົ່ານີ້ທີ່ຍັງບໍ່ເຄີຍຊົງສະດັບມາກ່ອນ ໄດ້ຜາກົດແຈ້ງແກ່ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີວ່າ

### ອະນັດສະຣິຍະຄາຖາ

  ບັດນີ້ ເຮົາຍັງບໍ່ຄວນປະກາດທຳ
ທີ່ເຮົາໄດ້ບັນລຸມາດ້ວຍຄວາມລຳບາກ
ເພາະທຳນີ້ບໍ່ແມ່ນທຳທີ່ຜູ້ຖືກຣາຄະແລະ
ໂທສະຄອບງຳຈະຮູ້ໄດ້ງ່າຍ
ເປັນທຳສວນກະແສລະອຽດເລິກເຊິ່ງ
ຮູ້ເຫັນຕາມໄດ້ຍາກ ປະນີດ ຜູ້ກຳໜັດດ້ວຍຣາຄະ
ຖືກກອງໂມຫະຫຸ້ມຫໍ່ໄວ້ຈັກຮູ້ເຫັນບໍ່ໄດ້

ເມື່ອຊົງພິຈາລະນາດັ່ງນີ້ແລ້ວ ພຣະຫະໄທກໍຄືດນ້ອມໄປເພື່ອຈະປະທັບຢູ່ລ້າ ໆ ບໍ່ໄດ້ນ້ອມໄປເພື່ອຈະຊົງສະແດງທຳ

[໓໖] ດູຣາ ພິກຂຸທັງຫຼາຍ ຄັ້ງນັ້ນແລ ມີທ້າວມະຫາພົມອົງໜຶ່ງ ສາມາດກຳນົດຮູ້ພຣະດຳຣິໃນໃຈຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ດ້ວຍໃຈໄດ້ ຈຶ່ງ

ຄິດວ່າ "ທ່ານຜູ້ຈະເລີນ ໂລກຈະຈິບຫາຍແລ້ວນໍ ໂລກຈະພິນາດແລ້ວນໍ ເພາະພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າວິປັດສີ ຊົງນ້ອມພຣະຫະໄທໄປເພື່ອຈະປະທັບຢູ່ລ້າ ໆ ບໍ່ໄດ້ນ້ອມພຣະຫະໄທໄປເພື່ອຈະຊົງສະແດງທໍາ ດູຣາ ພິກຂຸທັງຫຼາຍລໍາດັບນັ້ນທ້າວມະຫາພົມຈຶ່ງໄດ້ຫາຍໂຕໄປຈາກພົມມະໂລກ ມາຜາກົດຕໍ່ພຣະພັກຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າວິປັດສີ ຄື ບຸຣຸດຜູ້ມີກໍາລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ດູຣາ ພິກຂຸທັງຫຼາຍ ລໍາດັບນັ້ນແລ ທ້າວມະ ຫາພົມ ຈຶ່ງຫົ່ມຜ້າບ່ຽງບ່າຄຸກເຂົ່າເບື້ອງຂວາລົງເທິງແຜ່ນດິນ ປະນົມມືໄປທາງພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າວິປັດສີ ແລ້ວໄດ້ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທໍາ ຂໍພຣະສຸຄົດເຈົ້າໂຜດສະແດງທໍາເທີ້ນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງ ສັດເຫຼົ່ານັ້ນ ຈະເສື່ອມເພາະບໍ່ໄດ້ຟັງທໍາ ເຫຼົ່າສັດຜູ້ທີ່ອາດຈະຮູ້ທົ່ວເຖິງທໍາໄດ້ຍັງມີຢູ່ ຂ້ານ້ອຍ"

[ຜກ] ເມື່ອທ້າວມະຫາພົມຂາບທູນອາຣາດນາແນວນີ້ແລ້ວ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າວິປັດສີ ຈຶ່ງໄດ້ຕັດກັບທ້າວມະຫາພົມແນວນີ້ວ່າ "ດູຣາ ພົມ ແມ່ນເຮົາເອງກໍມີຄວາມຄິດວ່າ ເຮົາຄວນສະແດງທໍາ" ແຕ່ກໍມາຄິດວ່າ "ທໍາທີ່ເຮົາບັນລຸແລ້ວນີ້ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະຫງົບ ປະນີດ ບໍ່ແມ່ນວິໄສ ຕັກກະ (ຄາດຄະເນເອົາບໍ່ໄດ້) ລະອຽດ ບັນດິດຈຶ່ງຈະຮູ້ໄດ້ ກໍແລ ໝູ່ປະຊານີ້ເປັນຜູ້ຕິກຢູ່ໃນອາການພໍໃຈ ໃນກາມະຄຸນ ໕ ຍິນດີໃນກາມະຄຸນ ໕ ເພີດເພີນໃນກາມະຄຸນ ໕ ສໍາລັບໝູ່ປະຊາຜູ້ລື່ນລົມໃນກາມະຄຸນ ໕ ຍິນດີໃນກາມະຄຸນ ໕ ເພີດເພີນໃນກາມະຄຸນ ໕ ສະພາວະແນວນີ້ເປັນສິ່ງທີ່ເຫັນໄດ້ຍາກ ກ່າວຄື ຫຼັກອິທັບປັດຈະຍະຕາ[໒] ຫຼັກປະຕິດຈະສະມຸບບາດ[໒] ເຖິງແມ່ນສະພາວະອັນນີ້ກໍເປັນສິ່ງທີ່ເຫັນໄດ້ຍາກຫຼາຍ ກ່າວຄືຄວາມສະຫງົບລະງັບແຫ່ງສັງຂານທັງປວງ ຄວາມສະລັດອຸປະທິທັງປວງ ຄວາມສິ້ງຕັນຫາ ວິຣາຄະ ນິໂຣທະ ນິບພານ ກໍຖ້າເຮົາຈະສະແດງທໍາຜູ້ອື່ນຈະບໍ່ເຂົ້າໃຈເຮົາ ໃນຂໍ້ນີ້ກໍຈະເປັນຄວາມອິດເມື່ອຍແກ່ເຮົາລ້າ ໆ ເປັນຄວາມລໍາບາກແກ່ເຮົາລ້າ ໆ"

ອັນໜຶ່ງ ອະນັດສະຣິຍະຄາຖາເຫຼົ່ານີ້ ທີ່ບໍ່ເຄີຍສະດັບມາກ່ອນໄດ້ຜາກົດແຈ້ງແກ່ເຮົາວ່າ

## ອະນັດສະຣິຍະຄາຖາ

ບັດນີ້ ເຮົາຍັງບໍ່ຄວນປະກາດທໍາ
ທີ່ເຮົາໄດ້ບັນລຸມາດ້ວຍຄວາມລໍາບາກ
ເພາະທໍານີ້ບໍ່ແມ່ນທໍາທີ່ຜູ້ຖືກຣາຄະແລະ
ໂທສະຄອບງໍາຈະຮູ້ໄດ້ງ່າຍ
ເປັນທໍາສວນກະແສລະອຽດເລິກເຊິ່ງ
ຮູ້ເຫັນຕາມໄດ້ຍາກ ປະນີດ ຜູ້ກໍາໜັດດ້ວຍຣາຄະ

ຖືກກອງໂມຫະຫຸ້ມຫໍ່ໄວ້ຈັກຮູ້ເຫັນບໍ່ໄດ້

"ເມື່ອເຮົາພິຈາລະນາດັ່ງນີ້ ໃຈກໍນ້ອມໄປເພື່ອຈະຢູ່ລ້າ ໆ ບໍ່ໄດ້ນ້ອມໄປເພື່ອຈະສະແດງທຳ"

[໖໗] ດູຣາ ພິກຂຸທັງຫຼາຍ ແມ່ນເທື່ອທີ ໘ ທ້າວມະຫາພົມໄດ້ຂາບທູນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດສະແດງທຳ ຂໍພຣະສຸຄົດເຈົ້າໂຜດສະແດງທຳເທີ້ນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງ ສັດເຫຼົ່ານັ້ນຈະເສື່ອມເພາະບໍ່ໄດ້ຟັງທຳ ເຫຼົ່າສັດຜູ້ທີ່ອາດຈະຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ຂ້າ ນ້ອຍ" ໗໘໗

ແມ່ນເທື່ອທີ ໓ ທ້າວມະຫາພົມໄດ້ຂາບທູນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳ ຂໍພຣະສຸຄົດເຈົ້າໂຜດສະແດງທຳເທີ້ນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງ ສັດເຫຼົ່ານັ້ນ ຈະເສື່ອມເພາະບໍ່ໄດ້ຟັງທຳ ເຫຼົ່າສັດຜູ້ທີ່ອາດຈະຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ຂ້ານ້ອຍ"

## ພຣະວິປັດສີພຸດທະເຈົ້າຊົງພິຈາລະນາສັດໂລກ

[໖໘] ດູຣາ ພິກຂຸທັງຫຼາຍ ຄັ້ງນັ້ນແລ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ຊົງຮູ້ຄຳອາຣາດນາຂອງທ້າວມະຫາພົມ ແລະ ຊົງອາໄສພຣະກະລຸນາໃນໝູ່ສັດໄດ້ຊົງກວດເບິ່ງໂລກດ້ວຍພຣະພຸດທະຈັກຂຸ ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ເມື່ອຊົງກວດກາໂລກດ້ວຍພຣະພຸດຈັກຂຸແລ້ວ ໄດ້ຊົງເຫັນສັດທັງຫຼາຍຜູ້ມີທຸລີໃນໜ່ວຍຕາເບົາບາງ ຜູ້ມີທຸລີໃນໜ່ວຍຕາຫຼາຍ ຜູ້ມີອິນຊີແກ່ກ້າ ຜູ້ມີອິນຊີອ່ອນ ຜູ້ມີອາການດີ ຜູ້ມີອາການຊົ່ວ ລາງພວກສອນໃຫ້ຮູ້ໄດ້ງ່າຍ ລາງພວກສອນໃຫ້ຮູ້ໄດ້ຍາກ ລາງພວກຄວນສັ່ງສອນ ລາງພວກບໍ່ຄວນສັ່ງສອນ ລາງພວກມັກເຫັນປະຣະໂລກ ແລະ ໂທດ໔ ວ່າເປັນຕາຢ້ານ ບາງພວກບໍ່ເຫັນປະຣະໂລກ ແລະ ໂທດວ່າວ່າເປັນຕາຢ້ານ ປຽບຄື ໃນກໍບົວ ໃນກໍບົວຫຼວງ ຫຼື ໃນກໍບົວຂາວ ດອກບົວ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ໃຫຍ່ໃນນ້ຳ ຍັງບໍ່ພົ້ນຈາກນ້ຳ ຈົມຢູ່ໃຕ້ນ້ຳ ແລະ ນ້ຳຫຼໍ່ລ້ຽງໄວ້ ດອກບົວ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ໃຫຍ່ຢູ່ໃນນ້ຳ ຢູ່ພຽງນ້ຳ ດອກບົວ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ໃຫຍ່ຢູ່ໃນນ້ຳ ຢູ່ພົ້ນນ້ຳ ບໍ່ປຽກນ້ຳ ສັນໃດ

ດູຣາ ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີໄດ້ຊົງກວດກາເບິ່ງໂລກດ້ວຍພຣະພຸດຈັກຂຸດັ່ງນີ້ແລ້ວ ຊົງໄດ້ເຫັນສັດທັງຫຼາຍ ຜູ້ມີທຸລີໃນໜ່ວຍຕາເບົາບາງຜູ້ມີທຸລີໃນໜ່ວຍຕາຫຼາຍ ຜູ້ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊົ່ວ ລາງ

ພວກສອນໃຫ້ຮູ້ໄດ້ງ່າຍ ລາງພວກສອນໃຫ້ຮູ້ໄດ້ຍາກ ລາງພວກຄວນສັ່ງສອນ ລາງພວກບໍ່ຄວນສັ່ງສອນ ລາງພວກມັກເຫັນປະຣະໂລກ ແລະໂທດ[໔] ວ່າເປັນຕາຍ້ານ ບາງພວກບໍ່ເຫັນປະຣະໂລກ ແລະ ໂທດວ່າວ່າເປັນຕາຍ້ານ ສັນນັ້ນ

[໗໐] ດູຣາ ພິກຂຸທັງຫຼາຍ ໃນຄັ້ງນັ້ນແລ ທ້າວມະຫາພົມນັ້ນ ຮູ້ພຣະຮ່ຳເພິງຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີດ້ວຍໃຈ ຈຶ່ງໄດ້ຂາບທູນດ້ວຍຄາຖາທັງຫຼາຍວ່າ

"ຂ້າແດ່ ພຣະອົງຜູ້ມີພຣະປັນຍາດີ ມີພຣະສະມັນຕະຈັກຂຸ
ປຽບຄື ກັນກັບບຸຣຸດຜູ້ຢືນເທິງຈອມພູສີລາລ້ວນ
ເພິ່ງເຫັນໝູ່ຊົນໄດ້ໂດຍຮອບແມ່ນສັນໃດ
ພຣະອົງຜູ້ໝົດຄວາມໂສກແລ້ວ
ໂຜດສະເດັດຂຶ້ນສູ່ຜາສາດ ຄື ທຳ
ຈະໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມເສົ້າໂສກ
ແລະ ຖືກຊາດຊະຣາຄອບງຳໄດ້ຊັດແຈ້ງສັນນັ້ນ
ຂ້າແດ່ ພຣະອົງຜູ້ມີຄວາມພຽນ
ຜູ້ຊະນະສົງຄາມ[໕] ຜູ້ນຳໝູ່[໖] ຜູ້ບໍ່ມີໜີ້[໗]
ຂໍພຣະອົງໂຜດລຸກຂຶ້ນສະເດັດຈາຣິກໄປໃນໂລກ
ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດສະແດງທຳເທີ້ນ
ເພາະຜູ້ຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ຂ້ານ້ອຍ"

[໗໑] ດູຣາ ພິກຂຸທັງຫຼາຍ ເມື່ອທ້າວມະຫາພົມຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ໄດ້ຕັດກັບທ້າວມະຫາພົມນັ້ນດ້ວຍພຣະຄາຖາວ່າ

"ສັດທັງຫຼາຍເຫຼົ່າໃດຕ້ອງການຟັງ
ຈົ່ງປ່ອຍສັດທາມາເທີ້ນ
ເຮົາໄດ້ເປີດປະຕູແຫ່ງອະມະຕະ
ແກ່ສັດທັງຫຼາຍເຫຼົ່ານັ້ນແລ້ວ
ດູຣາ ພົມ ເພາະເຮົາໄດ້ສຳຄັນວ່າຈະລຳບາກ
ຈຶ່ງບໍ່ໄດ້ສະແດງທຳອັນປະນີດ ໃນໝູ່ມະນຸດ

ດູຣາ ພິກຂຸທັງຫຼາຍ ໃນຂະນະນັ້ນເອງ ເມື່ອທ້າວມະຫາພົມໄດ້ຮູ້ວ່າ "ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີໄດ້ຊົງປະທານໂອກາດ ເພື່ອຈະຊົງສະແດງທຳແລ້ວ" ຈຶ່ງຖວາຍອະພິວາດກະທຳປະທັກສິນແລ້ວ ໄດ້ຫາຍໂຕໄປໃນບ່ອນນັ້ນແລ

# ຄູ່ພຣະອັກຄະອະສາວົກ

[໗໔] ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນແລ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ຊົງພຣະດຳຣິວ່າ "ເຮົາຈະເພິ່ງສະແດງທຳແກ່ໃຜກ່ອນ ຜູ້ໃດຈັກຮູ້ທຳນີ້ໄດ້ວ່ອງໄວ" ແລ້ວໄດ້ຊົງພຣະດຳຣິຕໍ່ໄປວ່າ "ພຣະຣາດຊະໂອຣົດພຣະນາມວ່າ ຂັນທະ ແລະ ບຸດປຸໂລຫິດຊື່ຕິດສະ ທີ່ອາໄສຢູ່ໃນເມືອງພັນທຸມະດີຣາດຊະທານີ ເປັນຄົນສະຫຼຽວສະຫຼາດຫຼັກແຫຼມມີທຸລີໃນໜ່ວຍຕາເບົາບາງ ເຮົາເພິ່ງສະແດງທຳແກ່ເຂົາທັງສອງກ່ອນ ເຂົາທັງສອງຈັກຮູ້ທຳນີ້ໄດ້ຢ່າງວ່ອງໄວ"

[໗໕] ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນແລ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີຊົງຫາຍໂຕໄປຈາກກ້ອງຕົ້ນໂພ ມາຜາກົດພຣະອົງຂຶ້ນທີ່ມິຄະທາຍະວັນ ຊື່ວ່າເຂມະ ໃນເມືອງພັນທຸມະດີຣາດຊະທານີ ຄືກັບບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ດູຣາພິກຂຸທັງຫຼາຍ ລຳດັບນັ້ນແລ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ໄດ້ຮັບສັ່ງຮຽກຄົນເຝົ້າສວນມາຕັດວ່າ "ມານີ້ເຖີ້ນ ທ້າວທາຍະບານ ທ່ານຈົ່ງເຂົ້າໄປໃນເມືອງພັນທຸມະດີ ຣາດຊະທານີ ຈົ່ງບອກຣາດຊະໂອຣົດພຣະນາມວ່າ ຂັນທະ ແລະ ບຸດຂອງປຸໂລຫິດຊື່ຕິດສະວ່າ "ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີສະເດັດເຖິງເມືອງພັນທຸມະດີຣາດຊະທານີປະທັບຢູ່ທີ່ມິຄະທາຍະວັນ ຊື່ວ່າ ເຂມະ ມີພຣະປະສົງຈະພົບທ່ານທັງສອງ"

ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນ ຄົນເຝົ້າສວນ ທູນຮັບພຣະສະໜອງພຣະດຳຣັດແລ້ວໄດ້ເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີຂາບທູນແກ່ພຣະຣາດຊະໂອຣົດພຣະນາມວ່າ ຂັນທະ ແລະ ບອກບຸດປຸໂລຫິດຊື່ຕິດສະແນວນີ້ວ່າ "ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ໄດ້ສະເດັດເຖິງເມືອງພັນທຸມະດີຣາດຊະທານີ ປະທັບຢູ່ທີ່ມິຄະທາຍະວັນຊື່ວ່າເຂມະມີພຣະປະສົງຈະພົບທ່ານທັງສອງ"

[໗໔] ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນ ພຣະຣາດຊະໂອຣົດພຣະນາມວ່າ ຂັນທະ ແລະບຸດປຸໂລຫິດຊື່ ຕິດສະ ສັ່ງໃຫ້ບຸຣຸດກະກຽມຍານພາຫະນະຄັນງາມ ໆ ໃຫ້ແລ້ວຂຶ້ນຍານພາຫະນະຄັນງາມນັ້ນ ອອກຈາກເມືອງພັນທຸມະດີຣາດຊະທານີພ້ອມກັບຍານພາຫະນະຄັນງາມ ໆ ຕິດຕາມອີກຫຼາຍຄັນ ຂັບກົງໄປສູ່ມິຄະທາຍະວັນ ຊື່ວ່າ ເຂມະ ຈົນສຸດທາງທີ່ຍານພາຫະນະຈະເຂົ້າໄປໄດ້ແລ້ວ ລົງຈາກຍານຍ່າງກົງເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ເຖິງບ່ອນປະທັບຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນແກ່ຕົນ

[๓๔] พระผู้มีพระพาภ อะระหันตะ สำมาสำพุดทะเจ้าวิปัดสี ได้ตัดอะนุปุบพิกะถา แก่พระราดชะโอรดพระนามว่าขันทะ และ บุดปุโลหิดชื่ติดสะนั้น คือ ชົງປະກາດ

๑. ทานะกะถา (เลื่องทาน)
๒. สีละกะถา (เลื่องสีน)
๓. สักคะกะถา (เลื่องสะหวัน)
๔. กามาทีนะวะกะถา (เลื่องโทดความต่ำช้าความเส้าหมองแห่งกาม)
๕. เนกขัมมานิสังสะกะถา (เลื่องอานิสงแห่งการออกจากกาม)

เมื่อพระผู้มีพระพาภเจ้า ซົງฮู้ว่า พระราดชะโอรดพระนามว่า ขันทะ และ บุดปุโลหิดชื่ ติดสะ มีจิดควนบันลุทำ อ่อนโยน ปาสะจากนิวอน เบิกบาน ผ่องใสยู่ จึ่งชົງປະກາດสามุกกังสิกะทำมะเทดสะนา ของพระพุดทะเจ้าทั้งหลายขึ้นมาสะแดง คือ ทุก สะมุไท นิโรด มัก ทำมะจักขุปาสะจากทุลิ ปาสะจากมົນທິນได้เกิดขึ้นแก่พระราดชะโอรดพระนามว่า ขันทะ และ บุดปุโลหิดชื่ ติดสะ ในอาสะนะนั้นว่า "สิ่งใดสิ่งหนึ่งมีความ เกิดขึ้นเป็นทำมะดา สิ่งนั้น ทั้งปวงมีความดับไปเป็นทำมะดา" คือ ผ้าขาวสะอาดปาสะจากมົນທິນ ควนรับการย้อมน้ำสีได้เป็นย่างดี

[๓๕] พระราดชะโอรดพระนามว่าขันทะ และ บุดปุโลหิดชื่ติดสะเห็นทำแล้ว บันลุทำแล้ว ฮู้ทำแล้ว ใจปักลົງสู่ทำแล้ว หมົດความສົງໄສแล้ว ปาสะจากความສົງໄສ ใจเถິງความเป็นผู้แก่ก้า บ่ต้องเชื่อผู้อื่นในคำสอนของพระสาดสะดาอีกต่ไป ได้ขาบทູນพระพระผู้มีพระพาภ อะระหันตะ สำมาสำพุดทะเจ้าวิปัดสีว่า

"ข้าแด่ พระอົງผู้จะเลີນ พระพาสิดของพระผู้มีพระพาภเจ้า ชัดแจ้ง ม่อนหลาย ข้าแด่ พระอົງผู้จะเลີນ พระพาสิดของพระผู้มีพระพาภเจ้า ชัดแจ้ง ม่อนหลาย พระผู้มีพระพาภเจ้า ປະກາດทำชัดแจ้งโดยປະການต่าງ ๆ ປຽບคือ บุກຄົນหงายของที่ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງທັງສອງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳເປັນສະຣະນະ ແລະ ຂໍໃຫ້ຂ້າພຣະອົງທັງສອງເພິ່ງໄດ້ຮັບການບັນພະຊາ ເພິ່ງໄດ້ຮັບການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແດ່ເທີ້ນ ຂ້ານ້ອຍ"

[໓໖] ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນແລ ພຣະຣາດຊະໂອຣົດພຣະນາມວ່າ ຂັນທະແລະ ບຸດປຸໂລຫິດຊື່ຕິດສະໄດ້ຮັບການບັນພະຊາ ແລະ ອຸປະສົມບົດໃນສຳນັກຂອງພຣະພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ພຣະອົງຊົງຊີ້ແຈ່ງໃຫ້ພິກຂຸທັງສອງນັ້ນ ເຫັນ

ຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສົດຊື່ນ ເບີກບານ ດ້ວຍທຳມີກະຖາ ແລ້ວຊົງປະກາດໂທດຄວາມຕ່ຳຊ້າຄວາມເສົ້າໝອງຂອງສັງຂານ ແລະ ອານິສົງໃນນິບພານ ຈິດຂອງພຣະຣາດຊະໂອຣົດພຣະນາມວ່າຂັນທະ ແລະບຸດປຸໂລຫິດຊື່ ຕິດສະ ອັນພຣະວິປັດສີພຸດທະເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປ ປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສົດຊື່ນ ເບີກບານ ດ້ວຍທຳມີກະຖາ ບໍ່ດົນກໍຫຼຸດ ພົ້ນຈາກອາສະວະທັງຫຼາຍເພາະການບໍ່ຖືໝັ້ນ

## ມະຫາຊົນອອກບວດ

[໗໘] ດູຣາ ພິກຂຸທັງຫຼາຍ ໄດ້ຍິນມາວ່າ ມະຫາຊົນໃນເມືອງພັນທຸມະດີຣາດຊະທານີ ມີປະມານ ໘໔,໐໐໐ ຄົນໄດ້ຮູ້ຂ່າວມາວ່າ “ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະ ເຈົ້າວິປັດສີ ສະເດັດເຖິງເມືອງພັນທຸມະດີປະທັບຢູ່ທີ່ມິຄະທາຍະວັນ ຊື່ວ່າ ເຂມະ ພຣະຣາດຊະ ໂອຣົດພຣະນາມວ່າ ຂັນທະ ແລະ ບຸດປຸໂລຫິດຊື່ຕິດສະໄດ້ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາ ວະພັດອອກຈາກພຣະຣາດຊະວັງ ແລະ ເຮືອນໄປບວດເປັນບັນພະຊິດໃນສຳນັກພຣະຜູ້ມີພຣະ ພາກອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ” ຈຶ່ງຄິດກັນວ່າ “ພຣະທຳວິໄນແລະການບັນພະ ຊາທີ່ພຣະຣາດຊະໂອຣົດພຣະນາມວ່າ ຂັນທະ ແລະ ບຸດປຸໂລຫິດຊື່ຕິດສະໄດ້ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກພຣະຣາດຊະວັງ ແລະ ເຮືອນບວດເປັນບັນພະຊິດນັ້ນ ຄົງຈະ ບໍ່ຕ່ຳຕ້ອຍ ຄົນລະດັບພຣະຣາດຊະໂອຣົດພຣະນາມວ່າ ຂັນທະແລະບຸດປຸໂລຫິດຊື່ ຕິດສະ ແຖ ຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກພຣະຣາດຊະວັງ ແລະ ເຮືອນໄປບວດເປັນ ບັນພະຊິດໄດ້ ເປັນຫຍັງ ພວກເຮົາຈັກບວດແດ່ບໍ່ໄດ້ນໍ້” ມະຫາຊົນທີ່ມີປະມານ ໘໔,໐໐໐ ຄົນ ເຫຼົ່ານັ້ນ ຈຶ່ງຊັກຊວນກັນອອກຈາກເມືອງພັນທຸມະດີຣາດຊະທານີ ໄປສູ່ມິຄະທາຍະວັນ ຊື່ວ່າເຂ ມະເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ເຖິງບ່ອນປະທັບ ຖວາຍອະພິວາດແລ້ວ ໄດ້ນັ່ງຢູ່ບ່ອນທີ່ສົມຄວນຂອງຕົນ

[໗໙] ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີຊົງໄດ້ຕັດອະນຸປຸບພິ ກະຖາແກ່ຊົນເຫຼົ່ານັ້ນ ຄື ຊົງປະກາດ

໑. ທານະກະຖາ

໒. ສີລະກະຖາ

໓. ສັກຄະກະຖາ

໔. ກາມາທີນະວະກະຖາ

໕. ເນກຂັມມານິສັງສະກະຖາ

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຮູ້ວ່າ ຊົນເຫຼົ່ານັ້ນມີຈິດຈະບັນລຸທຳໄດ້ອ່ອນໂຍນປາສະຈາກນິວອນ ເບີກບານຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທສະນາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນໄດ້ເກີດຂຶ້ນແກ່ຊົນ ໗໔,໐໐໐ ເຫຼົ່ານັ້ນ ໃນບ່ອນນັ່ງນັ້ນວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ຄື ກັບຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບການຍ້ອມນ້ຳສີໄດ້ເປັນຢ່າງດີ

[໗໐] ຊົນເຫຼົ່ານັ້ນ ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ທຳແລ້ວ ໃຈປັກລົງສູ່ທຳແລ້ວ ໝົດຄວາມສົງໄສແລ້ວ ປາສະຈາກຄວາມສົງໄສ ໃຈເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາອີກຕໍ່ໄປ ໄດ້ຂາບທູນພຣະພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດແຈ້ງ ມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດແຈ້ງ ມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງທັງຫຼາຍນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳເປັນສະຣະນະ ແລະ ຂໍໃຫ້ຂ້າພຣະອົງທັງຫຼາຍ ເພິ່ງໄດ້ຮັບການບັນພະຊາ ເພິ່ງໄດ້ຮັບການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແດ່ເທີ້ນ ຂ້ານ້ອຍ"

[໗໑] ມະຫາຊົນປະມານ ໗໔,໐໐໐ ຄົນ ໄດ້ຮັບການບັນພະຊາ ແລະ ອຸປະສົມບົດໃນສຳນັກຂອງພຣະພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ພຣະອົງຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫຼົ່ານັ້ນ ໃຫ້ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສົດຊື່ນ ເບີກບານ ດ້ວຍທຳມີກະຖາ ແລ້ວຊົງປະກາດໂທດຄວາມຕ່ຳຊ້າ ຄວາມເສົ້າໝອງຂອງສັງຂານ ແລະ ອານິສົງໃນນິບພານ ຈິດຂອງພິກຂຸເຫຼົ່ານັ້ນ ອັນພຣະພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສົດຊື່ນ ເບີກບານ ດ້ວຍທຳມີກະຖາ ບໍ່ດົນກໍຫຼຸດພົ້ນຈາກອາສະວະທັງຫຼາຍເພາະການບໍ່ຖືໝັ້ນ

## ບັນພະຊິດລຸ່ນທຳອິດທີ່ບວດຕາມສະເດັດບັນລຸທຳ

[໗໔] ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນ ບັນພະຊິດມີປະມານ ໗໔,໐໐໐ ອົງ ເຫຼົ່ານັ້ນ ໄດ້ຮູ້ຂ່າວວ່າ "ພຣະວິປັດສີພຸດທະເຈົ້າ ສະເດັດເຖິງເມືອງພັນທຸມະດີຣາດຊະທານີ ປະທັບຢູ່ໃນມິຄະທາຍະວັນ ຊື່ວ່າ ເຂມະ ກຳລັງຊົງສະແດງທຳຢູ່" ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນ ບັນພະຊິດມີ

ປະມານ ໗໔,໐໐໐ ອົງ ຈຶ່ງພາກັນໄປສູ່ມິຄະທາຍະວັນ ຊື່ວ່າ ເຂມະ ເມືອງພັນທຸມະດີເຂົ້າໄປເຝົ້າ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ເຖິງບ່ອນປະທັບຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນແກ່ຕົນ

[໗໓] ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີຕັດອະນຸປຸບພິກະຖາ ແກ່ຊົນເຫຼົ່ານັ້ນ ຄື ຊົງປະກາດ

໑. ທານະກະຖາ
໒. ສີລະກະຖາ
໓. ສັກຄະກະຖາ
໔. ກາມາທີນະວະກະຖາ
໕. ເນກຂັມມານິສັງສະກະຖາ

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຮູ້ວ່າຊົນເຫຼົ່ານັ້ນ ມີຈິດຈະບັນລຸທຳໄດ້ອ່ອນໂຍນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທສະນາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນໄດ້ເກີດຂື້ນແກ່ຊົນ ໗໔,໐໐໐ ເຫຼົ່ານັ້ນ ໃນບ່ອນນັ່ງນັ້ນວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂື້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ຄື ກັບຜ້າຂາວສະອາດ ປາສະຈາກມົນທິນຄວນຮັບການຍ້ອມນ້ຳສີໄດ້ເປັນຢ່າງດີ

[໗໔] ບັນພະຊິດເຫຼົ່ານັ້ນ ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ທຳແລ້ວ ໃຈປັກລົງສູ່ທຳແລ້ວ ໝົດຄວາມສົງໄສແລ້ວ ປາສະຈາກຄວາມສົງໄສ ໃຈເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາອີກຕໍ່ໄປ ໄດ້ຂາບທູນພຣະພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າວິປັດສີ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດແຈ້ງ ມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດແຈ້ງ ມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງທັງຫຼາຍນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳເປັນສະຣະນະ ແລະ ຂໍໃຫ້ຂ້າພຣະອົງທັງຫຼາຍ ເພິ່ງໄດ້ຮັບການບັນພະຊາ ເພິ່ງໄດ້ຮັບການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແດ່ເທີ້ນ ຂ້ານ້ອຍ"

[໗໔] ບັນພະຊິດປະມານ ໗໔,໐໐໐ ອົງ ເຫຼົ່ານັ້ນໄດ້ຮັບການບັນພະຊາ ແລະ ອຸປະສົມບົດໃນສຳນັກຂອງພຣະພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ພຣະອົງຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫຼົ່ານັ້ນ ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສົດຊື່ນ ເບີກບານ ດ້ວຍທຳມີກະຖາ ແລ້ວຊົງປະກາດໂທດຄວາມຕ່ຳຊ້າ ຄວາມເສົ້າໝອງຂອງສັງຂານ ແລະ ອານິສົງໃນນິບພານ ຈິດຂອງພິກຂຸເຫຼົ່ານັ້ນ ອັນພຣະພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ ບໍ່ດົນກໍຫຼຸດພົ້ນຈາກອາສະວະທັງຫຼາຍເພາະການບໍ່ຖືໝັ້ນ

## ຊົງສົ່ງສາວົກໄປປະກາດພຣະສາດສະໜາ

[໗໕] ດູຣາ ພິກຂຸທັງຫຼາຍ ສະໄໝນັ້ນ ມີພິກຂຸຢູ່ປະມານ ໑໖໘,໐໐໐ ອົງໃນເມືອງພັນທຸມະດີຣາດຊະທານີ ໃນຄັ້ງນັ້ນແລ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີປະທັບຫຼີບຫຼີກຢູ່ໃນບ່ອນສະຫງັດໄດ້ມີພຣະຮ່ຳເພິງແນວນີ້ວ່າ "ເວລານີ້ໃນເມືອງພັນທຸມະດີມີພິກຂຸສົງຢູ່ຈຳນວນຫຼາຍເຖິງ ໑໖໘,໐໐໐ ອົງ ທາງທີ່ດີເຮົາຄວນປະກາດໃຫ້ພິກຂຸທັງຫຼາຍຮູ້ທົ່ວກັນວ່າ

"ດູຣາ ພິກຂຸທັງຫຼາຍ ພວກທ່ານ ຈົ່ງຈາຣິກໄປເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ແຕ່ຢ່າໄປທາງດຽວກັນ ໒ ອົງ ຈົ່ງສະແດງທຳມີຄວາມງາມໃນເບື້ອງຕົ້ນມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຈົ່ງປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ອັນບໍລິສຸດບໍລິບູນໃຫ້ຄົບຖ້ວນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງ ສັດເຫຼົ່ານັ້ນຈະເສື່ອມເພາະບໍ່ໄດ້ຟັງທຳ ເຫຼົ່າສັດຜູ້ທີ່ສາມາດຈະຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ແຕ່ເມື່ອເວລາລ່ວງໄປທຸກ ໆ ໖ ປີ ທ່ານທັງຫຼາຍຄວນກັບມາຍັງເມືອງພັນທຸມະດີຣາດຊະທານີ ເພື່ອສະແດງພຣະປາຕິໂມກ"

[໗໖] ດູຣາ ພິກຂຸທັງຫຼາຍ ຄັ້ງນັ້ນແລ ທ້າວມະຫາພົມ ອົງໜຶ່ງ ຮູ້ພຣະຮ່ຳເພິງຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ດ້ວຍໃຈ ໄດ້ຫາຍໂຕຈາກພົມມະໂລກມາຜາກົດຢູ່ສະເພາະພຣະພັກຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີປຽບເໝືອນ ບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ທ້າວມະຫາພົມນັ້ນ ຫົ່ມຜ້າບ່ຽງບ່າ ປະນົມມືນ້ອມຫັນໄປທາງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີໄດ້ ຂາບທູນແນວນີ້ວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າເລື້ອງນີ້ເປັນແນວນັ້ນ ເວລານີ້ໃນເມືອງພັນທຸມະດີຣາດຊະທານີມີພິກຂຸສົງຢູ່ຈຳນວນຫຼາຍເຖິງ ໑໖໘,໐໐໐ ອົງ ຂໍພຣະອົງໂຜດຊົງອະນຸຍາດພິກຂຸທັງຫຼາຍເຫຼົ່ານັ້ນວ່າ "ດູຣາ ພິກຂຸທັງຫຼາຍ

ພວກທ່ານຈົ່ງຈາຣິກໄປເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ແຕ່ຢ່າໄປທາງດຽວກັນ ໒ ອົງ ຈົ່ງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຈົ່ງປະກາດພົມມະຈັນ ພ້ອມທັງອັດຖະ ແລະ ພະຍັນຊະນະ ອັນບໍລິສຸດບໍລິບູນໃຫ້ຄົບຖ້ວນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງ ສັດເຫຼົ່ານັ້ນຈະເສື່ອມເພາະບໍ່ໄດ້ຟັງທຳ ເຫຼົ່າສັດຜູ້ທີ່ສາມາດຈະຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ແຕ່ເມື່ອເວລາລ່ວງໄປທຸກ ໆ ໖ ປີ ທ່ານທັງຫຼາຍຄວນກັບມາຍັງເມືອງພັນທຸມະດີຣາດຊະທານີ ເພື່ອສະແດງພຣະປາຕິໂມກ" ຂ້ານ້ອຍ"

ເມື່ອທ້າວມະຫາພົມຂາບທູນແນວນີ້ແລ້ວ ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ທຳປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

[໗໗] ດູຣາ ພິກຂຸທັງຫຼາຍ ຄັນເຖິງຍາມແລງມາ ພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າວິປັດສີ ສະເດັດອອກຈາກທີ່ຫຼີບຫຼີກ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາພິກຂຸທັງຫຼາຍ ເຮົາໄດ້ຫຼີບຫຼີກຢູ່ໃນບ່ອນສະຫງັດ ໄດ້ມີຄວາມຮ່ຳເພິງແນວນີ້ວ່າ "ເວລານີ້ໃນເມືອງພັນທຸມະດີຣາດຊະທານີ ມີພິກຂຸສົງຢູ່ຈຳນວນຫຼາຍເຖິງ ໑໖໘,໐໐໐ ອົງ ທາງທີ່ດີເຮົາຄວນປະກາດໃຫ້ພິກຂຸທັງຫຼາຍຮູ້ທົ່ວກັນວ່າ "ດູຣາ ພິກຂຸທັງຫຼາຍ ພວກທ່ານ ຈົ່ງຈາຣິກໄປເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ແຕ່ຢ່າໄປທາງດຽວກັນ ໒ ອົງ ຈົ່ງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຈົ່ງປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະອັນບໍລິສຸດບໍລິບູນໃຫ້ຄົບຖ້ວນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງສັດເຫຼົ່ານັ້ນ ຈະເສື່ອມເພາະບໍ່ໄດ້ຟັງທຳ ເຫຼົ່າສັດຜູ້ທີ່ສາມາດຈະຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ແລະ ເມື່ອເວລາລ່ວງໄປທຸກ ໆ ໖ ປີ ທ່ານທັງຫຼາຍຄວນກັບມາຍັງເມືອງພັນທຸມະດີຣາດຊະທານີ ເພື່ອສະແດງພຣະປາຕິໂມກ"

ຕໍ່ມາ ທ້າວມະຫາພົມອົງໜຶ່ງ ຮູ້ຄວາມຮ່ຳເພິງຂອງເຮົາດ້ວຍໃຈ ໄດ້ຫາຍໂຕຈາກພົມມະໂລກ ມາຜາກົດຢູ່ສະເພາະພຣະພັກຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ປຽບເໝືອນ ບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ທ້າວມະຫາພົມນັ້ນຫົ່ມຜ້າບ່ຽງບ່າປະນົມມືນ້ອມຫັນໄປທາງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ ໄດ້ຂາບທູນແນວນີ້ວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າເລື້ອງນີ້ເປັນແນວນັ້ນ ເວລານີ້ໃນເມືອງພັນທຸມະດີຣາດຊະທານີມີພິກຂຸສົງຢູ່ຈຳນວນຫຼາຍເຖິງ ໑໖໘,໐໐໐ ອົງ ຂໍພຣະອົງໂຜດຊົງອະນຸຍາດພິກຂຸທັງຫຼາຍເຫຼົ່ານັ້ນວ່າ "ດູຣາ ພິກຂຸທັງຫຼາຍ ພວກທ່ານ ຈົ່ງຈາຣິກໄປເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ

ເພື່ອອະນຸເຄາະຊາວໂລກ ເພື່ອປະ ໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ແຕ່ຢ່າໄປທາງດຽວກັນ ໒ ອົງ ຈົ່ງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຈົ່ງປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ອັນບໍລິສຸດບໍລິບູນໃຫ້ຄົບຖ້ວນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງ ສັດເຫຼົ່ານັ້ນ ຈະເສື່ອມເພາະບໍ່ໄດ້ຟັງທຳ ເຫຼົ່າສັດຜູ້ທີ່ສາມາດຈະຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ແຕ່ເມື່ອເວລາລ່ວງໄປທຸກໆ ໖ ປີ ທ່ານທັງຫຼາຍຄວນກັບມາຍັງເມືອງພັນທຸມະດີຣາດຊະທານີເພື່ອສະແດງພຣະປາຕິໂມກ" ຂ້ານ້ອຍ"

ເມື່ອທ້າວມະຫາພົມນັ້ນໄດ້ກ່າວແນວນີ້ແລ້ວ ຈຶ່ງຖວາຍອະພິວາດເຮົາ ທຳປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

ດູຣາ ພິກຂຸທັງຫຼາຍ ເຮົາປະກາດໃຫ້ຮູ້ທົ່ວກັນວ່າ "ດູຣາ ພິກຂຸທັງຫຼາຍ ພວກທ່ານຈົ່ງຈາຣິກໄປເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ແຕ່ຢ່າໄປທາງດຽວກັນ ໒ ອົງ ຈົ່ງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຈົ່ງປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະອັນບໍລິສຸດບໍລິບູນໃຫ້ຄົບຖ້ວນ ໃນໂລກນີ້ຍັງມີເຫຼົ່າສັດຜູ້ມີທຸລີໃນໜ່ວຍຕາເບົາບາງ ສັດເຫຼົ່ານັ້ນ ຈະເສື່ອມເພາະບໍ່ໄດ້ຟັງທຳ ເຫຼົ່າສັດຜູ້ທີ່ສາມາດຈະຮູ້ທົ່ວເຖິງທຳໄດ້ຍັງມີຢູ່ ແຕ່ເມື່ອເວລາລ່ວງໄປທຸກ ໆ ໖ ປີ ທ່ານທັງຫຼາຍ ຄວນກັບມາຍັງເມືອງພັນທຸມະດີຣາດຊະທານີເພື່ອສະແດງພຣະປາຕິໂມກ"

ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນ ພວກພິກຂຸ ໄດ້ຈາຣິກໄປຕາມຊົນນະບົດມື້ດຽວກັນເລີຍ

[໗໙] ສະໄໝນັ້ນ ໃນຊົມພູທະວີບມີອາວາດຢູ່ ໘໔,໐໐໐ ແຫ່ງ ເມື່ອເວລາລ່ວງໄປ ໑ ປີ ເຫຼົ່າເທວະດາໄດ້ປະກາດວ່າ "ທ່ານຜູ້ມີຣະທຸກທັງຫຼາຍ ເວລາລ່ວງໄປ ໑ ປີ ແລ້ວ ບັດນີ້ຍັງເຫຼືອເວລາ ໕ ປີ ເມື່ອເວລາລ່ວງໄປ ໕ ປີ ພວກທ່ານເພິ່ງເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີ ເພື່ອສະແດງພຣະປາຕິໂມກ"

ເມື່ອເວລາລ່ວງໄປ ໒ ປີ ເຫຼົ່າເທວະດາໄດ້ປະກາດວ່າ "ທ່ານຜູ້ມີຣະທຸກທັງຫຼາຍເວລາລ່ວງໄປ ໒ ປີ ແລ້ວ ບັດນີ້ຍັງເຫຼືອເວລາ ໔ ປີ ເມື່ອເວລາລ່ວງໄປ ໔ ປີ ພວກທ່ານເພິ່ງເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີເພື່ອສະແດງພຣະປາຕິໂມກ"

ເມື່ອເວລາລ່ວງໄປ ໓ ປີ ເຫຼົ່າເທວະດາໄດ້ປະກາດວ່າ "ທ່ານຜູ້ມີຣະທຸກທັງຫຼາຍເວລາລ່ວງໄປ ໓ ປີແລ້ວ ບັດນີ້ຍັງເຫຼືອເວລາ ໓ ປີເມື່ອເວລາລ່ວງໄປ ໓ ປີ ພວກທ່ານເພິ່ງເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີເພື່ອສະແດງພຣະປາຕິໂມກ"

ເມື່ອເວລາລ່ວງໄປ ໔ ປີ ເຫຼົ່າເທວະດາໄດ້ປະກາດວ່າ "ທ່ານຜູ້ນິຣະທຸກທັງຫຼາຍເວລາລ່ວງໄປ ໔ ປີແລ້ວ ບັດນີ້ຍັງເຫຼືອເວລາ ໒ ປີ ເມື່ອເວລາລ່ວງໄປ ໒ ປີ ພວກທ່ານເພິ່ງເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີເພື່ອສະແດງພຣະປາຕິໂມກ"

ເມື່ອເວລາລ່ວງໄປ ໕ ປີ ເຫຼົ່າເທວະດາໄດ້ປະກາດວ່າ "ທ່ານຜູ້ນິຣະທຸກທັງຫຼາຍເວລາລ່ວງໄປ ໕ ປີ ແລ້ວ ບັດນີ້ຍັງເຫຼືອເວລາ ໑ ປີ ເມື່ອເວລາລ່ວງໄປ ໑ ປີ ພວກທ່ານເພິ່ງເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີເພື່ອສະແດງພຣະປາຕິໂມກ"

ເມື່ອເວລາລ່ວງໄປ ໖ ປີ ເຫຼົ່າເທວະດາໄດ້ປະກາດວ່າ "ທ່ານຜູ້ນິຣະທຸກທັງຫຼາຍເວລາລ່ວງໄປ ໖ ປີແລ້ວ ບັດນີ້ເຖິງເວລາແລ້ວ ພວກທ່ານເພິ່ງເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີເພື່ອສະແດງພຣະປາຕິໂມກ"

ໃນຄັ້ງນັ້ນ ພິກຂຸເຫຼົ່ານັ້ນ ລາງພວກເດີນທາງໄປດ້ວຍລິດດ້ວຍອານຸພາບຂອງຕົນ ລາງພວກເດີນທາງໄປດ້ວຍລິດດ້ວຍອານຸພາບຂອງເທວະດາ ພຽງແຕ່ວັນດຽວທໍ່ນັ້ນໄດ້ພາກັນເຂົ້າໄປສູ່ເມືອງພັນທຸມະດີຣາດຊະທານີ ເພື່ອສະແດງພຣະປາຕິໂມກ

## ຊົງສະແດງພຣະໂອວາດປາຕິໂມກ

[໙໐] ດູຣາ ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະສໍາມາສໍາພຸດທະເຈົ້າວິປັດສີຊົງສະແດງປາຕິໂມກໃນທີ່ປະຊຸມສົງ ທີ່ເມືອງພັນທຸມະດີຣາດຊະທານີນັ້ນດັ່ງນີ້ວ່າ

"ຄວາມອົດທົນຄືຄວາມອົດກັ້ນເປັນຕະບະຢ່າງຍິ່ງ
ພຣະພຸດທະເຈົ້າທັງຫຼາຍຕັດວ່ານິບພານເປັນບໍຣົມມະທໍາ
ຜູ້ທໍາຮ້າຍຜູ້ອື່ນບໍ່ຊື່ວ່າເປັນບັນພະຊິດ
ຜູ້ບຽດບຽນຜູ້ອື່ນບໍ່ຊື່ວ່າເປັນສະມະນະ
ການບໍ່ທໍາບາບທັງປວງ
ການເຮັດກຸສົນໃຫ້ເຖິງພ້ອມ
ການເຮັດຈິດຂອງຕົນໃຫ້ຜ່ອງແຜ້ວ
ນີ້ຄືຄໍາສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ການບໍ່ກ່າວຮ້າຍຜູ້ອື່ນ
ການບໍ່ບຽດບຽນຜູ້ອື່ນ
ຄວາມສັງລວມໃນປາຕິໂມກ
ຄວາມເປັນຜູ້ຮູ້ຈັກປະມານໃນອາຫານ

ການຢູ່ໃນເສນາສະນະທີ່ສະຫງັດ
ການປະກອບຄວາມພຽນໃນອະທິຈິດ
ນີ້ຄືຄໍາສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ"

## ຄໍາຂາບທູນຂອງເທວະດາ

[໙໑] ດູຣາ ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາຢູ່ທີ່ກ້ອງຕົ້ນຣາຊະສາລະໃນປ່າສຸພະຄະ ເມືອງອຸກກັດຖະ ຂະນະທີ່ເຮົານັ້ນຫຼີບຫຼີກຢູ່ໃນບ່ອນສະຫງັດໄດ້ມີຄວາມຄຶດແນວນີ້ວ່າ "ເທວະໂລກຊັ້ນສຸດທາ ວາດທີ່ເຮົາບໍ່ເຄີຍຢູ່ມາເລີຍຕະຫຼອດກາລະນານນີ້ ບໍ່ແມ່ນໃຜ ໆ ຈະເຂົ້າເຖິງໄດ້ໂດຍງ່າຍ ຍົກເວັ້ນເຫຼົ່າເທບຊັ້ນສຸດທາວາດ ທາງທີ່ດີເຮົາຄວນໄປຫາເຫຼົ່າເທບຊັ້ນສຸດທາວາດເຫຼົ່ານັ້ນ" ຈຶ່ງໄດ້ຫາຍໂຕໄປຈາກກ້ອງຕົ້ນຣາຊະສາລະນັ້ນ ໄປຜາກົດໂຕທ່າມກາງເຫຼົ່າເທບຊັ້ນອະວິຫາຢ່າງວ່ອງໄວ ຄື ບຸຣຸດຜູ້ມີກໍາລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ໃນໝູ່ເທບນັ້ນມີເທວະດາເປັນຈໍານວນຫຼວງຫຼາຍ ຫຼາຍຮ້ອຍຫຼາຍພັນ ເຂົ້າມາຫາເຮົາອະພິວາດແລ້ວຢືນຢູ່ໃນບ່ອນສົມຄວນ ໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ນັບຈາກກັບນີ້ຖອຍຫຼັງໄປ ໙໑ ກັບພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າວິປັດສີ ໄດ້ສະເດັດອຸບັດຂຶ້ນໃນໂລກ ມີພຣະຊາດເປັນກະສັດໄດ້ສະເດັດອຸບັດຂຶ້ນໃນຕະກູນກະສັດ ມີພຣະໂຄດວ່າໂກນທັນຍະ ມີພຣະຊົນມາຍຸປະມານ ໘໐,໐໐໐ ປີ ຕັດສະຣູ້ຢູ່ກ້ອງຕົ້ນແຄຝອຍ ຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນໄດ້ແກ່ ພຣະຂັນຖະ ແລະ ພຣະຕິດສະ ມີການປະຊຸມພຣະສາວົກ ໓ ເທື່ອເທື່ອທີ ໑ ມີພິກຂຸ ໑໖໘,໐໐໐ ອົງ ເທື່ອທີ ໒ ມີພິກຂຸ ໑໐໐,໐໐໐ ອົງ ເທື່ອທີ ໓ ມີພິກຂຸ ໘໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມທັງ ໓ ເທື່ອ ລ້ວນແຕ່ ເປັນພຣະຂີນາສົບ ມີພິກຂຸອະໂສກະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ມີພຣະເຈົ້າພັນທຸມາເປັນພຣະບິດາ ພຣະນາງພັນທຸມະດີເທວີເປັນພຣະມານດາຜູ້ໃຫ້ກໍາເນີດ ເມືອງພັນທຸມະດີເປັນຣາດຊະທານີຂອງພຣະເຈົ້າພັນທຸມາການສະເດັດອອກມະຫາພິເນດສະກົມຂອງພຣະອົງເປັນແນວນີ້ ການບັນພະຊາຂອງພຣະອົງເປັນແນວນີ້ ການພໍ່າເພັງພຽນຂອງພຣະອົງເປັນແນວນີ້ ການຕັດສະຣູ້ຂອງພຣະອົງເປັນແນວນີ້ການສະແດງທໍາມະຈັກຂອງພຣະອົງເປັນແນວນີ້ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າວິປັດສີ ຄາຍຄວາມກໍາໜັດຍິນດີໃນກາມຈຶ່ງໄດ້ມາເກີດໃນບ່ອນນີ້"

ໃນໝູ່ເທບນັ້ນ ມີເທວະດາເປັນຈໍາຫຼວງຫຼາຍ ຫຼາຍຮ້ອຍ ຫຼາຍພັນ ເຂົ້າມາຫາເຮົາເຖິງບ່ອນຢູ່ອະພິວາດແລ້ວຢືນຢູ່ບ່ອນສົມຄວນ ໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກນັບຈາກກັບນີ້ຖອຍຫຼັງໄປ ໓໑ ກັບ ພຣະສິຂີພຸດທະເຈົ້າໄດ້ສະເດັດອຸບັດຂຶ້ນໃນໂລກ ฯລฯ

ພວກຂ້າພຣະອົງປະພຶດພົມມະຈັນໃນພຣະສິຂີພຸດເຈົ້າ ຄາຍຄວາມກໍາໜັດຍິນດີໃນກາມຈຶ່ງໄດ້ມາເກີດໃນບ່ອນນີ້ໃນກັບທີ່ ໓໑ ນັ້ນເອງ ພຣະເວດສະພູພຸດທະເຈົ້າໄດ້ສະເດັດອຸບັດຂຶ້ນໃນ

ໂລກແລະ ຯລຯ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະເວດສະພູພຸດທະເຈົ້າ ຄາຍຄວາມກຳໜັດຍິນດີໃນກາມ ຈຶ່ງໄດ້ມາເກີດໃນບ່ອນນີ້ໃນພັດທະກັບນີ້ເອງ ພຣະກະກຸສັນທະພຸດທະເຈົ້າ ພຣະໂກນາຄະມະນະພຸດທະເຈົ້າ ພຣະກັດສະປະພຸດທະເຈົ້າໄດ້ສະເດັດອຸບັດຂຶ້ນໃນໂລກ ແລະ ຯລຯ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະກະກຸສັນທະພຸດທະເຈົ້າ ພຣະໂກນາຄະມະນະພຸດທະເຈົ້າ ພຣະກັດສະປະພຸດທະເຈົ້າ ຄາຍຄວາມກຳໜັດຍິນດີໃນກາມຈຶ່ງໄດ້ມາເກີດໃນບ່ອນນີ້

ໃນໝູ່ເທບນັ້ນມີເທວະດາເປັນຈຳນວນຫຼວງຫຼາຍ ຫຼາຍຮ້ອຍ ຫຼາຍພັນ ເຂົ້າມາຫາເຮົາເຖິງບ່ອນຢູ່ ອະພິວາດແລ້ວຢືນຢູ່ຢູ່ບ່ອນສົມຄວນໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ໃນພັດທະກັບນີ້ເອງ ບັດນີ້ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າໄດ້ສະເດັດອຸບັດຂຶ້ນໃນໂລກ ມີພຣະຊາດເປັນກະສັດ ໄດ້ສະເດັດອຸບັດຂຶ້ນໃນຕະກູນກະສັດ ມີພຣະໂຄດວ່າ ໂຄຕະມະ ມີພຣະຊົນມາຍຸພຽງເລັກໜ້ອຍ ຜູ້ທີ່ມີອາຍຸໄດ້ຍືນຍາວກໍພຽງ ໑໐໐ ປີ ຫຼືເກີນກວ່ານັ້ນກໍບໍ່ຫຼາຍ ໄດ້ຕັດສະຣູ້ຢູ່ກ້ອງຕົ້ນອັດສັດຖະ ຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ຈະເລີນໄດ້ແກ່ພຣະສາຣີບຸດ ແລະ ພຣະໂມກຄັນລານະ ມີການປະຊຸມພຣະສາວົກເທື່ອດຽວ ມີພິກຂຸ ໑,໒໕໐ ອົງ ພຣະສາວົກທີ່ເຂົ້າຮ່ວມປະຊຸມລ້ວນແຕ່ເປັນພຣະຂີນາສົບ ມີພິກຂຸອານົນເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ມີພຣະເຈົ້າສຸດໂທທະນະເປັນພຣະບິດາ ພຣະນາງມາຍາເທວີເປັນພຣະມານດາຜູ້ໃຫ້ກຳເນີດ ມີເມືອງກະບິນລະພັດເປັນຣາດຊະທານີ ການສະເດັດອອກມະຫາພິເນດສະກົມຂອງພຣະອົງເປັນແນວນີ້ ການບັນພະຊາຂອງພຣະອົງເປັນແນວນີ້ ການພ່ຳເພັງພຽນຂອງພຣະອົງເປັນແນວນີ້ ການຕັດສະຣູ້ຂອງພຣະອົງເປັນແນວນີ້ ການສະແດງທຳມະຈັກຂອງພຣະອົງເປັນແນວນີ້ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ຄາຍຄວາມກຳໜັດຍິນດີໃນກາມ ຈຶ່ງໄດ້ມາເກີດໃນບ່ອນນີ້"

[໖໔] ດູຣາ ພິກຂຸທັງຫຼາຍ ລຳດັບນັ້ນ ເຮົາພ້ອມກັບເຫຼົ່າເທບຊັ້ນອະວິຫາ ໄດ້ເຂົ້າໄປຫາເຫຼົ່າເທບຊັ້ນອະຕັບປາເຖິງທີ່ຢູ່ ຯລຯ

ເຮົາພ້ອມກັບເຫຼົ່າເທບຊັ້ນອະວິຫາ ແລະ ຊັ້ນອະຕັບປາໄດ້ເຂົ້າໄປຫາເຫຼົ່າເທບຊັ້ນສຸທັດສາເຖິງທີ່ຢູ່ ຯລຯ

ເຮົາພ້ອມກັບເຫຼົ່າເທບຊັ້ນອະວິຫາ ຊັ້ນອະຕັບປາ ແລະ ຊັ້ນສຸທັດສາ ໄດ້ເຂົ້າໄປຫາເຫຼົ່າເທບຊັ້ນສຸທັດສີເຖິງທີ່ຢູ່ ຯລຯ

ຄັ້ງນັ້ນ ເຮົາພ້ອມກັບເຫຼົ່າເທບຊັ້ນອະວິຫາ ຊັ້ນອະຕັບປາ ຊັ້ນສຸທັດສາ ແລະ ຊັ້ນສຸທັດສີໄດ້ເຂົ້າໄປຫາເຫຼົ່າເທບ ຊັ້ນອະກະນິດຖາເຖິງບ່ອນຢູ່ໃນໝູ່ເທບນັ້ນ ມີເທວະດາເປັນຈຳນວນຫຼວງຫຼາຍ ຫຼາຍຮ້ອຍ ຫຼາຍພັນ ເຂົ້າມາຫາເຮົາເຖິງບ່ອນຢູ່ອະພິວາດແລ້ວຢືນຢູ່ບ່ອນສົມຄວນ

ເທວະດາເຫຼົ່ານັ້ນ ໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ມີຣະທຸກນັບຈາກກັບນີ້ຖອຍຫຼັງໄປ ໗໑ ກັບ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າວິປັດສີ

ໄດ້ສະເດັດອຸບັດຂຶ້ນໃນໂລກ ມີພຣະຊາດເປັນກະສັດ ໄດ້ສະເດັດອຸບັດຂຶ້ນໃນຕະກູນກະສັດມີພຣະໂຄດວ່າໂກນທັນຍະ ມີພຣະຊົນມາຍຸປະມານ ໘໐,໐໐໐ ປີ ຕັດສະຣູ້ຢູ່ກ້ອງຕົ້ນແຄຝອຍ ຊົງມີຄູ່ພຣະອັກຄະຣະສາວົກເປັນຄູ່ທີ່ຈະເລີນ ໄດ້ແກ່ພຣະຂັນຖະ ແລະ ພຣະຕິດສະ ມີການປະຊຸມພຣະສາວົກ ໓ ເທື່ອ ເທື່ອທີ ໑ ມີພິກຂຸ ໑໖໘,໐໐໐ ອົງ ເທື່ອທີ ໒ ມີພິກຂຸ ໑໐໐, ໐໐໐ ອົງ ເທື່ອທີ ໓ ມີພິກຂຸ ໘໐,໐໐໐ ອົງ ພຣະສາວົກທີ່ເຂົ້າປະຊຸມທັງ ໓ ເທື່ອ ລ້ວນແຕ່ເປັນພຣະຂີນາສົບ ມີພິກຂຸອະໂສກະເປັນອຸປັດຖາກ ເປັນອັກຄະຣະອຸປັດຖາກ ມີພຣະເຈົ້າພັນທຸມາເປັນພຣະບິດາ ພຣະນາງພັນທຸມະດີເທວີເປັນພຣະມານດາ ຜູ້ໃຫ້ກຳເນີດ ເມືອງພັນທຸມະດີເປັນຣາດຊະທານີຂອງພຣະເຈົ້າພັນທຸມາ ການສະເດັດອອກມະຫາພິເນດສະກົມຂອງພຣະອົງເປັນແນວນີ້ ການບັນພະຊາຂອງພຣະອົງເປັນແນວນີ້ ການພ່ຳເພັງພຽນຂອງພຣະອົງເປັນແນວນີ້ ການຕັດສະຣູ້ຂອງພຣະອົງເປັນແນວນີ້ ການສະແດງທຳມະຈັກຂອງພຣະອົງເປັນແນວນີ້ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະວິປັດສີພຸດທະເຈົ້າ ໄດ້ຄາຍຄວາມກຳໜັດຍິນດີໃນກາມ ຈຶ່ງໄດ້ມາເກີດໃນບ່ອນນີ້" ໃນໝູ່ເທບນັ້ນ ມີເທວະດາເປັນຈຳນວນຫຼວງຫຼາຍ ຫຼາຍຮ້ອຍ ຫຼາຍພັນເຂົ້າມາຫາເຮົາເຖິງບ່ອນຢູ່ ອະພິວາດແລ້ວຢືນຢູ່ໃນບ່ອນສົມຄວນໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ນັບຈາກກັບນີ້ຖອຍຫຼັງໄປ ໓໑ ກັບພຣະສິຂີພຸດທະເຈົ້າໄດ້ສະເດັດອຸບັດຂຶ້ນໃນໂລກ ຯລຯ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະສິຂີພຸດທະເຈົ້າ ຄາຍຄວາມກຳໜັດຍິນດີໃນກາມ ຈຶ່ງໄດ້ມາເກີດໃນບ່ອນນີ້"

ໃນໝູ່ເທບນັ້ນ ມີເທວະດາເປັນຈຳນວນຫຼວງຫຼາຍ ຫຼາຍຮ້ອຍ ຫຼາຍພັນ ເຂົ້າມາຫາເຮົາເຖິງບ່ອນຢູ່ອະພິວາດແລ້ວ ຢືນຢູ່ໃນບ່ອນສົມຄວນ ໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກໃນກັບທີ່ ໓໑ ນັ້ນເອງ ພຣະເວດສະພູພຸດທະເຈົ້າ ໄດ້ສະເດັດອຸບັດຂຶ້ນໃນໂລກ ຯລຯ ພວກຂ້າພຣະອົງໄດ້ປະພຶດພົມມະຈັນໃນພຣະເວດສະພູພຸດທະເຈົ້າ ຄາຍຄວາມກຳໜັດຍິນດີໃນກາມ ຈຶ່ງໄດ້ມາເກີດໃນບ່ອນນີ້"

ໃນໝູ່ເທບນັ້ນ ມີເທວະດາເປັນຈຳນວນຫຼວງຫຼາຍ ຫຼາຍຮ້ອຍ ຫຼາຍພັນ ເຂົ້າມາຫາເຮົາເຖິງບ່ອນຢູ່ ອະພິວາດແລ້ວຢືນຢູ່ໃນບ່ອນສົມຄວນໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກໃນພັດທະກັບນີ້ເອງ ພຣະກະກຸສັນທະພຸດທະເຈົ້າ ພຣະໂກນາຄະມະນະພຸດທະເຈົ້າ ພຣະກັດສະປະພຸດ ທະເຈົ້າ ໄດ້ສະເດັດອຸບັດຂຶ້ນໃນໂລກ ຯລຯ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະກະກຸສັນທະພຸດທະເຈົ້າ ພຣະໂກນາຄະມະນະພຸດທະເຈົ້າ ພຣະກັດສະປະພຸດທະເຈົ້າ ຄາຍຄວາມກຳໜັດຍິນດີໃນກາມ ຈຶ່ງໄດ້ມາເກີດໃນບ່ອນນີ້"

[໗໓] ໃນໝູ່ເທບນັ້ນ ມີເທວະດາເປັນຈຳນວນຫຼວງຫຼາຍ ຫຼາຍຮ້ອຍ ຫຼາຍພັນ ເຂົ້າມາຫາເຮົາເຖິງບ່ອນຢູ່ອະພິວາດແລ້ວ ຢືນຢູ່ໃນບ່ອນສົມຄວນ ໄດ້ກ່າວກັບເຮົາແບບນີ້ວ່າ "ຂ້າແດ່ພຣະອົງ ຜູ້ມີຣະທຸກໃນພັດທະກັບນີ້ເອງ ບັດນີ້ ພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າໄດ້ສະເດັດອຸບັດຂຶ້ນໃນໂລກ ມີພຣະຊາດເປັນກະສັດໄດ້ສະເດັດອຸບັດຂື້ນໃນຕະກູນກະສັດມີພຣະໂຄດວ່າ ໂຄຕະມະ ມີພຣະຊົນມາຍຸບໍ່ຫຼາຍຜູ້ທີ່ມີອາຍຸຍືນຍາວສຸດກໍໄດ້ພຽງແຕ່ ໑໐໐ ປີ ຫຼືເກີນກວ່ານັ້ນກໍບໍ່ຫຼາຍ ໄດ້ຕັດສະຣູ້ຢູ່ກ້ອງຕົ້ນອັດສັດຖະ ຊົງມີຄູ່ອັກຄະຣະສາວົກເປັນຄູ່ທີ່ຈະເລີນໄດ້ແກ່ພຣະ ສາຣີບຸດ ແລະ ພຣະໂມກຄັນລານະ ມີການປະຊຸມພຣະສາວົກເທື່ອດຽວມີພິກຂຸ ໑,໒໕໐ ອົງ ພຣະສາວົກທີ່ເຂົ້າປະຊຸມລ້ວນແຕ່ເປັນພຣະຂີນາສົບ ມີພິກຂຸອານົນເປັນອຸປັດຖາກເປັນອັກຄະຣະອຸປັດຖາກ ມີພຣະເຈົ້າສຸດໂທທະນະເປັນພຣະບິດາ ພຣະນາງມາຍາເທວີເປັນພຣະມານດາຜູ້ໃຫ້ກຳເນີດ ມີເມືອງກະບິນລະພັດເປັນຣາດຊະທານີ ການສະເດັດອອກມະຫາ ພິເນດສະກົມຂອງພຣະອົງເປັນແບບນີ້ ການບັນພະຊາຂອງພຣະອົງເປັນແບບນີ້ການ ພໍ່າເພັງພຽນຂອງພຣະອົງເປັນແບບນີ້ ການຕັດສະຣູ້ຂອງພຣະອົງເປັນແບບນີ້ ການສະແດງທຳມະຈັກຂອງພຣະອົງເປັນແບບນີ້ ພວກຂ້າພຣະອົງປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ຄາຍຄວາມກຳໜັດຍິນດີໃນກາມ ຈຶ່ງໄດ້ມາເກີດໃນບ່ອນນີ້"

## ຊົງສະຫຼຸບພຣະທຳມະເທສະນາ

[໗໔] ດູຣາ ພິກຂຸທັງຫຼາຍ ເພາະຕະຖາຄົດມີປັນຍາແທງຕະຫຼອດ ທຳມະທາດດັ່ງກ່າວມານັ້ນ ຈຶ່ງເປັນເຫດໃຫ້ລະນຶກເຖິງພຣະພຸດທະເຈົ້າທັງຫຼາຍໃນອະດີດຕະການ ຜູ້ປະຣິນິບພານແລ້ວ ຜູ້ຕັດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ ພຣະອັຄຄະຣະສາວົກ ແລະການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະນາມແບບນີ້ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະໂຄດແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແບບນີ້" ແມ່ນເຫຼົ່າເທວະດາກໍບອກເລື້ອງນັ້ນໃຫ້ຮູ້ ຈຶ່ງເປັນເຫດໃຫ້ລະນຶກເຖິງພຣະພຸດທະເຈົ້າທັງຫຼາຍ ໃນອະດີດຕະການຜູ້ປະຣິນິບພານແລ້ວ ຜູ້ຕັດທຳເຄື່ອງໜ່ວງໃຫ້ຊ້າໄດ້ແລ້ວ ຜູ້ຕັດທາງໄດ້ແລ້ວ ຜູ້ຕັດວັດຕະໄດ້ແລ້ວ ຜູ້ລ່ວງທຸກທັງປວງໄດ້ແລ້ວ ທັງໂດຍພຣະຊາດ ພຣະນາມ ພຣະໂຄດ ພຣະຊົນມາຍຸ ຄູ່ພຣະອັກຄະຣະສາວົກ ແລະ ການປະຊຸມພຣະສາວົກວ່າ "ແມ່ນເພາະເຫດນີ້ ພຣະຜູ້

ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະຊາດແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າ ເຫຼົ່ານັ້ນ ຈຶ່ງມີພຣະນາມແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີພຣະ ໂຄດແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແບບນີ້ ແມ່ນເພາະ ເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກ ເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແບບນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງມີທຳ ເປັນເຄື່ອງຢູ່ແບບນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດ ພົ້ນແບບນີ້" ເມື່ອພຣະຜູ້ມີພຣະພາກເຈົ້າໄດ້ຕັດແບບນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ມະຫາປະທານສູດທີ ໑ ຈົບ**

# ໘. ມະຫານິທານສູດ

## ວ່າດ້ວຍສິ່ງທີ່ເປັນຕົ້ນເຫດໃຫຍ່

## ປະຕິດຈະສະມຸບບາດ[១]

[໙໕] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນນິຄົມຂອງຊາວກຸຣຸຊື່ກຳມາສະທຳມະ ແຄວັນກຸຣຸ ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍ ອະພິວາດແລ້ວນັ່ງໃນບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ "ຂ້າແດ່ພຣະ ອົງຜູ້ຈະເລີນ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດ ປະຕິດຈະສະມຸບບາດນີ້ເປັນທຳທີ່ເລິກເຊິ່ງສຸດຈະ ຄາດຄະເນໄດ້ ແຕ່ເຖິງຈັ່ງຊັ້ນ ກໍຍັງຜາກົດແກ່ຂ້າພຣະອົງຄືກັບວ່າເປັນທຳງ່າຍ ໆ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຢ່າເວົ້າແບບນັ້ນ ອານົນ ຢ່າເວົ້າແບບນັ້ນ ອານົນປະ ຕິດຈະສະມຸບບາດນີ້ ເປັນທຳທີ່ເລິກເຊິ່ງສຸດຈະຄາດຄະເນໄດ້ ກໍເພາະບໍ່ຮູ້ບໍ່ເຂົ້າໃຈ ປະຕິຈັດສະ ມຸບປະບາດນີ້ ໝູ່ສັດທັງຫຼາຍ ຈຶ່ງຫຍຸ້ງຢູ່ຄືຂອດເສັ້ນຝ້າຍຂອງຊ່າງຫູກ ເປັນຂອດນຸງນັງຄືກັບກໍ້ ຝ້າຍ ຄື ຫຍ້າມຸ້ງກະຕ່າຍ ແລະ ຫຍ້າປ້ອງ ບໍ່ສາມາດຂ້າມພົ້ນອະບາຍ[២] ທຸກຄະຕິວິນິບາດ ແລະ ສົງສານໄດ້

[໗໖] ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈ ຊະຣາມໍຣະນະຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈ ຊະຣາ ມໍຣະນະຈຶ່ງມີ" ຄວນຕອບວ່າ "ເພາະຊາດເປັນປັດໄຈ ຊະຣາ ມໍຣະນະຈຶ່ງມີ"

ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈຊາດຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈຊາດຈຶ່ງມີ" ຄວນຕອບວ່າ "ເພາະພົບເປັນປັດໄຈຊາດຈຶ່ງມີ"

ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈພົບຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ" ເພາະຫຍັງເປັນປັດໄຈພົບຈຶ່ງມີ" ຄວນຕອບວ່າ "ເພາະອຸປາທານເປັນປັດໄຈພົບຈຶ່ງມີ"

ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈອຸປາທານຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈອຸປາທານຈຶ່ງມີ" ຄວນຕອບວ່າ "ເພາະຕັນຫາເປັນປັດໄຈອຸປາທານຈຶ່ງມີ"

ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈຕັນຫາຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈຕັນຫາຈຶ່ງມີ" ຄວນຕອບວ່າ "ເພາະເວທະນາເປັນປັດໄຈຕັນຫາຈຶ່ງມີ"

ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈເວທະນາຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈເວທະນາຈຶ່ງມີ" ຄວນຕອບວ່າ "ເພາະຜັດສະເປັນປັດໄຈເວທະນາຈຶ່ງມີ"

ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈຜັດສະຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈຜັດສະຈຶ່ງມີ" ຄວນຕອບວ່າ "ເພາະນາມຮູບເປັນປັດໄຈຜັດສະຈຶ່ງມີ"

ດູຣາ ອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈນາມຮູບຈຶ່ງມີບໍ?" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈນາມຮູບຈຶ່ງມີ" ຄວນຕອບວ່າ "ເພາະວິນຍານເປັນປັດໄຈນາມຮູບ ຈຶ່ງມີ"

ດູຣາອານົນ ເມື່ອຖືກຖາມວ່າ "ເພາະສິ່ງນີ້ເປັນປັດໄຈວິນຍານຈຶ່ງມີບໍ" ຄວນຕອບວ່າ "ມີ" ຖ້າຖາມວ່າ "ເພາະຫຍັງເປັນປັດໄຈວິນຍານຈຶ່ງມີ" ຄວນຕອບວ່າ "ເພາະນາມຮູບເປັນປັດໄຈ ວິນຍານ ຈຶ່ງມີ"

[໙໗] ດູຣາ ອານົນ ດ້ວຍເຫດດັ່ງນີ້ແລ

| | |
|---|---|
| ເພາະນາມຮູບເປັນປັດໄຈ | ວິນຍານຈຶ່ງມີ |
| ເພາະວິນຍານເປັນປັດໄຈ | ນາມຮູບຈຶ່ງມີ |
| ເພາະນາມຮູບເປັນປັດໄຈ | ຜັດສະຈຶ່ງມີ |
| ເພາະຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ເພາະເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ເພາະຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ເພາະອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ເພາະພົບເປັນປັດໄຈ | ຊາດຈຶ່ງມີ |

ເພາະຊາດເປັນປັດໄຈ ຊະຣາ ມໍຣະນະ ໂສກະ ປະຣິເທວະ ທຸກຂະ ໂທມະນັດສະ ແລະອຸປາຍາສະ ຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້ແລ

[໙໘] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ "ເພາະຊາດເປັນປັດໄຈ ຊະຣາ ມໍຣະນະ ຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ຊາດເປັນປັດໄຈ ຊະຣາ ມໍຣະນະຈຶ່ງມີ ດັ່ງຕໍ່ໄປນີ້ ກໍຖ້າຊາດຄືຊາດ ເພື່ອຄວາມເປັນເທບຂອງພວກເທບ ເພື່ອຄວາມເປັນຄົນທັນຂອງພວກຄັນທັບພະ ເພື່ອຄວາມເປັນຍັກຂອງພວກຍັກ ເພື່ອຄວາມເປັນພູຕະຂອງພວກພູຕະ ເພື່ອຄວາມເປັນມະນຸດຂອງພວກມະນຸດ ເພື່ອຄວາມເປັນສັດສີ່ຂາຂອງພວກສັດສີ່ຂາ ເພື່ອຄວາມເປັນສັດປີກຂອງພວກສັດປີກ ເພື່ອຄວາມເປັນສັດເລືອຄານຂອງພວກສັດເລືອຄານ ບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ກໍຖ້າຊາດບໍ່ໄດ້ມີເພື່ອຄວາມເປັນແນວນັ້ນ ຂອງສັບພະສັດພວກນັ້ນ ໆ ເມື່ອຊາດບໍ່ມີໂດຍປະການທັງປວງ ເພາະຊາດດັບໄປ ຊະຣາ ມໍຣະນະ ຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈ ແຫ່ງຊະຣາ ແລະ ມໍຣະນະ ກໍຄືຊາດນັ້ນເອງ

[໙໙] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ "ເພາະພົບເປັນປັດໄຈ ຊາດຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ພົບເປັນປັດໄຈ ຊາດຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າພົບ ຄື ກາມມະພົບ ຮູບປະພົບ ຫຼື ອະຮູບປະພົບ ບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອພົບບໍ່ມີໂດຍປະການທັງປວງ ເພາະພົບດັບໄປ ຊາດຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ “ອານົນເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງຊາດກໍຄືພົບນັ້ນເອງ

[໑໐໐] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ “ເພາະອຸປາທານເປັນປັດໄຈພົບຈຶ່ງມີ” ທ່ານເພິ່ງຮູ້ເຫດທີ່ອຸປາທານເປັນປັດໄຈ ພົບຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າອຸປາທານ ຄື ກາມຸປາທານ (ຄວາມຍຶດໝັ້ນໃນກາມ) ທິດຖຸປາທານ (ຄວາມຍຶດໝັ້ນໃນທິດຖິ) ສີລະພະຕຸປາທານ (ຄວາມຍຶດໝັ້ນໃນສິນພົດ) ຫຼື ອັດຕະວາທຸປາທານ (ຄວາມຍຶດໝັ້ນໃນວາທະວ່າມີອັດຕາ) ບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອອຸປາທານບໍ່ມີໂດຍປະການທັງປວງ ເພາະອຸປາທານດັບໄປ ພົບຈະຜາກົດໄດ້ບໍ?”

ທ່ານພຣະອານົນທູນຕອບວ່າ “ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ “ອານົນເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງພົບກໍຄືອຸປາທານນັ້ນເອງ

[໑໐໑] ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ “ເພາະຕັນຫາເປັນປັດໄຈອຸປາທານຈຶ່ງມີ”ທ່ານເພິ່ງຮູ້ເຫດທີ່ຕັນຫາເປັນປັດໄຈ ອຸປາທານຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າຕັນຫາຄືຣູບຕັນຫາ(ຢາກໄດ້ຮູບ) ສັດທະ ຕັນຫາ (ຢາກໄດ້ສຽງ) ຄັນທະຕັນຫາ (ຢາກໄດ້ກິ່ນ) ຣະສະຕັນຫາ (ຢາກໄດ້ຣົດ) ໂຜດຖັບພະ ຕັນຫາ (ຢາກໄດ້ສຳຜັດ) ແລະ ທຳມະຕັນຫາ (ຢາກໄດ້ທຳມາຣົມ) ບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອຕັນຫາບໍ່ມີໂດຍປະການທັງປວງ ເພາະຕັນຫາດັບໄປອຸປາທານຈະຜາກົດໄດ້ບໍ?”

ທ່ານພຣະອານົນທູນຕອບວ່າ “ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ “ດູຣາ ອານົນເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງອຸປາທານກໍຄືຕັນຫານັ້ນເອງ

[໑໐໔] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ “ເພາະເວທະນາເປັນປັດໄຈຕັນຫາຈຶ່ງມີ” ທ່ານເພິ່ງຮູ້ເຫດທີ່ເວທະນາເປັນປັດໄຈ ຕັນຫາຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າເວທະນາ ຄື ເວທະນາທີ່ເກີດຈາກຈັກຂຸສຳຜັດ ເວທະນາທີ່ເກີດຈາກໂສດສຳຜັດ ເວທະນາທີ່ເກີດຈາກຄານະສຳຜັດເວທະນາທີ່ເກີດຈາກຊິວຫາສຳຜັດ ເວທະນາທີ່ເກີດຈາກກາຍສຳຜັດ ແລະ ເວທະນາທີ່ເກີດຈາກມະໂນສຳຜັດ ບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອເວທະນາບໍ່ມີໂດຍປະການທັງປວງ ເພາະເວທະນາດັບໄປຕັນຫາຈະຜາກົດໄດ້ບໍ?”

ທ່ານພຣະອານົນທູນຕອບວ່າ “ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງຕັນຫາກໍຄືເວທະນານັ້ນເອງ

[໑໐໓] ດູຣາ ອານົນ ດ້ວຍເຫດດັ່ງນີ້ແລ

| | |
|---|---|
| ເພາະອາໄສ ເວທະນາ | ຕັນຫາຈຶ່ງມີ |
| ເພາະອາໄສ ຕັນຫາ | ປະຣິເຍສະນາ (ການສະແຫວງຫາ) ຈຶ່ງມີ |
| ເພາະອາໄສ ປະຣິເຍສະນາ | ລາພະ (ການໄດ້) ຈຶ່ງມີ |
| ເພາະອາໄສ ລາພະ | ວິນິດສະຍະ (ການກຳນົດ) ຈຶ່ງມີ |
| ເພາະອາໄສ ວິນິດສະຍະ | ສັນທະຣາຄະ (ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ) ຈຶ່ງມີ |
| ເພາະອາໄສ ສັນທະຣາຄະ | ອັດໂຊສານະ (ຄວາມໝົກມຸ່ນຝັງໃຈ) ຈຶ່ງມີ |
| ເພາະອາໄສ ອັດໂຊສານະ | ປະຣິຄະຫະ (ການຍຶດຖືຄອບຄອງ) ຈຶ່ງມີ |
| ເພາະອາໄສ ປະຣິຄະຫະ | ມັຈສະຣິຍະ (ຄວາມຂີ້ຖີ່) ຈຶ່ງມີ |
| ເພາະອາໄສ ມັດສະລິຍະ | ອາຣັກຂະ (ຄວາມຫວງກັ້ງ) ຈຶ່ງມີ |

ເພາະອາຣັກຂະເປັນເຫດ ບາບອະກຸສົນທຳເປັນອະເນກຍ່ອມເກີດຂຶ້ນ ຈາກການຖືໄມ້ຄ້ອນ ການຖືສັດຕາ ການຜິດຖຽງ ການຂັດແຍ່ງ ການວິວາດ ການເວົ້າຂຶ້ນສຽງວ່າ "ມຶງມຶງ" ການເວົ້າສັບສໍ່ ແລະ ການເວົ້າຕົວະ ຈຶ່ງມີ

[໑໐໔] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ "ເພາະອາຣັກຂະເປັນເຫດຂອງບາບອະກຸສົນທຳ ເປັນອະເນກປະການຍ່ອມເກີດຂຶ້ນ ຈາກການຖືໄມ້ຄ້ອນ ການຖືສັດຕາ ການຜິດຖຽງຂັດແຍ່ງ ການວິວາດ ການເວົ້າຂຶ້ນສຽງວ່າ "ມຶງມຶງ" ການເວົ້າສັບສໍ່ ແລະ ການເວົ້າຕົວະ" ທ່ານເພິ່ງຮູ້ເຫດທີ່ອາຣັກຂະເປັນເຫດຂອງບາບອະກຸສົນທຳເປັນອະເນກຍ່ອມເກີດຂຶ້ນ ຈາກການຖືໄມ້ຄ້ອນ ການຖືສັດຕາ ການຜິດຖຽງ ການຂັດແຍ່ງ ການວິວາດ ການເວົ້າຂຶ້ນສຽງວ່າ "ມຶງມຶງ" ການເວົ້າສັບສໍ່ ແລະ ການເວົ້າຕົວະ ດັ່ງຕໍ່ໄປນີ້ ດູຣາ ອານົນ ກໍຖ້າອາຣັກຂະບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອອາຣັກຂະບໍ່ມີໂດຍປະການທັງປວງ ເພາະອາຣັກຂະດັບໄປ ບາບອະກຸສົນທຳເປັນອະເນກປະການຈະເກີດຂຶ້ນ ຈາກການຖືໄມ້ຄ້ອນ ການຖືສັດຕາ ການຜິດຖຽງ ການຂັດແຍ່ງ ການວິວາດ ການເວົ້າຂຶ້ນສຽງວ່າ "ມຶງມຶງ" ການເວົ້າສັບສໍ່ ແລະ ການເວົ້າຕົວະໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ເກີດຂຶ້ນບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ແລະ ປັດໄຈແຫ່ງບາບ ອະກຸສົນທຳເປັນອະເນກທີ່ເກີດຂື້ນຈາກການຖືໄມ້ຄ້ອນ ການຖືສັດຕາ ການຜິດຖຽງ ການຂັດແຍ່ງ ການວິວາດ ການເວົ້າຂື້ນສຽງວ່າ "ມຶງມຶງ" ການເວົ້າສັບສໍ່ ແລະ ການເວົ້າຕົວະກໍຄືອາຣັກຂະນັ້ນເອງ

[໑໐໕] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ "ເພາະອາໄສມັດສະຣິຍະ ອາຣັກຂະຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ອາໄສມັດສະຣິຍະ ອາຣັກຂະຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າມັດສະຣິຍະບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອມັດສະຣິຍະບໍ່ມີໂດຍປະການທັງປວງ ເພາະມັດສະຣິຍະດັບໄປອາຣັກຂະຈະຜາກົດໄດ້ບໍ?"

ທ່ານພຣະອານົນ ທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງອາຣັກຂະ ກໍຄືມັດສະຣິຍະນັ້ນເອງ

[໑໐໖] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ "ເພາະອາໄສປະຣິຄະຫະມັດສະຣິຍະຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ອາໄສປະຣິຄະຫະມັດສະຣິຍະຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າປະຣິຄະຫະບໍ່ໄດ້ມີ ແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອປະຣິຄະຫະບໍ່ມີໂດຍປະການທັງປວງ ເພາະປະຣິຄະຫະດັບໄປ ມັດສະຣິຍະຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ "ດູຣາ ອານົນເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງມັດສະຣິຍະ ກໍຄືປະຣິຄະຫະນັ້ນເອງ

[໑໐໗] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ "ເພາະອາໄສອັດໂຊສານະ ປະຣິຄະຫະຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ອາໄສອັດໂຊສານະ ປະຣິຄະຫະຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າອັດໂຊສານະບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອອັດໂຊສານະບໍ່ມີໂດຍປະການທັງປວງ ເພາະອັດໂຊສານະດັບໄປປະຣິຄະຫະຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ອານົນເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດແລະປັດໄຈແຫ່ງປະຣິຄະຫະກໍຄືອັດໂຊສານະນັ້ນເອງ

[໑໐໘] ດູຣາ ອານົນ ຂໍ້ທີ່ເຮົາກ່າວໄວ້ແນວນີ້ວ່າ "ເພາະອາໄສສັນທະຣາຄະ ອັດໂຊສາ

ນະຈຶ່ງມີ” ທ່ານເພິ່ງຮູ້ເຫດທີ່ອາໄສສັນທະຣາຄະ ອັດໄຊສານະຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າສັນທະຣາຄະບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອສັນທະຣາຄະບໍ່ມີໂດຍປະການທັງປວງເພາະສັນທະຣາຄະດັບໄປອັດໄຊສານະຈະຜາກົດໄດ້ບໍ?”

ທ່ານພຣະອານົນທູນຕອບວ່າ “ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ “ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງອັດໄຊສານະກໍຄືສັນທະຣາຄະນັ້ນເອງ

[໑໐໙] ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ “ເພາະອາໄສວິນິດສະຍະສັນທະຣາຄະຈຶ່ງມີ” ທ່ານເພິ່ງຮູ້ເຫດທີ່ອາໄສວິນິດສະຍະສັນທະຣາຄະ ຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າວິນິດສະຍະບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອວິນິດສະຍະບໍ່ມີໂດຍປະການທັງປວງ ເພາະວິນິດສຍະດັບໄປສັນທະຣາຄະຈະຜາກົດໄດ້ບໍ?”

ທ່ານພຣະອານົນທູນຕອບວ່າ “ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ “ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງສັນທະຣາຄະກໍຄືວິນິດສະຍະນັ້ນເອງ

[໑໑໐] ດູຣາ ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ “ເພາະອາໄສລາພະ ວິນິດສະຍະຈຶ່ງມີ” ທ່ານເພິ່ງຮູ້ເຫດທີ່ອາໄສລາພະ ວິນິດສະຍະຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າລາພະບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອລາພະບໍ່ມີໂດຍປະການທັງປວງເພາະລາພະໝົດໄປ ວິນິດສະຍະຈະຜາກົດໄດ້ບໍ?

“ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ “ດູຣາອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງວິນິດສະຍະກໍຄືລາພະນັ້ນເອງ

[໑໑໑] ດູຣາ ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ “ເພາະອາໄສປະຣິເຍສະນາ ລາພະຈຶ່ງມີ” ທ່ານເພິ່ງຮູ້ເຫດທີ່ອາໄສປະຣິເຍສະນາ ລາພະຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າປະຣິເຍສະນາບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອປະຣິເຍສະນາບໍ່ມີໂດຍປະການທັງປວງ ເພາະປະຣິເຍສະນາດັບໄປລາພະຈະຜາກົດໄດ້ບໍ?”

ທ່ານພຣະອານົນທູນຕອບວ່າ “ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງ ລາພະ ກໍຄືປະຣິເຍສະນານັ້ນເອງ

[໑໑໘] ດູຣາ ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ "ເພາະອາໄສຕັນຫາ ປະຣິເຍສະນາ ຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ອາໄສຕັນຫາປະຣິເຍສະນາ ຈຶ່ງມີດັ່ງຕໍ່ໄປນີ້ ກໍຖ້າຕັນຫາຄືກາມະຕັນຫາ[໑] ພາວະຕັນຫາ[໒] ແລະ ວິພາວະຕັນຫາ[໓] ບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອຕັນຫາບໍ່ມີໂດຍປະການທັງປວງ ເພາະຕັນຫາດັບໄປປະຣິເຍສະນາຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ອານົນເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງປະຣິເຍສະນາກໍຄືຕັນຫານັ້ນເອງ

ດູຣາ ອານົນ ທຳ ໘ ຢ່າງນີ້ ທັງ ໘ ສ່ວນ[໔] ຮວມລົງເປັນຢ່າງດຽວກັບ ເວທະນາດ້ວຍປະການດັ່ງນີ້

[໑໑໙] ດູຣາ ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ "ເພາະຜັດສະເປັນປັດໄຈ ເວທະນາຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ຜັດສະເປັນປັດໄຈ ເວທະນາຈຶ່ງມີດັ່ງຕໍ່ໄປນີ້ ດູຣາ ອານົນ ກໍຖ້າຜັດສະ ຄື ຈັກຂຸສຳຜັດ ໂສຕະສຳຜັດ ຄານະສຳຜັດ ຊິວຫາສຳຜັດ ກາຍະສຳຜັດ ແລະ ມະໂນສຳຜັດບໍ່ໄດ້ມີແກ່ໃຜ ໆ ໃນພົບໃດ ໆ ທົ່ວທຸກແຫ່ງ ເມື່ອຜັດສະບໍ່ມີໂດຍປະການທັງປວງ ເພາະຜັດສະດັບໄປເວທະນາຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງເວທະນາກໍຄືຜັດສະນັ້ນເອງ

[໑໑໔] ດູຣາ ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ "ເພາະນາມຮູບເປັນປັດໄຈ ຜັດສະຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ນາມຮູບເປັນປັດໄຈ ຜັດສະຈຶ່ງມີດັ່ງຕໍ່ໄປນີ້ ດູຣາ ອານົນ ການບັນຍັດນາມກາຍ[໑] ຕ້ອງພ້ອມດ້ວຍອາການ[໒] ເພດ[໓] ນິມິດ[໔] ອຸດເຫດ[໕] ເມື່ອອາການ ເພດ ນິມິດ ແລະ ອຸດເຫດ ນັ້ນ ໆ ບໍ່ມີການສຳຜັດພຽງແຕ່ນາມກາຍ (ຊື່ໃນຮູບກາຍ) ຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ການບັນຍັດຮູບກາຍຕ້ອງພ້ອມດ້ວຍອາການ ເພດ ນິມິດ ແລະ ອຸດເຫດ ເມື່ອອາການ ເພດ ນິມິດ ແລະ ອຸດເຫດ ນັ້ນ ໆ ບໍ່ມີການສຳຜັດໂດຍ

ການກະທົບ ໃນນາມກາຍ ຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ການບັນຍັດນາມກາຍ ແລະ ຮູບກາຍຕ້ອງພ້ອມດ້ວຍອາການ ເພດ ນິມິດ ແລະ ອຸດເທດ ເມື່ອອາການ ເພດ ນິມິດ ແລະ ອຸດເທດນັ້ນ ໆ ບໍ່ມີການສຳຜັດ ພຽງແຕ່ນາມຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ການບັນຍັດນາມຮູບຕ້ອງພ້ອມດ້ວຍອາການ ເພດ ນິມິດ ແລະ ອຸດເທດ ເມື່ອອາການ ເພດ ນິມິດ ແລະ ອຸດເທດນັ້ນ ໆ ບໍ່ມີ ຜັດສະຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງຜັດສະກໍຄື ນາມຮູບ ນັ້ນເອງ

[໑໑໕] ດູຣາ ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ "ເພາະວິນຍານເປັນປັດໄຈນາມຮູບຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ວິນຍານເປັນປັດໄຈ ນາມຮູບ ຈຶ່ງມີດັ່ງຕໍ່ໄປນີ້ ດູຣາ ອານົນ ກໍຖ້າວິນຍານຈັກບໍ່ຢັ່ງລົງໃນທ້ອງມານດາແລ້ວ ນາມຮູບຈະກໍ່ໂຕຂຶ້ນໃນທ້ອງມານດາໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ກໍຖ້າວິນຍານຢັ່ງລົງໃນທ້ອງມານດາແລ້ວ ລ່ວງເລີຍໄປນາມຮູບຈັກບັງເກີດຂຶ້ນເພື່ອຄວາມເປັນແນວນີ້ໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ກໍຖ້າວິນຍານເດັກຊາຍ ຫຼື ເດັກຍິງຜູ້ເຍົາວັຍຈັກຂາດຄວາມສືບຕໍ່ກັນນາມຮູບຈັກຈະເລີນງອກງາມໄພບູນຂຶ້ນໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງນາມຮູບກໍຄືວິນຍານນັ້ນເອງ

[໑໑໖] ດູຣາ ອານົນ ຂໍ້ທີ່ເຮົາກ່າວແນວນີ້ວ່າ "ເພາະນາມຮູບເປັນປັດໄຈວິນຍານຈຶ່ງມີ" ທ່ານເພິ່ງຮູ້ເຫດທີ່ນາມຮູບເປັນປັດໄຈວິນຍານຈຶ່ງມີດັ່ງຕໍ່ໄປນີ້ ດູຣາ ອານົນ ກໍຖ້າວິນຍານຈັກບໍ່ໄດ້ອາໄສນາມຮູບ ຊາດ ຊະຣາ ມໍຣະນະ ແລະ ຄວາມເກີດຂຶ້ນແຫ່ງຄວາມທຸກ ສະມຸໄທ ຈະຜາກົດໄດ້ບໍ?"

ທ່ານພຣະອານົນທູນຕອບວ່າ "ຜາກົດບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນ ເຫດ ຕົ້ນເຫດ ເຫດເກີດ ແລະ ປັດໄຈແຫ່ງວິນຍານກໍຄືນາມຮູບນັ້ນເອງ

ດ້ວຍເຫດພຽງທໍ່ນີ້ແລ ວິນຍານ ແລະ ນາມຮູບຈຶ່ງເກີດ ແກ່ ຕາຍ ຈຸຕິ ຫຼື ອຸບັດດ້ວຍເຫດພຽງທໍ່ນີ້ ຈຶ່ງມີຄຳທີ່ເປັນພຽງນາມ ດ້ວຍເຫດພຽງທໍ່ນີ້ ຈຶ່ງມີຄຳທີ່ໃຊ້ຕາມຄວາມຫມາຍ ດ້ວຍເຫດພຽງທໍ່ນີ້ ຈຶ່ງມີຄຳບັນຍັດ ດ້ວຍເຫດພຽງທໍ່ນີ້ ຈຶ່ງມີແຕ່ສື່ສານຄວາມເຂົ້າໃຈ ດ້ວຍເຫດພຽງທໍ່ນີ້ ວັດຕະຈຶ່ງເປັນໄປ ຄວາມເປັນແນວນີ້ ຍ່ອມຜາກົດໂດຍການບັນຍັດນາມຮູບຍ່ອມເປັນໄປພ້ອມກັບວິນຍານ ເພາະຕ່າງກໍເປັນປັດໄຈຂອງກັນແລະກັນ

## ບັນຍັດອັດຕາ

[໑໑໗] ດູຣາ ອານົນບຸກຄົນ ເມື່ອຈະບັນຍັດອັດຕາຍ່ອມບັນຍັດດ້ວຍຄວາມເຫັນຈັກຢ່າງ?

## ບຸກຄົນ

໑. ດູຣາ ອານົນ ເມື່ອຈະບັນຍັດອັດຕາທີ່ມີຂະນາດຈຳກັດ ມີຮູບ ຍ່ອມບັນຍັດວ່າ "ອັດຕາຂອງເຮົາມີຂະນາດຈຳກັດ ມີຮູບ"

໒. ດູຣາ ອານົນ ເມື່ອຈະບັນຍັດອັດຕາ ມີຂະນາດບໍ່ຈຳກັດມີຮູບ ຍ່ອມບັນຍັດວ່າ "ອັດຕາຂອງເຮົາມີຂະນາດບໍ່ຈຳກັດ ມີຮູບ"

໓. ດູຣາ ອານົນ ເມື່ອຈະບັນຍັດອັດຕາທີ່ມີຂະນາດຈຳກັດບໍ່ມີຮູບ ຍ່ອມບັນຍັດວ່າ "ອັດຕາຂອງເຮົາມີຂະນາດຈຳກັດ ບໍ່ມີຮູບ"

໔. ດູຣາ ອານົນ ເມື່ອຈະບັນຍັດອັດຕາທີ່ມີຂະນາດບໍ່ຈຳກັດ ບໍ່ມີຮູບຍ່ອມບັນຍັດວ່າ "ອັດຕາຂອງເຮົາມີຂະນາດບໍ່ຈຳກັດ ບໍ່ມີຮູບ"

[໑໑໘] ດູຣາ ອານົນ ໃນຄວາມເຫັນ ໔ ຢ່າງນັ້ນ ບຸກຄົນເມື່ອຈະບັນຍັດອັດຕາ ມີຂະນາດຈຳກັດ ມີຮູບ ຍ່ອມບັນຍັດວ່າ ມີຢູ່ສະເພາະໃນຊາດນີ້ ຫຼື ບັນຍັດວ່າເປັນສະພາບມີຢູ່

ຕະຫຼອດການ ຫຼື ມີຄວາມເຫັນວ່າ "ເຮົາຈັກເຮັດອັດຕາທີ່ມີສະພາບບໍ່ທ່ຽງ ທີ່ມີຢູ່ໃຫ້ສຳເລັດ ເປັນສະພາບທ່ຽງ" ດູຣາ ອານົນ ການລົງຄວາມເຫັນວ່າອັດຕາທີ່ມີຢູ່ ມີຂະນາດຈຳກັດ ມີຮູບຍ່ອມຕິດຕາມມາດ້ວຍອາການແນວນີ້ ສະນັ້ນ ຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອຈະບັນຍັດອັດຕາ ມີຂະນາດບໍ່ຈຳກັດ ມີຮູບ ຍ່ອມບັນຍັດວ່າ ມີຢູ່ສະ ເພາະໃນຊາດນີ້ ຫຼື ບັນຍັດວ່າ ເປັນສະພາບມີຢູ່ຕະຫຼອດການ ຫຼື ມີຄວາມເຫັນວ່າ "ເຮົາຈັກທຳອັດຕາທີ່ມີສະພາບບໍ່ທ່ຽງ ທີ່ມີຢູ່ໃຫ້ສຳເລັດ ເປັນສະພາບທ່ຽງ" ດູຣາ ອານົນ ການລົງຄວາມເຫັນວ່າ ອັດຕາ ທີ່ມີຢູ່ ມີຂະນາດບໍ່ຈຳກັດ ມີຮູບ ຍ່ອມຕິດຕາມມາດ້ວຍອາການແນວນີ້ ສະນັ້ນ ຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອຈະບັນຍັດອັດຕາ ມີຂະນາດຈຳກັດ ບໍ່ມີຮູບ ຍ່ອມບັນຍັດວ່າມີຢູ່ສະເພາະໃນຊາດນີ້ ຫຼື ບັນຍັດວ່າ ເປັນສະພາບມີຢູ່ຕະຫຼອດການ ຫຼື ມີຄວາມເຫັນວ່າ "ເຮົາຈັກທຳອັດຕາທີ່ມີສະພາບບໍ່ທ່ຽງທີ່ມີຢູ່ໃຫ້ສຳເລັດ ເປັນສະພາບທ່ຽງ" ດູຣາ ອານົນ ການລົງຄວາມເຫັນວ່າ ອັດຕາ ທີ່ມີຢູ່ມີຂະນາດຈຳກັດ ບໍ່ມີຮູບ ຍ່ອມຕິດຕາມມາດ້ວຍອາການແນວນີ້ ສະນັ້ນ ຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອຈະບັນຍັດອັດຕາ ມີຂະນາດບໍ່ຈຳກັດ ບໍ່ມີຮູບ ຍ່ອມບັນຍັດວ່າມີຢູ່ສະເພາະໃນຊາດນີ້ ຫຼື ບັນຍັດວ່າ ເປັນສະພາບມີຢູ່ຕະຫຼອດການ ຫຼື ມີຄວາມເຫັນວ່າ "ເຮົາຈັກທຳອັດຕາທີ່ມີສະພາບບໍ່ທ່ຽງ ທີ່ມີຢູ່ໃຫ້ສຳເລັດເປັນສະພາບທ່ຽງ"

ດູຣາ ອານົນ ການລົງຄວາມເຫັນວ່າອັດຕາທີ່ມີຢູ່ ມີຂະນາດບໍ່ຈຳກັດ ບໍ່ມີຮູບຍ່ອມຕິດຕາມມາດ້ວຍອາການແນວນີ້ ສະນັ້ນ ຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອບັນຍັດອັດຕາຍ່ອມບັນຍັດດ້ວຍຄວາມເຫັນ ໔ ຢ່າງນີ້ແລ

## ບໍ່ບັນຍັດອັດຕາ

[໑໑໗] "ດູຣາ ອານົນ ບຸກຄົນເມື່ອບໍ່ບັນຍັດອັດຕາ ຍ່ອມບໍ່ບັນຍັດດ້ວຍຄວາມເຫັນຈັກຢ່າງ?

## ບຸກຄົນ

໑. ດູຣາ ອານົນ ເມື່ອບໍ່ບັນຍັດອັດຕາທີ່ມີຂະນາດຈຳກັດ ມີຮູບ ຍ່ອມບໍ່ບັນຍັດວ່າ "ອັດຕາຂອງເຮົາມີຂະນາດຈຳກັດ ມີຮູບ"

໔. ດູຣາ ອານົນ ເມື່ອບໍ່ບັນຍັດອັດຕາມີຂະນາດບໍ່ຈຳກັດ ມີຮູບ ຍ່ອມບໍ່ບັນຍັດວ່າ "ອັດຕາຂອງເຮົາມີຂະນາດບໍ່ຈຳກັດ ມີຮູບ"

໖. ດູຣາ ອານົນ ເມື່ອບໍ່ບັນຍັດອັດຕາທີ່ມີຂະນາດຈຳກັດ ບໍ່ມີຮູບ ຍ່ອມບໍ່ບັນຍັດວ່າ "ອັດຕາຂອງເຮົາມີຂະນາດຈຳກັດ ບໍ່ມີຮູບ"

໘. ດູຣາ ອານົນ ເມື່ອບໍ່ບັນຍັດອັດຕາທີ່ມີຂະນາດ ບໍ່ຈຳກັດ ບໍ່ມີຮູບ ຍ່ອມບໍ່ບັນຍັດວ່າ "ອັດຕາຂອງເຮົາມີຂະນາດບໍ່ຈຳກັດ ບໍ່ມີຮູບ"

[໑໔໐] ດູຣາ ອານົນ ໃນຄວາມເຫັນ ໔ ຢ່າງນັ້ນ ບຸກຄົນເມື່ອບໍ່ບັນຍັດອັດຕາມີຂະນາດຈຳກັດ ມີຮູບ ຍ່ອມບໍ່ບັນຍັດວ່າ ມີຢູ່ສະເພາະໃນຊາດນີ້ ຫຼື ບໍ່ບັນຍັດວ່າເປັນສະພາບມີຢູ່ຕະຫຼອດການ ຫຼື ບໍ່ມີຄວາມເຫັນວ່າ "ເຮົາຈັກເຮັດອັດຕາທີ່ມີສະພາບບໍ່ທ່ຽງທີ່ມີຢູ່ໃຫ້ສຳເລັດ ເປັນສະພາບທ່ຽງ" ການລົງຄວາມເຫັນວ່າ ອັດຕາ ທີ່ມີຢູ່ມີຂະນາດຈຳກັດ ມີຮູບ ຍ່ອມບໍ່ຕິດຕາມມາດ້ວຍອາການແນວນີ້ ສະນັ້ນ ຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອບໍ່ບັນຍັດອັດຕາມີຂະນາດບໍ່ຈຳກັດມີຮູບ ຍ່ອມບໍ່ບັນຍັດວ່າມີຢູ່ສະເພາະໃນຊາດນີ້ ຫຼື ບໍ່ບັນຍັດວ່າ ເປັນສະພາບທີ່ມີຢູ່ຕະຫຼອດການ ຫຼື ບໍ່ມີຄວາມເຫັນວ່າ "ເຮົາຈັກທຳອັດຕາທີ່ມີສະພາບບໍ່ທ່ຽງທີ່ມີຢູ່ໃຫ້ສຳເລັດ ເປັນສະພາບທ່ຽງ" ການລົງຄວາມເຫັນວ່າ ອັດຕາທີ່ມີຢູ່ມີຂະນາດບໍ່ຈຳກັດ ມີຮູບ ຍ່ອມບໍ່ຕິດຕາມມາດ້ວຍອາການແນວນີ້ ສະນັ້ນຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອບໍ່ບັນຍັດອັດຕາມີຂະນາດຈຳກັດບໍ່ມີຮູບ ຍ່ອມບໍ່ບັນຍັດວ່າມີຢູ່ສະເພາະໃນຊາດນີ້ ຫຼື ບໍ່ບັນຍັດວ່າເປັນສະພາບທີ່ມີຢູ່ຕະຫຼອດການ ຫຼື ບໍ່ມີຄວາມເຫັນວ່າ "ເຮົາຈັກທຳອັດຕາທີ່ມີສະພາບບໍ່ທ່ຽງທີ່ມີຢູ່ ໃຫ້ສຳເລັດເປັນສະພາບທ່ຽງ" ການລົງຄວາມເຫັນວ່າ ອັດຕາທີ່ມີຢູ່ມີຂະນາດຈຳກັດ ບໍ່ມີຮູບ ຍ່ອມບໍ່ຕິດຕາມມາດ້ວຍອາການແນວນີ້ ສະນັ້ນ ຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອບໍ່ບັນຍັດອັດຕາມີຂະນາດບໍ່ຈຳກັດ ບໍ່ມີຮູບ ຍ່ອມບໍ່ບັນຍັດວ່າມີຢູ່ສະເພາະໃນຊາດນີ້ ຫຼື ບໍ່ບັນຍັດວ່າ ເປັນສະພາບມີຢູ່ຕະຫຼອດການ ຫຼື ບໍ່ມີຄວາມເຫັນວ່າ "ເຮົາຈັກທຳອັດຕາທີ່ມີສະພາບບໍ່ທ່ຽງທີ່ມີຢູ່ ໃຫ້ສຳເລັດເປັນສະພາບທ່ຽງ" ການລົງຄວາມເຫັນວ່າ ອັດຕາທີ່ມີຢູ່ມີຂະນາດບໍ່ຈຳກັດ ບໍ່ມີຮູບ ຍ່ອມບໍ່ຕິດຕາມມາດ້ວຍອາການແນວນີ້ ສະນັ້ນຈຶ່ງຄວນກ່າວໄວ້

ດູຣາ ອານົນ ບຸກຄົນເມື່ອບໍ່ບັນຍັດອັດຕາຍ່ອມບໍ່ບັນຍັດດ້ວຍຄວາມເຫັນ ໔ ຢ່າງນີ້ແລ

## ຄວາມເຫັນວ່າເປັນອັດຕາ

[໑໘໑] "ດູຣາ ອານົນ ບຸກຄົນເມື່ອເຫັນວ່າມີອັດຕາ ຍ່ອມເຫັນດ້ວຍຄວາມເຫັນຈັກຢ່າງນໍ?

ດູຣາ ອານົນ ບຸກຄົນເມື່ອເຫັນເວທະນາວ່າ ເປັນອັດຕາ ຍ່ອມເຫັນວ່າ "ເວທະນາເປັນອັດຕາຂອງເຮົາ" ຫຼື ເຫັນວ່າ "ເວທະນາບໍ່ແມ່ນອັດຕາຂອງເຮົາ (ເພາະ) ອັດຕາຂອງເຮົາບໍ່ສະເຫວີຍອາລົມ" ຫຼື ເຫັນວ່າ "ເວທະນາບໍ່ແມ່ນອັດຕາຂອງເຮົາ ອັດຕາຂອງເຮົາຈະບໍ່ສະເຫວີຍອາລົມກໍບໍ່ແມ່ນ ອັດຕາຂອງເຮົາຍັງສະເຫວີຍອາລົມຢູ່ ເພາະອັດຕາຂອງເຮົາມີເວທະນາເປັນຄຸນສົມບັດ"

[໑໘໘] ດູຣາ ອານົນ ໃນຄວາມເຫັນ ໓ ຢ່າງນັ້ນ ຜູ້ທີ່ກ່າວແນວນີ້ວ່າ "ເວທະນາເປັນອັດຕາຂອງເຮົາ" ເຂົາຈະຖືກຊັກຖາມວ່າ "ຜູ້ມີອາຍຸເວທະນາມີ ໓ ຢ່າງ ຄື ສຸກຂະເວທະນາ ທຸກຂະເວທະນາ ແລະ ອະທຸກຂະມະສຸກຂະເວທະນາໃນບັນດາເວທະນາ ໓ ຢ່າງນີ້ ທ່ານເຫັນເວທະນາແນວໃດ? ວ່າ ເປັນອັດຕາ"

ດູຣາ ອານົນ ໃນເວລາທີ່ອັດຕາສະເຫວີຍສຸກຂະເວທະນາ ກໍຍ່ອມບໍ່ສະເຫວີຍທຸກຂະເວທະ ນາ ແລະ ອະທຸກຂະມະສຸກຂະເວທະນາ ຄົງສະເຫວີຍແຕ່ສຸກຂະເວທະນາທໍ່ນັ້ນ ໃນເວລາທີ່ອັດຕາສະເຫວີຍທຸກຂະເວທະນາ ກໍຍ່ອມບໍ່ສະເຫວີຍສຸກຂະເວທະນາ ແລະ ອະທຸກຂະມະສຸກຂະເວທະນາ ຄົງສະເຫວີຍແຕ່ທຸກຂະເວທະນາທໍ່ນັ້ນ ໃນເວລາທີ່ອັດຕາສະເຫວີຍອະທຸກຂະມະສຸກຂະເວທະນາກໍຍ່ອມບໍ່ສະເຫວີຍສຸກຂະເວທະນາ ແລະ ທຸກຂະເວທະນາຄົງສະເຫວີຍແຕ່ອະທຸກຂະມະສຸກຂະເວທະນາທໍ່ນັ້ນ

[໑໘໙] ດູຣາ ອານົນ ແມ່ນສຸກຂະເວທະນາກໍບໍ່ທ່ຽງ ຖືກປັດໃຈປຸງແຕ່ງອາໄສເຫດປັດໃຈເກີດ ມີຄວາມສົ້ງງໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມສະຫຼາຍໄປເປັນທຳມະດາມີຄວາມດັບໄປເປັນທຳມະດາ ແມ່ນທຸກຂະເວທະນາກໍບໍ່ທ່ຽງຖືກປັດໃຈປຸງແຕ່ງອາໄສເຫດປັດໃຈເກີດ ມີຄວາມສົ້ງງໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມສະຫຼາຍໄປເປັນທຳມະດາມີຄວາມດັບໄປເປັນທຳມະດາ ແມ່ນອະທຸກຂະມະສຸກຂະເວທະນາກໍບໍ່ທ່ຽງຖືກປັດໃຈປຸງແຕ່ງ ອາໄສເຫດປັດໃຈເກີດ ມີຄວາມເບີດໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມສະຫຼາຍໄປເປັນທຳມະດາ ມີຄວາມດັບໄປເປັນທຳມະດາ

ດູຣາ ອານົນ ເມື່ອບຸກຄົນສະເຫວີຍສຸກຂະເວທະນາຍ່ອມມີຄວາມເຫັນວ່າ "ນີ້ເປັນອັດຕາຂອງເຮົາ" ເມື່ອສຸກຂະເວທະນານັ້ນດັບໄປ ຈຶ່ງມີຄວາມເຫັນວ່າ "ອັດຕາຂອງເຮົາດັບໄປແລ້ວ" ເມື່ອບຸກຄົນສະເຫວີຍທຸກຂະເວທະນາ ຍ່ອມມີຄວາມເຫັນວ່າ "ນີ້ເປັນອັດຕາຂອງເຮົາ" ເມື່ອ

ທຸກຂະເວທະນານັ້ນດັບ ຈຶ່ງມີຄວາມເຫັນວ່າ "ອັດຕາຂອງເຮົາດັບໄປແລ້ວ" ເມື່ອບຸກຄົນສະເຫວີຍອະທຸກຂະມະສຸກຂະເວທະນາ ຍ່ອມມີຄວາມເຫັນວ່າ "ນີ້ເປັນອັດຕາຂອງເຮົາ" ເມື່ອອະທຸກຂະມະສຸກຂະເວທະນານັ້ນດັບ ຈຶ່ງມີຄວາມເຫັນວ່າ "ອັດຕາຂອງເຮົາດັບໄປແລ້ວ" ຜູ້ທີ່ກ່າວແນວນີ້ວ່າ "ເວທະນາເປັນອັດຕາຂອງເຮົາ" ເມື່ອເຫັນເວທະນາວ່າເປັນອັດຕາ ຍ່ອມເຫັນອັດຕາບໍ່ທ່ຽງ ສຸກແດ່ ທຸກແດ່ ມີຄວາມເກີດຂຶ້ນເປັນທຳມະດາ ແລະ ມີຄວາມເສື່ອມໄປເປັນທຳມະດາ ໃນປະຈຸບັນ ເພາະເຫດນັ້ນແລ ດູຣາ ອານົນ ດ້ວຍເຫດພຽງທໍ່ນີ້ ຈຶ່ງຍັງບໍ່ຄວນທີ່ຈະເຫັນວ່າ "ເວທະນາເປັນອັດຕາຂອງເຮົາ"

[໑໒໔] ດູຣາ ອານົນ ໃນຄວາມເຫັນ ໓ ຢ່າງນັ້ນ ຜູ້ທີ່ກ່າວແນວນີ້ວ່າ "ເວທະນາບໍ່ແມ່ນອັດຕາຂອງເຮົາ (ເພາະ) ອັດຕາຂອງເຮົາບໍ່ສະເຫວີຍອາລົມ" ເຂົາຈະຖືກຊັກຖາມວ່າ "ໃນຮູບຂັນເຊິ່ງບໍ່ມີການສະເຫວີຍອາລົມ ຈະມີຄວາມຮູ້ສຶກວ່າ "ເປັນເຮົາ" ເກີດຂຶ້ນໄດ້ຫຼືບໍ່?"

ທ່ານພຣະອານົນທູນຕອບວ່າ "ເກີດຂຶ້ນບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນແລ ດ້ວຍເຫດພຽງທໍ່ນີ້ຈຶ່ງຍັງບໍ່ຄວນທີ່ຈະເຫັນວ່າ ເວທະນາບໍ່ແມ່ນອັດຕາຂອງເຮົາ ເພາະອັດຕາຂອງເຮົາບໍ່ສະເຫວີຍອາລົມ"

[໑໒໕] ດູຣາ ອານົນ ໃນຄວາມເຫັນ ໓ ຢ່າງນັ້ນ ຜູ້ທີ່ກ່າວແນວນີ້ວ່າ "ເວທະນາບໍ່ແມ່ນອັດຕາຂອງເຮົາ ອັດຕາຂອງເຮົາຈະບໍ່ສະເຫວີຍອາລົມກໍບໍ່ແມ່ນ ອັດຕາຂອງເຮົາຍັງສະເຫວີຍອາລົມຢູ່ ເພາະອັດຕາຂອງເຮົາມີເວທະນາເປັນຄຸນສົມບັດ" ເຂົາຈະຖືກຊັກຖາມວ່າ "ຜູ້ມີອາຍຸ ກໍເພາະເວທະນາຈະຕ້ອງດັບໄປທັງໝົດທັງສິ້ນບໍ່ມີເຫຼືອ ເມື່ອບໍ່ມີເວທະນາເພາະເວທະນາດັບໄປໂດຍປະການທັງປວງ ຍັງຈະມີຄວາມຮູ້ສຶກວ່າ "ເປັນເຮົາ" ໄດ້ຫຼືບໍ່?

ທ່ານພຣະອານົນທູນຕອບວ່າ "ບໍ່ໄດ້ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາ ອານົນ ເພາະເຫດນັ້ນແລ ດ້ວຍເຫດພຽງທໍ່ນີ້ຈຶ່ງຍັງບໍ່ຄວນທີ່ຈະເຫັນວ່າ "ເວທະນາບໍ່ແມ່ນອັດຕາຂອງເຮົາ ອັດຕາຂອງເຮົາຈະບໍ່ສະເຫວີຍອາລົມກໍບໍ່ແມ່ນ ອັດຕາຂອງເຮົາຍັງສະເຫວີຍອາລົມຢູ່ເພາະອັດຕາຂອງເຮົາມີເວທະນາເປັນຄຸນສົມບັດ"

[໑໒໖] ດູຣາ ອານົນ ພິກຂຸໃດ ບໍ່ເຫັນເວທະນາວ່າ ເປັນອັດຕາບໍ່ເຫັນການສະເຫວີຍອາລົມວ່າ ເປັນອັດຕາ ແລະ ບໍ່ເຫັນວ່າ "ອັດຕາຂອງເຮົາຍັງຕ້ອງສະເຫວີຍອາລົມ ເພາະວ່າອັດຕາຂອງເຮົາມີເວທະນາເປັນຄຸນສົມບັດ" ພິກຂຸນັ້ນ ເມື່ອເຫັນແນວນີ້ ຍ່ອມບໍ່ຖືໝັ້ນອັນໃດໃນໂລກ ແລະ ເມື່ອບໍ່ຖືໝັ້ນ ຍ່ອມບໍ່ສະທົກສະທ້ານ ເມື່ອບໍ່ສະທົກສະທ້ານ ຍ່ອມດັບໄດ້ສະເພາະ

ຕົນ ຍ່ອມຮູ້ຊັດແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ"

ດູຣາ ອານົນ ຜູ້ໃດ ກ່າວກັບພິກຂຸຜູ້ມີຈິດຫຼຸດພົ້ນແລ້ວດັ່ງກ່າວນັ້ນແບບນີ້ວ່າ "ທ່ານມີທິດຖິວ່າ" ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກບໍ" ການກ່າວຂອງຜູ້ນັ້ນບໍ່ສົມຄວນ ຜູ້ໃດກ່າວກັບພິກຂຸຜູ້ມີຈິດຫຼຸດພົ້ນແລ້ວ ດັ່ງກ່າວນັ້ນແບບນີ້ວ່າ "ທ່ານມີທິດຖິວ່າ" ຫຼັງຈາກຕາຍແລ້ວຕະ ຖາຄົດບໍ່ເກີດອີກບໍ" ການກ່າວຂອງຜູ້ນັ້ນກໍບໍ່ສົມຄວນ ຜູ້ໃດ ກ່າວກັບພິກຂຸຜູ້ມີຈິດຫຼຸດພົ້ນແລ້ວດັ່ງກ່າວນັ້ນແບບນີ້ວ່າ "ທ່ານມີທິດຖິວ່າ" ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະ ບໍ່ເກີດອີກບໍ" ການກ່າວຂອງຜູ້ນັ້ນກໍບໍ່ສົມຄວນຜູ້ໃດກ່າວກັບພິກຂຸຜູ້ມີຈິດຫຼຸດພົ້ນແລ້ວດັ່ງ ກ່າວນັ້ນແບບນີ້ວ່າ "ທ່ານມີທິດຖິວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ ເກີດອີກກໍບໍ່ແມ່ນບໍ?" ການກ່າວຂອງຜູ້ນັ້ນກໍບໍ່ສົມຄວນ

ດູຣາ ອານົນ ຂໍ້ນັ້ນ ເພາະເຫດໃດ ເພາະ ຊື່ ຄຳເວົ້າ ທີ່ເປັນພຽງການໃຊ້ສື່ຄວາມໝາຍຄຳທີ່ໃຊ້ຕາມຄວາມໝາຍບັນຍັດຂອງຄຳເວົ້າ ບັນຍັດເພື່ອໃຫ້ເຂົ້າໃຈ ແຕ່ວັດຕະຍັງເປັນໄປຢູ່ຕະຫຼອດການພຽງໃດ ວັດຕະຍ່ອມໝູນໄປຕະຫຼອດການພຽງນັ້ນ ພິກຂຸຊື່ວ່າ ຫຼຸດພົ້ນແລ້ວເພາະຮູ້ຍິ່ງວັດຕະນັ້ນ ຜູ້ໃດກ່າວກັບພິກຂຸຜູ້ຫຼຸດພົ້ນແລ້ວ ເພາະຮູ້ຍິ່ງວັດຕະນັ້ນວ່າ "ທ່ານມີທິດຖິວ່າ "ພຣະອະຣະຫັນຍ່ອມບໍ່ຮູ້ບໍ່ເຫັນ" ການກ່າວຂອງຜູ້ນັ້ນກໍບໍ່ສົມຄວນ"

## ວິນຍານຖິຕິ ໗ ປະການໂຖ

### (ພູມເປັນທີ່ຕັ້ງແຫ່ງວິນຍານ)

[໑໒໗] ດູຣາ ອານົນ ວິນຍານຖິຕິ ໑໗ ປະການ ແລະ ອາຍະຕະນະ ໒ ປະການນີ້

ວິນຍານຖິຕິ ໗ ປະການມີຫຍັງແດ່? ຄື

໑. ດູຣາ ອານົນ ມີສັດທັງຫຼາຍຜູ້ມີກາຍຕ່າງກັນ ມີສັນຍາຕ່າງກັນ ຄື ມະນຸດ ເທບລາງພວກ ແລະ ວິນິປາຕິກະລາງພວກ[໑] ນີ້ເປັນວິນຍານຖິຕິທີ ໑

໒. ດູຣາ ອານົນ ມີສັດທັງຫຼາຍຜູ້ມີກາຍຕ່າງກັນ ແຕ່ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນພົມມະກາຍິກາເກີດໃນປະຖົມຊານ ແລະ ເຫຼົ່າສັດຜູ້ເກີດໃນອະບາຍ ໔ ນີ້ ເປັນວິນຍານຖິຕິທີ ໒

໓. ດູຣາ ອານົນ ມີສັດທັງຫຼາຍຜູ້ມີກາຍຢ່າງດຽວກັນ ແຕ່ມີສັນຍາຕ່າງກັນ ຄື ພວກເທບຊັ້ນອາພັດສະນີ້ເປັນວິນຍານຖິຕິທີ ໓

໔. ດູຣາ ອານົນ ມີສັດທັງຫຼາຍຜູ້ມີກາຍຢ່າງດຽວກັນ ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນສຸພະກິນຫະ (ເທບທີ່ເຕັມໄປດ້ວຍຄວາມງົດງາມ) ນີ້ເປັນວິນຍານຖິຕິທີ ໔

໕. ດູຣາ ອານົນ ມີສັດທັງຫຼາຍ ຜູ້ບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງນີ້ເປັນວິນຍານຖິຕິທີ ໕

໖. ດູຣາ ອານົນ ມີສັດທັງຫຼາຍຜູ້ລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ນີ້ເປັນວິນຍານຖິຕິທີ ໖

໗. ດູຣາ ອານົນ ມີສັດທັງຫຼາຍຜູ້ລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີຫຍັງ" ນີ້ເປັນວິນຍານຖິຕິທີ ໗

ອາຍະຕະນະ ໒ ປະການມີຫຍັງແດ່ ຄື

໑. ອະສັນຍີສັດຕາຍະຕະນະ (ອາຍະຕະນະຂອງສັດຜູ້ບໍ່ມີສັນຍາ) ນີ້ ເປັນອາຍະຕະນະທີ່ ໑

໒. ດູຣາ ອານົນ ເນວະສັນຍານາສັນຍາຍະຕະນະ (ອາຍະຕະນະຂອງສັດຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ) ນີ້ເປັນອາຍະຕະນະທີ ໒

[໑໒໘] ດູຣາ ອານົນ ໃນວິນຍານຖິຕິ ໗ ປະການນັ້ນ ວິນຍານຖິຕິທີ ໑ ວ່າ ສັດທັງຫຼາຍຜູ້ມີກາຍຕ່າງກັນມີສັນຍາຕ່າງກັນ ຄື ມະນຸດລາງພວກ ເທບລາງພວກ ແລະ ວິນິປາ ຕິກະລາງພວກຜູ້ທີ່ຮູ້ວິນຍານຖິຕິນັ້ນ ຮູ້ຄວາມເກີດ ຮູ້ຄວາມດັບ ຮູ້ຄຸນ ຮູ້ໂທດຂອງວິນຍານຖິຕິນັ້ນ ແລະຮູ້ອຸບາຍສະລັດອອກຈາກວິນຍານຖິຕິນັ້ນ ເຂົາຄວນຈະເພີດເພີນໃນວິນຍານຖິຕິນັ້ນຢູ່ອີກບໍ"

ທ່ານພຣະອານົນທູນຕອບວ່າ "ບໍ່ຄວນເລີຍ ຂ້ານ້ອຍ"

໗໑໗

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ດູຣາ ອານົນ ວິນຍານຖິຕິທີ ໗ ວ່າສັດທັງຫຼາຍຜູ້ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ໂດຍກຳນົດວ່າ "ບໍ່ມີຫຍັງ" ຜູ້ທີ່ຮູ້ວິນຍານຖິຕິນັ້ນ ຮູ້ຄວາມເກີດຮູ້ຄວາມດັບຮູ້ຄຸນ ຮູ້ໂທດຂອງວິນຍານຖິຕິນັ້ນ ແລະ ຮູ້ອຸບາຍສະລັດອອກຈາກວິນຍານຖິຕິນັ້ນ ເຂົາຄວນຈະເພີດເພີນໃນວິນຍານຖິຕິນັ້ນຢູ່ອີກບໍ?"

ທ່ານພຣະອານົນທູນຕອບວ່າ "ບໍ່ຄວນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ດູຣາ ອານົນ ໃນອາຍະຕະນະ ໒ ປະການນັ້ນ ອາຍະຕະນະທີ ໑ ຄື ອະສັນຍີສັດຕາຍະຕະນະ ຜູ້ທີ່ຮູ້ອະສັນຍີສັດຕາຍະຕະນະນັ້ນ ຮູ້ຄວາມເກີດຮູ້ຄວາມດັບຮູ້ຄຸນຮູ້ໂທດຂອງອະສັນຍີສັດຕາຍະຕະນະນັ້ນ ແລະ ຮູ້ອຸບາຍສະລັດອອກຈາກອະສັນຍີສັດຕາຍະຕະນະນັ້ນ ເຂົາຄວນຈະເພີດເພີນໃນອະສັນຍີສັດຕາຍະຕະນະນັ້ນຢູ່ອີກບໍ"

ທ່ານພຣະອານົນທູນຕອບວ່າ "ບໍ່ຄວນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ດູຣາ ອານົນ ອາຍະຕະນະທີ ໒ ຄື ເນວະສັນຍານາສັນຍາຍະຕະນະ ຜູ້ທີ່ຮູ້ເນວະສັນຍານາສັນຍາຍະຕະນະນັ້ນ ຮູ້ຄວາມເກີດຮູ້ຄວາມດັບຮູ້ຄຸນຮູ້ໂທດຂອງເນວະສັນຍານາສັນຍາຍະຕະນະນັ້ນ ແລະ ຮູ້ອຸບາຍສະລັດອອກຈາກເນວະສັນຍານາສັນຍາຍະຕະນະນັ້ນ ເຂົາຄວນຈະເພີດເພີນໃນເນວະສັນຍານາສັນຍາຍະຕະນະນັ້ນຢູ່ອີກບໍ?"

ທ່ານພຣະອານົນທູນຕອບວ່າ "ບໍ່ຄວນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ດູຣາອານົນ ພິກຂຸຜູ້ຮູ້ເຖິງຄວາມເກີດ ຄວາມດັບຄຸນໂທດ ຂອງວິນຍານຖິຕິ ໗ ແລະ ອາຍະຕະນະ ໒ ແລະ ອຸບາຍສະລັດອອກຈາກວິນຍານຖິຕິ ໗ ແລະ ອາຍະຕະນະ ໒ ນີ້ຕາມຄວາມເປັນຈິງ ຍ່ອມຫຼຸດພົ້ນເພາະບໍ່ຖືໝັ້ນ ໑ ພິກຂຸນີ້ເຮົາຮຽກວ່າຜູ້ເປັນປັນຍາວິມຸດ ໒

## ວິໂມກ ໘ ປະການ

[໑໒໙] ດູຣາ ອານົນ ວິໂມກ ໘ ປະການນີ້

ວິໂມກ ໘ ປະການມີຫຍັງແດ່? ຄື

໑. ບຸກຄົນຜູ້ມີຮູບ ເຫັນຮູບທັງຫຼາຍ ນີ້ເປັນວິໂມກປະການທີ ໑

໒. ບຸກຄົນຜູ້ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກ ນີ້ ເປັນວິໂມກປະການທີ ໒

໓. ບຸກຄົນຜູ້ນ້ອມໃຈໄປວ່າ "ງາມ" ນີ້ເປັນວິໂມກປະການທີ ໓

໔. ບຸກຄົນບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຢູ່ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ນີ້ເປັນວິໂມກປະການທີ ໔

໕. ບຸກຄົນລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ນີ້ເປັນວິໂມກປະການທີ ໕

໖. ບຸກຄົນລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີຫຍັງ" ນີ້ເປັນວິໂມກປະການທີ ໖

໗. ບຸກຄົນລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານ ນີ້ເປັນວິໂມກປະການທີ ໗

໘. ບຸກຄົນລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາເວທະຍິດນິດໂຣດ ນີ້ເປັນວິໂມກປະການທີ ໘

ດູຣາ ອານົນ ວິໂມກ ໘ ປະການມີແນວນີ້ແລ

[໑໓໐] ດູຣາ ອານົນ ພິກຂຸຜູ້ເຂົ້າວິໂມກ ໘ ປະການນີ້ໂດຍອະນຸໂລມແດ່ ໂດຍປະຕິໂລມແດ່ ທັງໂດຍອະນຸໂລມ ແລະ ປະຕິໂລມແດ່ ເຂົ້າ ຫຼື ອອກໄດ້ຕາມໂອກາດທີ່ຕ້ອງການ ຕາມຂະນິດສະມາບັດທີ່ຕ້ອງການ ແລະ ຕາມໄລຍະເວລາທີ່ຕ້ອງການ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າ ຜູ້ເປັນອຸພະໂຕພາກະວິມຸດ ດູຣາ ອານົນ ອຸພະໂຕພາກະວິມຸດຕິຢ່າງອື່ນທີ່ດີກວ່າ ຫຼື ປະນີດກວ່າ ອຸພະໂຕພາກະວິມຸດຕິນີ້ບໍ່ມີ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ທ່ານພຣະອານົນມີໃຈຍິນດີຊົມຊື່ນໃນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ມະຫານິທານສູດທີ ໒ ຈົບ**

# ໓. ມະຫາປະຣິນິບພານສູດ

## ວ່າດ້ວຍມະຫາປະຣິນິບພານ

[໑໓໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ພູຄິດຊະກູດ ເຂດເມືອງຣາດຊະຄື ສະໄໝນັ້ນ ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດ ມີພຣະປະສົງຈະສະເດັດໄປຜາບແຄວ້ນວັດຊີ ຮັບສັ່ງວ່າ "ເຮົາຈະໂຄ່ນລົ້ມກຳຈັດພວກວັດຊີຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ໃຫ້ພິນາດຍ່ອຍຍັບໄປ"

[໑໓໔] ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າ ອະຊາດສັດຕູ ເວເທຫິບຸດ ຮັບສັ່ງຮຽກວັດສະການພາມມະຫາອຳມາດແຄວ້ນມະຄົດມາຕັດວ່າ "ມາເທີ້ນ ພາມ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ໃຫ້ຂາບພຣະບາດດ້ວຍຂະໜ່ອມ ແລ້ວທູນຖາມເຖິງພຣະສຸກຂະພາບຄວາມມີພຣະໂຣຄາພາດໜ້ອຍ ຄວາມສະບາຍມີພຣະພະລານາໄມສົມບູນຢູ່ສຳຣານຕາມຄຳຂອງເຮົາວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດ ຂໍຂາບພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍພຣະສຽນທູນຖາມເຖິງພຣະສຸກຂະພາບຄວາມມີພຣະໂຣຄາພາດໜ້ອຍ ຄວາມສະບາຍມີພຣະພະລານາໄມສົມບູນຢູ່ສຳຣານ" ແລະຈົ່ງຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດມີພຣະປະສົງຈະສະເດັດໄປຜາບແຄວ້ນວັດຊີ ມີຮັບສັ່ງທູນຖາມແນວນີ້ວ່າ "ຈະຊົງສາມາດໂຄ່ນລົ້ມພວກວັດຊີຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ໃຫ້ພິນາດຍ່ອຍຍັບໄປໄດ້ບໍ?" ພຣະຜູ້ມີພຣະພາກເຈົ້າ ຊົງພະຍາກອນແກ່ທ່ານແນວໃດ ທ່ານເພິ່ງຈຳຄຳພະຍາກອນນັ້ນໃຫ້ດີແລ້ວມາບອກເຮົາ ເພາະວ່າພຣະຕະຖາຄົດເຈົ້າທັງຫຼາຍຍ່ອມບໍ່ຕັດຄຳບໍ່ຈິງ"

### ວັດສະການພາມ

[໑໓໓] ວັດສະການພາມມະຫາອຳມາດແຄວ້ນມະຄົດ ທູນຮັບສະໜອງພຣະດຳຣັດແລ້ວກະກຽມຍານພາຫະນະຄັນງາມ ໆ ຂຶ້ນຍານພາຫະນະຄັນງາມ ໆ ນັ້ນອອກຈາກເມືອງ ຣາດຊະຄື ພ້ອມດ້ວຍຍານພາຫະນະຄັນງາມ ໆ ຕິດຕາມອີກຫຼາຍຄັນມຸ້ງໜ້າໄປສູ່ພູຄິດຊະກູດຈົນສຸດທາງທີ່ຍານພາຫະນະນັ້ນຈະເຂົ້າໄປໄດ້ ແລ້ວໄດ້ລົງຈາກຍານພາຫະນະຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ໄດ້ສົນທະນາປາໄສທັກທາຍພໍເປັນທີ່ຄຸ້ນເຄີຍກັນພໍເປັນທີ່ລະນຶກເຖິງກັນແລ້ວ ຈຶ່ງໄດ້ນັ່ງລົງຢູ່ບ່ອນສົມຄວນແກ່ຕົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ

"ຂ້າແດ່ ທ່ານພຣະໂຄດົມຜູ້ຈະເລີນ ພຣະຣາຊາແຫ່ງແຄວັ້ນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດ ຂໍຂາບພຣະບາດຂອງພຣະໂຄດົມດ້ວຍພຣະສຽນ ທູນຖາມເຖິງພຣະສຸກຂະພາບ ຄວາມມີພຣະໂຣຄາພາດໜ້ອຍ ຄວາມສະບາຍມີພຣະພະລານາໄມສົມບູນ ຢູ່ສຳຣານ ພຣະຣາຊາແຫ່ງແຄວັ້ນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດມີພຣະປະສົງຈະສະເດັດໄປຜາບແຄວັ້ນວັດຊີ ໄດ້ມີຮັບສັ່ງທູນຖາມແນວນີ້ວ່າ "ເຮົາຈະໂຄ່ນລົ້ມພວກວັດຊີ ຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ໃຫ້ພິນາດຍ່ອຍຍັບໄປ"

## ອະປະຣິຫານິຍະທຳ

[໑໓໔] ສະໄໝນັ້ນ ທ່ານພຣະອານົນຢືນຖວາຍງານພັດພຣະຜູ້ມີພຣະພາກເຈົ້າຢູ່ໃນເບື້ອງປຣິດສະດາງ (ຫຼັງ) ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດຖາມວ່າ

໑. "ດູຣາ ອານົນ ທ່ານໄດ້ເຄີຍໄດ້ຍິນມາບໍ່ວ່າ "ພວກເຈົ້າວັດຊີເປັນຜູ້ໝັ່ນປະຊຸມກັນຢູ່ເລື້ອຍ ໆ ປະຊຸມກັນຫຼາຍເທື່ອ"

ທ່ານພຣະອານົນທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີເປັນຜູ້ໝັ່ນປະຊຸມກັນຢູ່ເລື້ອຍ ໆ ປະຊຸມກັນຫຼາຍເທື່ອ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ດູຣາ ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະ ເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງໝັ່ນປະຊຸມກັນຢູ່ເລື້ອຍ ໆ ປະຊຸມກັນຫຼາຍເທື່ອ"

໒. "ດູຣາ ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະ ພ້ອມພຽງກັນທຳກິດທີ່ພວກເຈົ້າວັດຊີຈະເພິ່ງກະທຳ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີພ້ອມພຽງກັນປະຊຸມພ້ອມ ພຽງກັນເລີກປະຊຸມ ແລະ ພ້ອມພຽງກັນທຳກິດທີ່ພວກເຈົ້າວັດຊີຈະເພິ່ງກະທຳ"

"ດູຣາ ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະ ພ້ອມພຽງກັນທຳກິດທີ່ພວກເຈົ້າວັດຊີຈະເພິ່ງກະທຳ"

໓. "ດູຣາ ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີບໍ່ບັນຍັດສິ່ງທີ່ບໍ່ໄດ້ບັນຍັດໄວ້ ບໍ່ລົ້ມລ້າງ ສິ່ງ ທີ່ບັນຍັດໄວ້ແລ້ວ ຖືປະຕິບັດໝັ້ນຕາມວັດຊີທຳທີ່ວາງໄວ້ເກົ່າ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີບໍ່ບັນຍັດສິ່ງທີ່ບໍ່ໄດ້

ບັນຍັດໄວ້ ບໍ່ລົ້ມລ້າງສິ່ງທີ່ບັນຍັດໄວ້ແລ້ວ ຖືປະຕິບັດໝັ້ນຕາມວັດຊີທຳທີ່ວາງໄວ້ເກົ່າ

"ດູຣາ ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງບໍ່ບັນຍັດສິ່ງທີ່ບໍ່ໄດ້ບັນຍັດໄວ້ ບໍ່ລົ້ມລ້າງສິ່ງທີ່ບັນຍັດໄວ້ ແລ້ວຖືປະຕິບັດໝັ້ນຕາມວັດຊີທຳທີ່ວາງໄວ້ເກົ່າ"

໔. "ດູຣາ ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີສັກກາຣະເຄົາຣົບນັບຖືບູຊາເຈົ້າວັດຊີຜູ້ມີພຣະຊົນມາຍຸຫຼາຍຂອງຊາວວັດຊີ ແລະ ສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນວ່າເປັນສິ່ງຄວນຮັບຟັງ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີສັກກາຣະເຄົາຣົບນັບຖືບູຊາເຈົ້າວັດຊີຜູ້ມີພຣະຊົນມາຍຸຫຼາຍຂອງຊາວວັດຊີ ແລະ ສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນວ່າເປັນສິ່ງຄວນຮັບຟັງ"

"ດູຣາ ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີ ຍັງສັກກາຣະເຄົາຣົບນັບຖືບູຊາເຈົ້າວັດຊີຜູ້ມີພຣະຊົນມາຍຸຫຼາຍຂອງຊາວວັດຊີ ແລະ ສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນວ່າເປັນສິ່ງຄວນຮັບຟັງ"

໕. "ດູຣາ ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີບໍ່ຈັບດຶງລາກ ຂົ່ມເຫັງໃຈກຸນລະສະຕີ ຫຼື ກຸນກຸມາຣີໃຫ້ຢູ່ຮ່ວມນຳ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີບໍ່ຈັບດຶງລາກຂົ່ມເຫັງໃຈກຸນລະສະຕີ ຫຼື ກຸນກຸມາຣີໃຫ້ຢູ່ຮ່ວມນຳ"

"ດູຣາ ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພວກເຈົ້າວັດຊີຍັງບໍ່ຈັບດຶງລາກຂົ່ມເຫັງໃຈກຸນລະສະຕີ ຫຼື ກຸນກຸມາຣີໃຫ້ຢູ່ຮ່ວມນຳ"

໖. "ດູຣາ ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີສັກກາຣະເຄົາຣົບນັບຖືບູຊາສະຖູບໃນແຄວ້ນວັດຊີຂອງຊາວວັດຊີທັງໃນເມືອງ ແລະ ນອກເມືອງ ແລະ ບໍ່ປະລະການບູຊາອັນຊອບທຳທີ່ເຄີຍໃຫ້ເຄີຍທານຕໍ່ເຈດີເຫຼົ່ານັ້ນໃຫ້ເສື່ອມສູນໄປ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີສັກກາຣະເຄົາຣົບນັບຖືບູຊາສະຖູບໃນແຄວ້ນວັດຊີຂອງຊາວວັດຊີທັງໃນເມືອງ ແລະ ນອກເມືອງ ແລະ ບໍ່ປະລະການບູຊາອັນຊອບທຳທີ່ເຄີຍໃຫ້ເຄີຍທານຕໍ່ເຈດີເຫຼົ່ານັ້ນໃຫ້ເສື່ອມສູນໄປ"

"ດູຣາ ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພວກເຈົ້າວັດຊີ ຍັງສັກກາຣະເຄົາຣົບນັບຖືບູຊາສະຖູບ ໃນແຄວ້ນວັດຊີຂອງຊາວວັດຊີທັງໃນເມືອງ ແລະ ນອກເມືອງ ແລະ ບໍ່ປະລະການບູຊາອັນຊອບທຳທີ່ເຄີຍໃຫ້ເຄີຍທານຕໍ່ເຈດີເຫຼົ່ານັ້ນໃຫ້ເສື່ອມສູນໄປ"

໗. "ດູຣາ ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີຈັດການຖືຮັກສາຄຸ້ມຄອງປ້ອງກັນພຣະອະຣະຫັນທັງຫຼາຍໂດຍທຳ ດ້ວຍຕັ້ງໃຈວ່າ "ເຮັດແນວໃດນໍ ພຣະອະຣະຫັນທີ່ຍັງບໍ່ມາຂໍໃຫ້ມາສູ່ແຄວ້ນຂອງເຮົາ ທ່ານທີ່ມາແລ້ວຂໍຈົ່ງຢູ່ຢ່າງຜາສຸກໃນແຄວ້ນນີ້"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີຈັດການຖືຮັກສາຄຸ້ມຄອງປ້ອງກັນພຣະອະຣະຫັນທັງຫຼາຍໂດຍທຳ ດ້ວຍຕັ້ງໃຈວ່າ "ເຮັດແນວໃດ ພຣະອະຣະຫັນທີ່ຍັງບໍ່ມາຂໍໃຫ້ມາສູ່ແວ່ນແຄວ້ນຂອງເຮົາ ທ່ານທີ່ມາແລ້ວຂໍຈົ່ງຢູ່ຢ່າງຜາສຸກໃນແວ່ນແຄວ້ນນີ້"

"ດູຣາ ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີ ຍັງຈັດການຖືຮັກສາຄຸ້ມຄອງປ້ອງກັນພຣະອະຣະຫັນທັງຫຼາຍໂດຍທຳ ດ້ວຍຕັ້ງໃຈວ່າ "ເຮັດແນວໃດ ພຣະອະຣະຫັນທີ່ຍັງບໍ່ມາ ຂໍໃຫ້ມາສູ່ແຄວ້ນຂອງເຮົາ ທ່ານທີ່ມາແລ້ວ ຂໍຈົ່ງຢູ່ຢ່າງຜາສຸກໃນແຄວ້ນນີ້"

[໑໓໕] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບວັດສະການພາມມະຫາອຳມາດແຄວ້ນມະຄົດວ່າ "ດູຣາ ພາມ ສະໄໝໜຶ່ງ ເຮົາຢູ່ທີ່ສາຣັນທະທະສະຖູບ ເຂດເມືອງເວສາລີໄດ້ສະແດງອະປະຣິຫານິຍະທຳ ໗ ປະການນີ້ ແກ່ພວກເຈົ້າວັດຊີ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະ ໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ວັດສະການພາມມະຫາອຳມາດແຄວ້ນມະຄົດໄດ້ຂາບທູນແນວນີ້ວ່າ "ຂ້າແດ່ ທ່ານພຣະໂຄດົມ ພວກເຈົ້າວັດຊີມີອະປະຣິຫານິຍະທຳແມ່ນພຽງຂໍ້ດຽວ ກໍເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ບໍ່ຈຳຕ້ອງກ່າວວ່າມີຄົບທັງ ໗ ປະການ ຂ້າແດ່ ທ່ານພຣະໂຄດົມ ພຣະຣາຊາແຫ່ງແຄວ້ນມະຄົດ ພຣະນາມວ່າ ອະຊາດສັດຕູເວເທຫິບຸດ ບໍ່ຄວນເຮັດສົງຄາມກັບພວກເຈົ້າວັດຊີນອກຈາກຈະໃຊ້ວິທີເຈລະຈາປອງດອງທາງການທູດ ຫຼື ບໍ່ກໍເຮັດໃຫ້ແຕກສາມັກຄີກັນ ຂ້າແດ່ ທ່ານພຣະໂຄດົມ ຖ້າເປັນແນວນັ້ນ ບັດນີ້ຂ້າພຣະອົງຂໍທູນລາກັບ ເພາະມີກິດຫຼາຍ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ພາມ ຂໍທ່ານຈົ່ງກຳນົດເວລາທີ່ສົມຄວນນັ້ນເທີ້ນ"

ຈາກນັ້ນ ວັດສະການພາມມະຫາອຳມາດແຄວັ້ນມະຄົດມີໃຈຍິນດີ ຊົມຊື່ນ ພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ແລ້ວ ລຸກຈາກບ່ອນນັ່ງຈາກໄປ

## ພິກຂຸອະປະຣິຫານິຍະທຳ

[໑໓໖] ເມື່ອວັດສະການພາມ ມະຫາອຳມາດແຄວັ້ນມະຄົດຈາກໄປບໍ່ດົນ ພຣະຜູ້ມີພຣະພາກຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ “ດູຣາ ອານົນ ທ່ານຈົ່ງໄປນິມົນພິກຂຸທີ່ເຂົ້າມາພັກຢູ່ໃນເມືອງຣາດຊະຄຶຫຸກອົງໃຫ້ມາປະຊຸມກັນຢູ່ຫໍສັນ”

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ໄດ້ນິມົນພິກຂຸທີ່ເຂົ້າມາພັກຢູ່ໃນເມືອງຣາດຊະຄຶ ທຸກອົງໃຫ້ມາປະຊຸມກັນທີ່ຫໍສັນ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບຖວາຍອະພິວາດແລ້ວ ຢືນຢູ່ໃນບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸສົງມາປະຊຸມກັນພ້ອມແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ ຂ້ານ້ອຍ”

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງລຸກຈາກພຸດທະອາດ ສະເດັດເຂົ້າໄປສູ່ຫໍສັນປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ “ດູຣາ ພິກຂຸທັງຫຼາຍ ເຮົາຈະສະແດງອະປະຣິຫານິຍະທຳ ໗ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ” ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດແນວນີ້ວ່າ

“ດູຣາ ພິກຂຸທັງຫຼາຍ”

໑. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງໝັ່ນປະຊຸມກັນຢູ່ເລື້ອຍ ໆ ປະຊຸມກັນຫຼາຍເທື່ອ

໒. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະ ພ້ອມພຽງກັນເຮັດກິດຂອງສົງທີ່ຄວນເຮັດ

໓. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ບັນຍັດ ສິ່ງທີ່ເຮົາບໍ່ໄດ້ບັນຍັດໄວ້ ບໍ່ລົ້ມລ້າງສິ່ງທີ່ເຮົາໄດ້ບັນຍັດໄວ້ແລ້ວ ຖືປະຕິບັດໝັ້ນຕາມສິກຂາບົດທີ່ເຮົາບັນຍັດໄວ້ແລ້ວ

໔. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງສັກກາຣະເຄົາຣົບນັບຖືບູຊາ ພິກຂຸຜູ້ເປັນເຖຣະເປັນຣັດຕັນຍູ ບວດມາດົນເປັນສັງຄະບິດອນ ເປັນສັງຂະປະຣິນາຍົກ ແລະ ໃຫ້ຄວາມສຳຄັນຄຳເວົ້າຂອງທ່ານເຫຼົ່ານັ້ນວ່າ ເປັນສິ່ງຄວນຮັບຟັງ

໕. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ຕົກຢູ່ໃນອຳນາດແຫ່ງຕັນຫາ ກໍ່ໃຫ້ເກີດພົບໃໝ່ທີ່ເກີດຂຶ້ນແລ້ວ

໖. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງເປັນຜູ້ມຸ້ງຫວັງເສນາສະນະປ່າອັນສະຫງັດ

໗. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຕັ້ງສະຕິໄວ້ໃນພາຍໃນວ່າ "ເຮັດແນວໃດ ເພື່ອນພົມມະຈາຣີທັງຫຼາຍ ຜູ້ມີສີນດີງາມທີ່ຍັງບໍ່ມາເພິ່ງມາ ທ່ານທີ່ມາແລ້ວເພິ່ງຢູ່ຢ່າງຜາສຸກ"

ດູຣາ ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່

[໑໓໗] ດູຣາ ພິກຂຸທັງຫຼາຍ ເຮົາຈະສະແດງອະປະຣິຫານິຍະທຳ ໗ ປະການອີກໝວດໜຶ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດແນວນີ້ວ່າ

"ດູຣາ ພິກຂຸທັງຫຼາຍ"

໑. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກມຸ້ນໃນວຽກງານ ບໍ່ຍິນດີໃນວຽກງານ ບໍ່ໝັ່ນປະກອບຄວາມເປັນຜູ້ມັກມຸ້ນໃນວຽກງານອັນເປັນຂອງຄະຫັດ

໒. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກມຸ້ນໃນການເວົ້າໂອ້ລົມກັນ ບໍ່ຍິນດີໃນການເວົ້າໂອ້ລົມກັນ ບໍ່ໝັ່ນປະກອບຄວາມເປັນຜູ້ມັກເວົ້າໂອ້ລົມກັນ

໓. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກການນອນຫຼັບ ບໍ່ຍິນດີການນອນຫຼັບ ບໍ່ໝັ່ນປະກອບຄວາມເປັນຜູ້ມັກການນອນຫຼັບ

໔. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກການສັບປົນດ້ວຍໝູ່ຄະນະ ບໍ່ຍິນດີການສັບປົນໃນໝູ່ຄະນະ ບໍ່ໝັ່ນປະກອບຄວາມເປັນຜູ້ມັກການສັບປົນດ້ວຍໝູ່ຄະນະ

໕. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມີຄວາມປາຖະໜາຊົ່ວ ບໍ່ຕົກໄປສູ່ອຳນາດຂອງຄວາມປາຖະໜາຊົ່ວ

໖. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ມີມິດຊົ່ວ ມີສະຫາຍຊົ່ວ ມີເພື່ອນຊົ່ວ

໗. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ເຖິງຄວາມຢຸດເຊົາໃນລະຫວ່າງການພໍ່າເພັງພຽງເພາະບັນລຸຄຸນວິເສດຊັ້ນຕ່ຳ

ດູຣາ ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳທັງ ໗ ປະ ການນີ້ຢູ່

[໑໖໘] ດູຣາ ພິກຂຸທັງຫຼາຍ ເຮົາຈະສະແດງອະປະຣິຫານິຍະທຳ໗ປະການອີກໝວດໜຶ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ "ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດແນວນີ້ວ່າ

"ດູຣາ ພິກຂຸທັງຫຼາຍ"

໑. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີສັດທາ

໒. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີຫິຣິ (ຄວາມອາຍທີ່ຈະເຮັດບາບ)

໓. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີໂອດຕັບປະ (ຄວາມຢ້ານບາບ)

໔. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງເປັນພະຫູສູດ (ຜູ້ໄດ້ຮ່ຳຮຽນສິກສາມາຫຼາຍ)

໕. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງຜາຣົບຄວາມພຽນ

໖. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີສະຕິຕັ້ງໝັ້ນ

໗. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີປັນຍາ

ດູຣາ ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະ ໃສ່ໃຈອະປະຣິຫານິຍະທຳທັງ ໗ ປະ ການນີ້ຢູ່

[໑໖໙] ດູຣາ ພິກຂຸທັງຫຼາຍ ເຮົາຈະສະແດງອະປະຣິຫານິຍະທຳ ໗ ປະການອີກໝວດໜຶ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກຈຶ່ງເຈົ້າໄດ້ຕັດແນວນີ້ວ່າ

"ດູຣາ ພິກຂຸທັງຫຼາຍ"

໑. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນສະຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມລະນຶກໄດ້)

໒. ພິກຂຸ ເພິ່ງຫວັງໄດ້ ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນ ທຳມະວິຈະຍະສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືການໄຈ້ຫາທຳ)

໓. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງຈະເລີນ ວິຣິຍະ ສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ)

໔. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງຈະເລີນ ປີຕິ ສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ)

໕. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນ ປັດສັດທິ ສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມສະຫງົບກາຍສະຫງົບໃຈ)

໖. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸ ຍັງຈະເລີນ ສະມາທິ ສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ)

໗. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸ ຍັງຈະເລີນ ອຸເປກຂາ ສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມວາງໃຈເປັນກາງ)

ພິກຂຸ ທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະ ໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່

[໑໔໐] ດູຣາ ພິກຂຸທັງຫຼາຍ ເຮົາຈະສະແດງອະປະຣິຫານິຍະທຳ ໗ ປະການອີກໝວດໜຶ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກຈຶ່ງເຈົ້າໄດ້ຕັດແນວນີ້ວ່າ

"ດູຣາ ພິກຂຸທັງຫຼາຍ"

໑. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນ ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)

໒. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນ ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາແຫ່ງທຳທັງປວງ)

໓. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸ ຍັງຈະເລີນ ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)

໔. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸ ຍັງຈະເລີນ ອາທີນະວະສັນຍາ (ກຳນົດໝາຍທຸກໂທດຂອງກາຍ ອັນມີຄວາມເຈັບໄຂ້ຕ່າງ ໆ)

໕. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸ ຍັງຈະເລີນ ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກ ແລະ ບາບທຳທັງ ຫຼາຍ)

໖. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸ ຍັງຈະເລີ ນວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປະນີດ)

໗. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸ ຍັງຈະເລີນ ນິໂຣທະສັນຍາ (ກຳນົດໝາຍນິໂຣທະວ່າເປັນທຳລະອຽດປະນີດ)

ພິກຂຸ ທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີ ອະປະຣິຫານິຍະທຳ ທັງ ໗ ປະການນີ້ຢູ່ ແລະ ໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່

[໑໔໑] ດູຣາ ພິກຂຸທັງຫຼາຍ ເຮົາຈະສະແດງ ອະປະຣິຫານິຍະທຳ ອີກໝວດໜຶ່ງ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດແນວນີ້ວ່າ

"ດູຣາ ພິກຂຸທັງຫຼາຍ"

໑. ພິກຂຸ ເພິ່ງຫວັງໄດ້ ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງຕັ້ງໝັ້ນ ເມດຕາກາຍະກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງ ແລະ ໃນບ່ອນລັບ

໒. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງຕັ້ງໝັ້ນເມດຕາວະຈີກຳ ໃນເພື່ອນພົມມະຈາຣີທັງໃນບ່ອນແຈ້ງ ແລະ ໃນບ່ອນລັບ

໓. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຕັ້ງ ເມດຕາມະໂນກຳ ໃນເພື່ອນພົມມະຈາຣີທັງໃນບ່ອນແຈ້ງ ແລະ ໃນບ່ອນລັບ

໔. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີການບໍລິໂພກໂດຍບໍ່ແບ່ງແຍກລາບທັງຫຼາຍ ອັນປະກອບດ້ວຍທຳ ໄດ້ມາໂດຍທຳໂດຍທີ່ສຸດແມ່ນພຽງບິນທະບາດ (ອາຫານໃນບາດ) ບໍລິໂພກຮ່ວມກັບເພື່ອນພົມມະຈາຣີທັງຫຼາຍຜູ້ມີສິນ

໕. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີສິນທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ຕົກເປັນທາດ ທ່ານຜູ້ຮູ້ສັນລະເສີນ ບໍ່ຖືກຕັນຫາ ແລະ ທິດຖິຄອບງຳ ເປັນໄປເພື່ອສະມາທິ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງ ແລະ ໃນບ່ອນລັບ

໖. ພິກຂຸ ເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີ ອະຣິຍະທິດຖິ ອັນເປັນທຳເຄື່ອງນຳອອກເພື່ອຄວາມສິ້ນທຸກໂດຍທຳ ແກ່ຜູ້ເຮັດຕາມ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງ ແລະ ໃນບ່ອນລັບ

ດູຣາ ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີ ອະປະຣິຫານິຍະທຳທັງ ໖ ປະການນີ້ຢູ່ ແລະ ໃສ່ໃຈອະປະຣິຫານິຍະທຳທັງ ໖ ປະການນີ້ຢູ່"

[໑໔໗] ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ທີ່ພູຄິດຊະກູດ ເຂດເມືອງ ຣາດຊະຄື ຊົງສະແດງທຳມີກະຖາເປັນຈຳນວນຫຼາຍແກ່ພິກຂຸທັງຫຼາຍແນວນີ້ວ່າ "ສີນມີລັກສະນະແນວນີ້ ສະມາທິມີລັກສະນະແນວນີ້ ປັນຍາມີລັກສະນະແນວນີ້ ສະມາທິອັນບຸກຄົນອົບຮົມໂດຍມີສີນເປັນຖານຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ປັນຍາອັນບຸກຄົນອົບຮົມໂດຍມີສະມາທິເປັນຖານຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຈິດອັນບຸກຄົນອົບຮົມໂດຍມີປັນຍາເປັນຖານ ຍ່ອມຫຼຸດພົ້ນໂດຍຊອບຈາກອາສະວະທັງຫຼາຍ ຄື ກາມາສະວະ ພະວາສະວະ ແລະ ອະວິດຊາສະວະ"

[໑໔໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ຕາມຄວາມພໍພຣະທະໄທ ໃນເມືອງຣາດຊະຄື ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ອຳພະລັດທິກາວັນກັນ" ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍ ຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດໄປເຖິງອຳພະລັດທິກາວັນ ປະທັບຢູ່ທີ່ພຣະຣາດຊະຖານໃນອຳພະລັດທິກາວັນແລ້ວ ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ທີ່ພຣະຣາດຊະຖານໃນອຳພະລັດທິກາວັນ ຊົງສະແດງທຳມີກະຖາເປັນຈຳນວນຫຼາຍ ແກ່ພິກຂຸທັງຫຼາຍແນວນີ້ວ່າ "ສີນມີລັກສະນະແນວນີ້ ສະມາທິມີລັກສະນະແນວນີ້ ປັນຍາມີລັກສະນະແນວນີ້ ສະມາທິອັນບຸກຄົນອົບຮົມໂດຍມີສີນເປັນຖານແລ້ວ ຍ່ອມມີຜົນຫຼາຍ ມີອາ ນິສົງຫຼາຍ ປັນຍາອັນບຸກຄົນອົບຮົມໂດຍມີສະມາທິເປັນຖານ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຈິດອັນບຸກຄົນອົບຮົມໂດຍມີປັນຍາເປັນຖານ ຍ່ອມຫຼຸດພົ້ນໂດຍທຳ ຈາກອາສະວະທັງຫຼາຍ ຄື ກາມາສະວະ ພະວາ ສະວະ ແລະ ອະວິດຊາສະວະ"

[໑໔໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ຕາມຄວາມພໍພຣະທະໄທໃນອຳພະລັດຖິກາວັນ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ເມືອງນາລັນທາກັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍ ຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດໄປເຖິງເມືອງນາລັນທາປະທັບຢູ່ທີ່ປາວາລິກຳພະວັນເຂດເມືອງນາລັນທານັ້ນ"

## ທ່ານພຣະສາຣີບຸດບັນລືສີຫະນາດ

[໑໔໕] ຄັ້ງນັ້ນ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງບ່ອນປະທັບຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນແຫ່ງຕົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ ບໍ່ເຄີຍມີຈະບໍ່ມີ ແລະ ບໍ່ມີສະມະນະ ຫຼື ພາມຜູ້ອື່ນ ເຊິ່ງຈະມີປັນຍາໃນທາງພຣະສຳໂພທິຍານຍິ່ງໄປກວ່າພຣະຜູ້ມີພຣະພາກເຈົ້າອີກແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ສາຣີບຸດ ທ່ານກຳລັງກ່າວອາສະພິວາຈາ (ວາຈາອົງອາດ) ທ່ານຖືເອົາພຽງແຕ່ດ້ານດຽວບັນລືສີຫະນາດວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສ ໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ ບໍ່ເຄີຍມີ ຈະບໍ່ມີ ແລະ ບໍ່ມີສະມະນະ ຫຼືພາມຜູ້ອື່ນ ເຊິ່ງຈະມີປັນຍາໃນທາງສຳໂພທິຍານ ຍິ່ງໄປກວ່າພຣະຜູ້ມີພຣະພາກເຈົ້າອີກແລ້ວ"

ດູຣາ ສາຣີບຸດ ທ່ານສາມາດກຳນົດຮູ້ພຣະຫະໄທຂອງພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າທຸກພຣະອົງ ໃນອະດີດຕະການດ້ວຍໃຈຂອງຕົນແລ້ວບໍວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສິນແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແນວນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນແນວນີ້"

ທ່ານພຣະສາຣີບຸດທູນຕອບວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຮູ້ແຈ້ງບໍ່ໄດ້ ຂ້ານ້ອຍ"

"ດູຣາ ສາຣີບຸດ ທ່ານກຳນົດຮູ້ພຣະຫະໄທຂອງພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າທຸກພຣະອົງ ໃນອະນະຄົດຕະການ ດ້ວຍໃຈຂອງຕົນແລ້ວບໍວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈັກຊົງມີສິນແນວນີ້ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈັກຊົງມີທຳແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈັກຊົງມີປັນຍາແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈັກຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈັກຊົງມີທຳເປັນເຄື່ອງຫຼຸດພົ້ນແນວນີ້"

"ຂ້າແຕ່ ພຣະອົງຜູ້ຈະເລີນ ກຳນົດບໍ່ໄດ້ ຂ້ານ້ອຍ"

"ດູຣາ ສາຣີບຸດ ທ່ານກຳນົດຮູ້ໃຈເຮົາ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າໃນບັດນີ້ດ້ວຍໃຈຂອງຕົນແລ້ວບໍວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງມີສິນແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງມີທຳແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງມີປັນຍາແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງມີທຳເປັນເຄື່ອງຫຼຸດພົ້ນແນວນີ້"

"ຂ້າແຕ່ ພຣະອົງຜູ້ຈະເລີນ ກຳນົດບໍ່ໄດ້ ຂ້ານ້ອຍ"

"ດູຣາ ສາຣີບຸດ ກໍໃນເລື້ອງນີ້ ທ່ານບໍ່ມີເຈໂຕປະຣິຍະຍານໃນພຣະອະຣະຫັນຕະ ສຳມາສຳ ພຸດທະເຈົ້າ ທັງໃນອະດີດ ອະນາຄົດ ແລະ ປະຈຸບັນ ເມື່ອເປັນແນວນັ້ນ ບັດນີ້ເພາະເຫດອັນໃດ ທ່ານຈຶ່ງກ້າກ່າວອາສະພິວາຈາ ທ່ານຖືເອົາພຽງດ້ານດຽວບັນລືສີຫະນາດວ່າ "ຂ້າແດ່

ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ ບໍ່ເຄີຍມີ ຈັກບໍ່ມີ ແລະ ຍ່ອມບໍ່ມີສະມະນະ ຫຼື ພາມຜູ້ອື່ນອີກ ເຊິ່ງຈະມີປັນຍາໃນທາງສຳໂພທິຍານທິຍານຍິ່ງກວ່າພຣະຜູ້ມີພຣະພາກເຈົ້າ"

[໑໔໕] ທ່ານພຣະສາຣີບຸດ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເຖິງແມ່ນວ່າຂ້າພຣະອົງຈະບໍ່ມີເຈໂຕປະຣິຍະຍານ ໃນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ທັງໃນອະດີດ ອະນາຄົດ ແລະ ປະຈຸບັນກໍຕາມ ແຕ່ຂ້າພຣະອົງກໍຮູ້ວິທີການອະນຸມານໄດ້ ປຽບຄື ມີເມືອງຊາຍແດນຂອງພຣະເຈົ້າແຜ່ນດິນ ມີຮາກຖານໝັ້ນຄົງ ມີກຳແພງແຂງແຮງ ມີປ້ອມຄ້າຍແຂງແຮງ ມີປະຕູດຽວ ນາຍເຝົ້າປະຕູຂອງເມືອງນັ້ນ ເປັນຄົນສະຫຼຽວ ສະຫຼາດ ຫຼັກແຫຼມ ຫ້າມຄົນທີ່ບໍ່ຮູ້ຈັກ ອະນຸຍາດໃຫ້ຄົນທີ່ຮູ້ຈັກເຂົ້າໄປໄດ້ ເປັນຜູ້ໝັ່ນຍ່າງສຳຫຼວດກວດກາເບິ່ງຫົນ ທາງເຂົ້າອອກ ອ້ອມເມືອງນັ້ນ ບໍ່ໃຫ້ມີຮອຍຕໍ່ ຫຼື ປ່ອງກຳແພງ ໂດຍທີ່ສຸດແມ່ນພຽງແຕ່ພໍແມວລອດອອກໄດ້ ເຂົາຍ່ອມຮູ້ວ່າ "ສັດໃຫຍ່ທຸກຊະນິດ ເມື່ອຈະເຂົ້າ ຫຼື ອອກເມືອງນີ້ ກໍຈະເຂົ້າ ຫຼື ອອກທາງປະຕູນີ້ທໍ່ນັ້ນ" ແມ່ນສັນໃດ ວິທີການອະນຸມານກໍສັນນັ້ນຄືກັນ ຂ້າພຣະອົງຮູ້ວ່າພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າ ທຸກພຣະອົງໃນອະດີດຕະການ ຊົງລະນິວອນ ໕ ທີ່ເປັນເຄື່ອງເສົ້າໝອງໃຈ ບັ່ນທອນກຳລັງປັນຍາໄດ້ໝົດແລ້ວ ມີພຣະຫະໄທໝັ້ນຄົງໃນສະຕິປັດຖານ ໔ ຊົງຈະເລີນໂພດຊົງ ໗ ຕາມຄວາມເປັນຈິງ ຕັດສະຣູ້ອະນຸດຕະຣະ ສຳມາສຳໂພທິຍານແລ້ວ ແມ່ນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ທຸກພຣະອົງ ໃນອະນະຄົດຕະການກໍຈັກຊົງລະນິວອນ ໕ ທີ່ເປັນເຄື່ອງເສົ້າໝອງໃຈ ບັ່ນທອນກຳລັງປັນຍາ ມີພຣະຫະໄທໝັ້ນຄົງໃນສະຕິປັດຖານ ໔ ຊົງຈະເລີນໂພດຊົງ ໗ ຕາມຄວາມເປັນຈິງ ຈັກຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານ ແມ່ນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າໃນບັດນີ້ ກໍຊົງລະນິວອນ ໕ ທີ່ເປັນເຄື່ອງເສົ້າໝອງໃຈ ບັ່ນທອນກຳລັງປັນຍາ ມີພຣະຫະໄທໝັ້ນຄົງໃນສະຕິປັດຖານ ໔ ຊົງຈະເລີນໂພດຊົງ ໗ ຕາມຄວາມເປັນຈິງ ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານຂ້ານ້ອຍ"

[໑໔໗] ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ໃນປາວາລິກຳພະວັນເຂດເມືອງນາລັນທາ ຊົງສະແດງທຳມີກະຖາເປັນຈຳນວນຫຼາຍ ແກ່ພິກຂຸທັງຫຼາຍແນວນີ້ວ່າ "ສິນມີລັກສະນະແນວນີ້ ສະມາທິມີລັກສະນະແນວນີ້ ປັນຍາມີລັກສະນະແນວນີ້ ສະມາທິອັນບຸກຄົນອົບຮົມໂດຍມີສິນເປັນຖານ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ປັນຍາອັນບຸກຄົນອົບຮົມໂດຍມີສະມາທິເປັນຖານ ຍ່ອມມີຜົນຫຼາຍມີອານິສົງຫຼາຍ ຈິດອັນບຸກຄົນອົບຮົມໂດຍມີປັນຍາເປັນຖານຍ່ອມຫຼຸດພົ້ນໂດຍທຳຈາກອາສະວະທັງຫຼາຍມີ ຄື ກາມາສະວະ ພະວາສະວະ ແລະ ອະວິດຊາສະວະ"

## ໂທດຂອງຄົນທຸສີນ ໕ ປະການ

[໑໔໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ຕາມຄວາມພໍພຣະທະໄທ ໃນເມືອງນາລັນທາຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ “ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ປາຕະລິຄາມກັນ”

ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ສະເດັດໄປຮອດປາຕະລິຄາມ ພວກອຸປາສົກອຸປາສິກາຊາວປາຕະລິຄາມໄດ້ຮູ້ວ່າ “ພຣະຜູ້ມີພຣະພາກເຈົ້າ ສະເດັດເຖິງປາຕະລິຄາມ” ຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ໂຜດຊົງຮັບເຮືອນພັກແຮມຂອງພວກຂ້າພຣະອົງ ດ້ວຍເທີ້ນ”

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນດ້ວຍພຣະອາການດຸດສະດີ

ພວກອຸປາສົກອຸປາສິກາຊາວປາຕະລິຄາມ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກບ່ອນນັ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນເຂົ້າໄປສູ່ເຮືອນພັກແຮມ ແລ້ວປູເຄື່ອງລາດທົ່ວເຮືອນພັກແຮມ ແລ້ວປູລາດອາສະນະຕັ້ງໝໍ້ນ້ຳໄຕ້ໄຟນ້ຳມັນໄວ້ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວຢືນຢູ່ຢູ່ບ່ອນສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພວກຂ້າພຣະອົງໄດ້ປູເຄື່ອງລາດທົ່ວເຮືອນພັກແຮມ ແລ້ວປູລາດອາສະນະ ຕັ້ງໝໍ້ນ້ຳໄຕ້ໄຟນ້ຳມັນໄວ້ພ້ອມແລ້ວຂໍພຣະອົງ ຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ ຂ້ານ້ອຍ”

ເມື່ອຮອດເວລາເຊົ້າມາ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ພ້ອມດ້ວຍພິກຂຸສົງສະເດັດເຂົ້າໄປໃນເຮືອນພັກແຮມ ຊົງລ້າງພຣະບາດແລ້ວສະເດັດເຂົ້າສູ່ເຮືອນພັກແຮມ ປະທັບນັ່ງອີງເສົາກາງອວ່າຍພຣະພັກໄປທາງທິດຕາເວັນອອກ

ຝ່າຍພິກຂຸສົງລ້າງຕີນແລ້ວ ກໍເຂົ້າສູ່ເຮືອນພັກແຮມ ນັ່ງອີງຝາດ້ານທິດຕາເວັນຕົກຫັນໜ້າໄປທາງທິດຕາເວັນອອກຢູ່ເບື້ອງປຣິດສະດາງ (ຫຼັງ) ຂອງພຣະຜູ້ມີພຣະພາກເຈົ້າ

ສ່ວນອຸປາສົກອຸປາສິກາຊາວປາຕະລິຄາມລ້າງຕີນແລ້ວ ເຂົ້າສູ່ເຮືອນພັກແຮມນັ່ງອີງຝາດ້ານທິດຕາເວັນອອກຫັນໜ້າໄປທາງທິດຕາເວັນຕົກ ທາງເບື້ອງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ

[໑໔໙] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກອຸປາສົກອຸປາສິກາ ຊາວປາຕະລິຄາມມາຕັດວ່າ "ດູຣາ ຄະຫະບໍດີທັງຫຼາຍ ສິນວິບັດຂອງບຸກຄົນ ຜູ້ທຸສິນ ມີໂທດ ໕ ປະການນີ້ ໂທດ ໕ ປະ ການມີຫຍັງແດ່ ຄື

໑. ບຸກຄົນຜູ້ທຸສິນ ມີສິນວິບັດໃນໂລກນີ້ ຍ່ອມເຖິງຄວາມເສື່ອມໂພຄະຊັບເປັນຈຳນວນຫຼາຍ ເຊິ່ງມີຄວາມຊ່າລືເປັນເຫດ ນີ້ເປັນໂທດປະການທີ່ ໑ ແຫ່ງສິນວິບັດຂອງບຸກຄົນຜູ້ທຸສິນ

໒. ກິດຕິສັບອັນຊົ່ວຂອງບຸກຄົນຜູ້ທຸສິນ ມີສິນວິບັດ ຍ່ອມຊ່າລືໄປ ນີ້ເປັນໂທດປະການທີ ໒ ແຫ່ງສິນວິບັດຂອງບຸກຄົນຜູ້ທຸສິນ

໓. ບຸກຄົນຜູ້ທຸສິນ ມີສິນວິບັດ ຈະເຂົ້າໄປໃນບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມບໍ່ກ້າຫານ ເກີ້ເຂີນ ຢ້ານອາຍ ນີ້ເປັນໂທດປະການທີ ໓ ແຫ່ງສິນວິບັດຂອງບຸກຄົນຜູ້ທຸສິນ

໔. ບຸກຄົນຜູ້ທຸສິນ ມີສິນວິບັດ ຍ່ອມຫຼົງລືມສະຕິຕາຍ ນີ້ເປັນໂທດປະການທີ ໔ ແຫ່ງສິນວິບັດຂອງບຸກຄົນຜູ້ທຸສິນ

໕. ບຸກຄົນຜູ້ທຸສິນມີສິນວິບັດ ຫຼັງຈາກຕາຍແລ້ວ ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ນີ້ເປັນໂທດປະການທີ ໕ ແຫ່ງສິນວິບັດຂອງບຸກຄົນຜູ້ທຸສິນ

"ດູຣາ ຄະຫະບໍດີທັງຫຼາຍ ສິນວິບັດຂອງບຸກຄົນຜູ້ທຸສິນ ມີໂທດ ໕ ປະການນີ້ແລ"

## ອານິສົງຂອງຄົນມີສິນ ໕ ປະການ

[໑໕໐] ດູຣາ ຄະຫະບໍດີທັງຫຼາຍ ສິນສົມບັດຂອງບຸກຄົນຜູ້ມີສິນ ມີອານິສົງ ໕ ປະການນີ້ ອານິສົງ ໕ ປະການມີຫຍັງແດ່ ຄື

໑. ບຸກຄົນຜູ້ມີສິນສົມບູນດ້ວຍສິນໃນໂລກນີ້ ຍ່ອມມີໂພຄະຊັບເປັນຈຳນວນຫຼາຍເຊິ່ງມີຄວາມປະໝາດເປັນເຫດ ນີ້ເປັນອານິສົງປະການທີ ໑ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

໒. ກິດຕິສັບອັນງາມຂອງບຸກຄົນຜູ້ມີສິນສົມບູນດ້ວຍສິນ ຍ່ອມຊ່າລືໄປທົ່ວ ນີ້ເປັນອານິສົງປະການທີ ໒ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

໓. ບຸກຄົນຜູ້ມີສິນສົມບູນດ້ວຍສິນ ຈະເຂົ້າໄປຫາບໍລິສັດໃດ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມກ້າຫານ ບໍ່ເກີ້ເຂີນເຂົ້າໄປ ນີ້ເປັນອານິສົງປະການທີ ໓ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

໔. ບຸກຄົນຜູ້ມີສີນສົມບູນດ້ວຍສີນ ຍ່ອມບໍ່ຫຼົງລືມສະຕິຕາຍ ນີ້ເປັນອານິສົງປະການທີ ໔ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໕. ບຸກຄົນຜູ້ມີສີນສົມບູນດ້ວຍສີນ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ ນີ້ເປັນອານິສົງປະການທີ ໕ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

ດູຣາ ຄະຫະບໍດີທັງຫຼາຍ ສີນສົມບັດຂອງບຸກຄົນຜູ້ມີສີນມີອານິສົງ ໕ ປະການນີ້ແລ[9]

[໑໕໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ ອຸປາສົກ ອຸປາສິກາ ຊາວປາຕະລິຄາມ ເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ສຸກຍູ້ໃຈໃຫ້ອາດຫານ ແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນ ເບີກບານ ດ້ວຍທຳມີກະຖາ ເກືອບຕະຫຼອດຄືນ ຊົງສັ່ງກັບດ້ວຍພຣະດຳຣັດວ່າ "ດູຣາ ຄະຫະບໍດີທັງຫຼາຍ ຣາຕີຜ່ານໄປຫຼາຍແລ້ວ[6] ຂໍທ່ານທັງຫຼາຍຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ" ດູຣາ ອຸປາສົກ ອຸປາສິກາ ຊາວປາຕະລິຄາມທູນຮັບສະໜອງພຣະດຳຣັດແລ້ວ ລຸກຈາກບ່ອນນັ່ງ ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ ເມື່ອອຸປາສົກ ອຸປາສິກາ ຊາວປາຕະລິຄາມເຫຼົ່ານັ້ນຈາກໄປບໍ່ດົນພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ເຮືອນເປົ່າວ່າງ

## ການສ້າງເມືອງປາຕະລິບຸດ

[໑໕໘] ສະໄໝນັ້ນ ມະຫາອຳມາດສຸນິທະ ແລະ ມະຫາອຳມາດວັດສະກາຣະ ຊາວແຄວ້ນມະຄົດໄດ້ສ້າງເມືອງໃນປາຕະລິຄາມ ເພື່ອປ້ອງກັນພວກເຈົ້າວັດຊີ ແຕ່ເທວະດາຈຳນວນຫຼາຍໄດ້ຈັບຈອງອາໄສໃນສະຖານທີ່ເຫຼົ່ານັ້ນໃນປາຕະລິຄາມໄວ້ແລ້ວ ຄວາມປາຖະໜາຂອງພຣະຣາຊາ ແລະ ຣາດຊະມະຫາອຳມາດ ທີ່ມີສັກໃຫຍ່ນ້ອມໄປ ເພື່ອຈະສ້າງນິເວດໃນບ່ອນທີ່ເທວະດາຜູ້ມີສັກໃຫຍ່ຈັບຈອງ ຄວາມປາຖະໜາຂອງພຣະຣາຊາ ແລະ ຣາດຊະມະຫາອຳມາດທີ່ມີສັກປານກາງນ້ອມໄປ ເພື່ອຈະສ້າງນິເວດໃນບ່ອນທີ່ເທວະດາຜູ້ມີສັກປານກາງຈັບຈອງ ຄວາມປາຖະໜາຂອງພຣະຣາຊາ ແລະ ຣາດຊະມະຫາອຳມາດທີ່ມີສັກນ້ອຍ ຍ່ອມນ້ອມໄປເພື່ອຈະສ້າງນິເວດໃນບ່ອນທີ່ເທວະດາຜູ້ມີສັກນ້ອຍຈັບຈອງ

ພຣະຜູ້ມີພຣະພາກເຈົ້າ ຊົງເຫັນເທວະດາຈຳນວນຫຼາຍເຫຼົ່ານັ້ນ ພາກັນຈັບຈອງທີ່ເປັນຈຳນວນພັນ ໆ ແຫ່ງໃນປາຕະລິຄາມດ້ວຍທິບພະຈັກຂຸ ອັນບໍລິສຸດເໜືອມະນຸດ ເມື່ອໃນເວລາເຊົ້າມາຮອດໄດ້ສະເດັດລຸກຂຶ້ນຮັບສັ່ງຮຽກທ່ານພຣະອານົນມາຕັດຖາມວ່າ "ດູຣາ ອານົນ ໃຜຈະສ້າງເມືອງໃນປາຕະລິຄາມ"

ທ່ານພຣະອານົນທູນຕອບວ່າ "ມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະກາຣະ ຊາວແຄວັນມະຄົດກຳລັງຈະສ້າງເມືອງໃນປາຕະລິຄາມ ເພື່ອປ້ອງກັນພວກເຈົ້າວັດຊີ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະ ກາຣະ ຊາວແຄວັນມະຄົດ ຈະສ້າງເມືອງໃນປາຕະລິຄາມ ເພື່ອປ້ອງກັນພວກເຈົ້າວັດຊີ ໄດ້ເປັກສາກັບພວກເທບຊັ້ນຕາວະຕິງສາແລ້ວ ໃນບ່ອນນີ້ເຮົາໄດ້ເຫັນເທວະດາຈຳນວນຫຼາຍພາກັນຈັບຈອງບ່ອນຢູ່ເປັນຈຳນວນຫຼາຍໃນປາຕະລິຄາມ ດ້ວຍທິບພະຈັກຂຸອັນບໍລິສຸດເໜືອມະນຸດ ຈິດຂອງພຣະຣາຊາ ແລະ ຣາດຊະມະຫາອຳມາດທີ່ມີສັກໃຫຍ່ ນ້ອມໄປເພື່ອຈະສ້າງນິເວດໃນບ່ອນທີ່ເທວະດາຜູ້ມີສັກໃຫຍ່ຈັບຈອງ ຈິດຂອງພຣະຣາຊາ ແລະ ຣາດຊະມະຫາອຳມາດທີ່ມີສັກປານກາງ ນ້ອມໄປເພື່ອຈະສ້າງນິເວດ ໃນບ່ອນທີ່ເທວະດາຜູ້ມີສັກປານກາງຈັບຈອງ ຈິດຂອງພຣະຣາຊາ ແລະ ຣາດຊະມະຫາອຳມາດທີ່ມີສັກນ້ອຍ ຍ່ອມນ້ອມໄປເພື່ອຈະສ້າງນິເວດໃນບ່ອນທີ່ເທວະດາຜູ້ມີສັກນ້ອຍຈັບຈອງ ຕາບໃດທີ່ຍັງເປັນແດນທີ່ອາຣະຍະຊົນຕິດຕໍ່ກັນຢູ່ ຕາບໃດທີ່ຍັງເປັນເສັ້ນທາງຄ້າຂາຍ ຕາບນັ້ນເມືອງປາຕະລິບຸດນີ້ຍັງຈະເປັນເມືອງຊັ້ນເລີດ ເປັນບໍລິເວນທີ່ມີການຄ້າຢູ່ຕໍ່ໄປ ແຕ່ເມືອງປາຕະລິບຸດນັ້ນຈະມີອັນຕະລາຍ ໓ ຢ່າງ ຄື ອັນຕະລາຍຈາກໄຟ ອັນຕະລາຍຈາກນ້ຳ ຫຼື ອັນຕະລາຍຈາກການແຕກຄວາມສາມັກຄີ"

[໑໘໓] ຕໍ່ມາ ມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະກາຣະຊາວແຄວັນມະຄົດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບໄດ້ຢູ່ ສົນທະນາປາໄສພໍເປັນທີ່ຊື່ນບານໃຈ ພໍເປັນທີ່ລະນຶກເຖິງກັນແລ້ວຢືນຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍທ່ານພຣະໂຄດົມພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງພວກຂ້າພຣະອົງໃນມື້ນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນດ້ວຍພຣະອາການດຸດສະດີ

ເມື່ອມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະກາຣະ ຊາວແຄວັນມະຄົດຮູ້ພຣະອາການທີ່ພຣະຜູ້ພຣະພາກເຈົ້າ ຊົງຮັບນິມົນແລ້ວ ຈຶ່ງເຂົ້າໄປສູ່ບ່ອນພັກຂອງຕົນສັ່ງໃຫ້ກະກຽມຂອງຂົບສັນອັນປະນີດໄວ້ໃນບ່ອນພັກຂອງຕົນແລ້ວ ໃຫ້ຄົນໄປຂາບທູນແດ່ພຣະຜູ້ມີພຣະພາກເຈົ້າວ່າ "ໄດ້ເວລາແລ້ວ ພັດຕາຫານສຳເລັດພ້ອມແລ້ວ ຂ້ານ້ອຍ"

ເມື່ອໃນເວລາເຊົ້າມາຮອດ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ພ້ອມດ້ວຍພິກຂຸສົງສະເດັດເຂົ້າໄປສູ່ທີ່ພັກຂອງມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະກາຣະຊາວແຄວັນມະຄົດ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ມະຫາອຳມາດທັງສອງໄດ້ນຳຂອງຂົບສັນອັນປະນີດຖວາຍພິກຂຸສົງມີພຣະພຸດທະເຈົ້າ ຊົງເປັນປະທານ

ໃຫ້ອີ່ມໜຳສຳຮານດ້ວຍມືຂອງຕົນເອງແລ້ວ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດໄດ້ວາງພຣະຫັດອອກຈາກບາດແລ້ວ ມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະກາຣະ ຊາວແຄວ້ນມະຄົດ ໃດນັ່ງລົງໃນບ່ອນສົມຄວນສວນແຫ່ງຕົນ ເຊິ່ງຕ່ຳກວ່າບ່ອນນັ່ງຂອງພຣະຜູ້ມີພຣະພາກເຈົ້າ ຊົງອະນຸໂມທະນາດ້ວຍພຣະຄາຖາເຫຼົ່ານີ້ວ່າ

"ບັນດິດຢູ່ໃນທີ່ໃດລ້ຽງດູທ່ານຜູ້ມີສີນ
ຜູ້ສັງລວມປະພຶດພົມມະຈັນໃນບ່ອນທີ່ຕົນຢູ່ນັ້ນ
ເພິ່ງອຸທິດທັກສີນາແກ່ເຫຼົ່າເທວະດາຜູ້ສະຖິດຢູ່ໃນບ່ອນນັ້ນ
ເທວະດາເຫຼົ່ານັ້ນອັນເຂົາບູຊາແລ້ວຍ່ອມບູຊາຕອບ
ອັນເຂົານັບຖືແລ້ວຍ່ອມນັບຖືເຂົາຕອບ
ຈາກນັ້ນຍ່ອມອະນຸເຄາະບັນດິດນັ້ນເປັນການຕອບແທນ
ຄືມານດາອະນຸເຄາະບຸດຜູ້ເກີດຈາກຕົນ
ດັ່ງນັ້ນຜູ້ທີ່ເທວະດາອະນຸເຄາະແລ້ວ
ຍ່ອມພົບເຫັນແຕ່ສິ່ງທີ່ຈະເລີນທຸກເມື່ອ"

ເມື່ອຊົງອະນຸໂມທະນາແກ່ມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະກາຣະຊາວແຄວ້ນມະຄົດດ້ວຍພຣະຄາຖາເຫຼົ່ານີ້ ຊົງລຸກຈາກພຸດທະອາດສະເດັດຈາກໄປ

[໑໕໔] ລຳດັບນັ້ນ ມະຫາອຳມາດສຸນີທະ ແລະ ມະຫາອຳມາດວັດສະກາຣະຊາວແຄວ້ນມະຄົດຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປເບື້ອງປຣິດສະດາງ (ຫຼັງ) ດ້ວຍຄິດວ່າ "ປະຕູທີ່ທ່ານພຣະສະມະນະໂຄດົມ ສະເດັດອອກໄປໃນມື້ນີ້ຈະມີຊື່ວ່າ ປະຕູພຣະໂຄດົມ ທ່າທີ່ພຣະອົງສະເດັດຂ້າມແມ່ນ້ຳຄົງຄາຈະມີຊື່ວ່າ ທ່າພຣະໂຄດົມ"

ຕໍ່ມາ ປະຕູທີ່ພຣະຜູ້ມີພຣະພາກເຈົ້າສະເດັດອອກ ຈຶ່ງໄດ້ມີຊື່ວ່າ ປະຕູພຣະໂຄດົມ ເວລາໃດພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປໃກ້ແມ່ນ້ຳຄົງຄາ ເວລານັ້ນແມ່ນ້ຳຄົງຄາເຕັມພຽງຝັ່ງນົກກາກົ້ມດື່ມກິນໄດ້ ຄົນທັງຫຼາຍຜູ້ປາຖະໜາຈະຂ້າມຟາກ ລາງພວກທ່ຽວຫາເຮືອ ລາງພວກທ່ຽວຫາແພ ບາງພວກມັດປ່ອມ ແຕ່ສຳລັບພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງ ຊົງຫາຍໂຕໄປຈາກຝັ່ງນີ້ຂອງແມ່ນ້ຳຄົງຄາໄປຜາກົດທີ່ຝັ່ງນັ້ນ ຄື ບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ

ພຣະຜູ້ມີພຣະພາກເຈົ້າທອດພຣະເນດຄົນເຫຼົ່ານັ້ນ ຜູ້ປາຖະໜາຈະຂ້າມຟາກ ບາງພວກທ່ຽວຫາເຮືອ ລາງພວກທ່ຽວຫາແພ ລາງພວກມັດປ່ອມ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມນັ້ນແລ້ວຊົງເປັ່ງອຸທານໃນເວລານັ້ນວ່າ

"ຄົນພວກໜຶ່ງກຳລັງສ້າງຂົວ ຂ້າມແມ່ນ້ຳໃຫຍ່ໂດຍບໍ່ໃຫ້ເປີເປື້ອນດ້ວຍຂີ້ຕົມໃນຂະນະທີ່ຄົນອີກຫຼາຍຈຳພວກກຳລັງມັດປ່ອນຢູ່ ແຕ່ຊົນຜູ້ສະຫຼາດໄດ້ຂ້າມພົ້ນໄປແລ້ວ"

**ພານະວານທີ ໑ ຈົບ**

## ເລື້ອງອະຣິຍະສັດ ໔ ປະການ

[໑໕໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ໂກຕິຄາມກັນ" ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າໂດຍຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໂກຕິຄາມປະທັບຢູ່ທີ່ໂກຕິຄາມນັ້ນ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ

"ດູຣາ ພິກຂຸທັງຫຼາຍ ເພາະບໍ່ຮູ້ແຈ້ງແທງຕະຫຼອດ ອະຣິຍະສັດ ໔ ປະການ ເຮົາແລະທ່ານທັງຫຼາຍ ຈຶ່ງພາກັນທ່ອງທ່ຽວໄປໃນວັດຕະສົງສານ ຕະຫຼອດການອັນຍາວນານ ແນວນີ້

ອະຣິຍະສັດ ໔ ປະການມີຫຍັງແດ່ ຄື

໑. ເພາະບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະອະຣິຍະສັດ ເຮົາແລະທ່ານທັງຫຼາຍ ຈຶ່ງພາກັນທ່ອງທ່ຽວໄປໃນວັດຕະສົງສານ ຕະຫຼອດການອັນຍາວນານແນວນີ້

໒. ເພາະບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະສະມຸທະຍະອະຣິຍະສັດ ເຮົາແລະທ່ານທັງຫຼາຍຈຶ່ງພາກັນທ່ອງທ່ຽວໄປໃນວັດຕະສົງສານ ຕະຫຼອດການອັນຍາວນານແນວນີ້

໓. ເພາະບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະນິໂຣທະອະຣິຍະສັດ ເຮົາແລະທ່ານທັງຫຼາຍຈຶ່ງພາກັນທ່ອງທ່ຽວໄປໃນວັດຕະສົງສານ ຕະຫຼອດການອັນຍາວນານແນວນີ້

໔. ເພາະບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດເຮົາແລະທ່ານທັງຫຼາຍ ຈຶ່ງພາກັນທ່ອງທ່ຽວໄປໃນວັດຕະສົງສານ ຕະຫຼອດການອັນຍາວນານ ແນວນີ້

ດູຣາ ພິກຂຸທັງຫຼາຍ ເຮົາ ແລະ ທ່ານທັງຫຼາຍ ໄດ້ຮູ້ແຈ້ງແທງຕະຫຼອດທຸກຂະອະຣິຍະສັດເຮົາແລະທ່ານທັງຫຼາຍ ໄດ້ຮູ້ແຈ້ງແທງຕະຫຼອດທຸກຂະສະມຸທະຍະອະຣິຍະສັດ ເຮົາແລະທ່ານທັງ ຫຼາຍ ໄດ້ຮູ້ແຈ້ງແທງຕະຫຼອດທຸກຂະນິໂຣທະອະຣິຍະສັດ ເຮົາແລະທ່ານທັງຫຼາຍໄດ້ຮູ້ແຈ້ງແທງຕະຫຼອດ ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ເຮົາແລະທ່ານທັງຫຼາຍຖອນພາວະເນດຕິໄດ້ແລ້ວ ໝົດສົ້ງໄປແລ້ວ ບັດນີ້ພົບໃໝ່ບໍ່ມີອີກ"

ພຣະຜູ້ມີພຣະພາກຜູ້ສຸຄົດ ເປັນສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

"ເພາະບໍ່ເຫັນອະຣິຍະສັດ ໔ ຕາມຄວາມເປັນຈິງ
ເຮົາ ແລະ ທ່ານທັງຫຼາຍ ຈຶ່ງພາກັນທ່ອງທ່ຽວໄປ
ໃນຊາດນັ້ນ ໆ ຕະຫຼອດການອັນຍາວນານ
ແຕ່ເພາະໄດ້ເຫັນອະຣິຍະສັດ ໔ ແລ້ວ
ເຮົາ ແລະ ທ່ານທັງຫຼາຍ ຈຶ່ງຖອນພາວະເນດຕິໄດ້
ຕັດຮາກເຫງົ້າແຫ່ງຄວາມທຸກໄດ້ເດັດຂາດ
ບັດນີ້ພົບໃໝ່ບໍ່ມີອີກ"

ໄດ້ຍິນມາວ່າ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ທີ່ໂກຕິຄາມ ຊົງສະແດງທຳມີກະຖາເປັນຈຳນວນຫຼາຍ ແກ່ພິກຂຸທັງຫຼາຍແບບນີ້ວ່າ "ສີນມີລັກສະນະແບບນີ້ ສະມາທິມີລັກສະນະແບບນີ້ ປັນຍາມີລັກສະນະແບບນີ້ ສະມາທິອັນບຸກຄົນອົບຮົມໂດຍມີສີນເປັນຖານຍ່ອມມີຜົນຫຼາຍມີອານິສົງຫຼາຍ ປັນຍາອັນບຸກຄົນອົບຮົມໂດຍມີສະມາທິເປັນຖານ ຍ່ອມມີຜົນຫຼາຍມີອານິສົງຫຼາຍ ຈິດອັນບຸກຄົນອົບຮົມໂດຍມີປັນຍາເປັນຖານ ຍ່ອມຫຼຸດພົ້ນໂດຍທຳ ຈາກອາສະວະ ທັງຫຼາຍ ຄືກາມາສະວະ ພະວາສະວະ ແລະ ອະວິດຊາສະວະ"

ການບໍ່ຫວນກັບຄືນມາ ແລະ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

[໑໕໖] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ຕາມຄວາມພໍພຣະທະໄທໃນໂກຕິຄາມ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ນາທິກະຄາມກັນ" ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໝູ່ໃຫຍ່ສະເດັດເຖິງນາທິກະຄາມ ປະທັບຢູ່ທີ່ພຣະຕຳໜັກດິນຈີ່ ໃນນາທິກະຄາມ

ລຳດັບນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງບ່ອນປະທັບຖວາຍອະພິວາດແລ້ວ ນັ່ງໃນບ່ອນສົມຄວນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ"

ພິກຂຸ ສາລະທະ ທີ່ມໍຣະນະພາບໃນນາທິກະຄາມ ມີຄະຕິເປັນແບບໃດ ມີພົບໜ້າເປັນແບບໃດ?

ພິກຂຸນີ ນັນທາ ທີ່ມໍຣະນະພາບໃນນາທິກະຄາມ ມີຄະຕິເປັນແບບໃດ ມີພົບໜ້າເປັນແບບໃດ?

ອຸປາສົກ ສຸທັດຕະ ທີ່ສັ່ງງຊີວິດໃນນາທິກະຄາມ ມີຄະຕິເປັນແນວໃດ ມີພົບໜ້າເປັນແນວໃດ?

ອຸປາສິກາ ສຸຊາດາ ທີ່ສັ່ງງຊີວິດໃນນາທິກະຄາມ ມີຄະຕິເປັນແນວໃດມີ ພົບໜ້າເປັນແນວໃດ?

ອຸບາສົກກ ກຸທະ ທີ່ສັ່ງງຊີວິດໃນນາທິກະຄາມ ມີຄະຕິເປັນແນວໃດ ມີພົບໜ້າເປັນແນວໃດອຸປາສົກກາຣະລິມະພະ ຯລຯ ອຸປາສົກນິກະຕະ ຯລຯ ອຸປາສົກກະຕິດສະຫະ ຯລຯ ອຸປາສົກຕຸດຖະ ຯລຯ ອຸປາສົກສັນຕຸດຖະ ຯລຯ ອຸປາສົກພະຕະ ຯລຯ ອຸປາສົກສຸປະຕະທີ່ສັ່ງງຊີວິດໃນນາທິກະຄາມ ມີຄະຕິເປັນແນວໃດ? ມີພົບໜ້າເປັນແນວໃດ?

[໑໕໗] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸສາລະຫະ ເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະສັ່ງງໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນິນັນທາເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສັ່ງງໄປປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສົກ ສຸທັດຕະ ເປັນພຣະສະກະທາຄາມີ ເພາະສັງໂຍດ ໓ ປະການສັ່ງງໄປແລະເພາະຣາຄະ ໂທສະ ໂມຫະ ເບົາບາງ ມາສູ່ພົບນີ້ອີກພຽງເທື່ອດຽວ ກໍຈະທຳທີ່ສຸດແຫ່ງຄວາມທຸກໄດ້

ອຸປາສິກາ ສຸຊາດາ ເປັນພຣະໂສດາບັນເພາະສັງໂຍດ ໓ ປະການສັ່ງງໄປບໍ່ມີທາງຕ່ຳຕ້ອຍມີຄວາມແນ່ນອນ ທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

ອຸບາສົກກ ກຸທະ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສັ່ງງໄປປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສົກກາ ລະລິມພະ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສັ່ງງໄປປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສົກ ນິກະຕະ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສັ່ງງໄປປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສົກ ກະຕິດສະຫະ ເປັນໂອປະປາຕິກະເພາະສັງໂຍດເບື້ອງຕ່ຳ ໕ ປະການສັ່ງງໄປປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສົກ ຕຸດຖະ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສັ່ງງໄປປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສິກ ສັນຕຸດຖະ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປປະ ຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສິກ ພະຕະ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສິກ ສຸປະຕະ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປປະຣິ ນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສິກໃນນາທິກະຄາມອີກ ໕໐ ຄົນ ສິ້ນຊີວິດແລ້ວເປັນໂອປະປາຕິກະເພາະສັງໂຍດ ເບື້ອງຕ່ຳ ໕ ປະການສິ້ນໄປ ປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ

ອຸປາສິກໃນນາທິກະຄາມອີກ ໙໖ ຄົນ ສິ້ນຊີວິດແລ້ວ ເປັນພຣະສະກະທາຄາມີ ເພາະ ສັງໂຍດ ໓ ປະການສິ້ນໄປ ແລະ ເພາະ ຣາຄະ ໂທສະ ໂມຫະ ເບົາບາງມາສູ່ໂລກນີ້ອີກພຽງ ເທື່ອດຽວກໍຈະທຳທີ່ສຸດແຫ່ງຄວາມທຸກໄດ້

ອຸປາສິກໃນນາທິກະຄາມອີກ ໕໑໐ ຄົນສິ້ນຊີວິດແລ້ວ ເປັນພຣະໂສດາບັນເພາະສັງໂຍດ ໓ ປະການສິ້ນໄປ ບໍ່ມີທາງຕ່ຳຕ້ອຍມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

## ຫຼັກທຳທີ່ຊື່ວ່າແວ່ນຂອງທຳ

[໑໕໗] ດູຣາ ອານົນ ຂໍ້ທີ່ບຸກຄົນເກີດເປັນມະນຸດແລ້ວສິ້ນຊີວິດນັ້ນບໍ່ແມ່ນເລື້ອງເປັນຕາ ງຶດ ແຕ່ເມື່ອຜູ້ນັ້ນ ໆ ສິ້ນຊີວິດແລ້ວ ພວກທ່ານເຂົ້າມາຫາຕະຖາຄົດ ຖາມເລື້ອງນັ້ນ ໆ ເປັນ ການຣົບກວນຕະຖາຄົດ ສະນັ້ນ ເຮົາຈະສະແດງຫຼັກທຳທີ່ຊື່ວ່າ ແວ່ນທຳ ເປັນເຄື່ອງມືໃຫ້ອະຣິ ຍະສາວົກ ມີໄວ້ເມື່ອປະສົງກໍຈະເພິ່ງພະຍາກອນຕົນໄດ້ດ້ວຍຕົນເອງວ່າ “ເຮົາໝົດສິ້ນເຫດທີ່ຈະ ພາໃຫ້ໄປເກີດໃນນະຣົກແລ້ວ ໝົດສິ້ນເຫດທີ່ໃຫ້ໄປເກີດໃນກຳເນີດສັດດີຣັດສານແລ້ວ ໝົດສິ້ນ ເຫດທີ່ພາໃຫ້ໄປເກີດໃນແດນເຜດແລ້ວ ໝົດສິ້ນເຫດທີ່ພາໃຫ້ໄປເກີດໃນອະບາຍ ທຸກຄະຕິ ແລະ ວິນິບາດແລ້ວ ເຮົາເປັນພຣະໂສດາບັນ ບໍ່ມີທາງຕ່ຳຕ້ອຍ ມີຄວາມແນ່ນອນທີ່ຈະສຳເລັດ ສຳໂພທິໃນມື້ຂ້າງໜ້າ”

[໑໕໘] ຫຼັກທຳທີ່ຊື່ວ່າ ແວ່ນທຳ ເປັນເຄື່ອງມືໃຫ້ອະຣິຍະສາວົກມີໄວ້ໃຊ້ພິດຈະຣະນາເມື່ອ ປະສົງກໍສາມາດໃຊ້ພະຍາກອນຕົນໄດ້ດ້ວຍຕົນເອງວ່າ “ເຮົາໝົດສິ້ນເຫດທີ່ໃຫ້ໄປເກີດໃນນະຣົກ ໝົດສິ້ນເຫດທີ່ໃຫ້ໄປເກີດໃນກຳເນີດສັດດີຣັດສານ ໝົດສິ້ນເຫດທີ່ພາໃຫ້ໄປເກີດໃນແດນເຜດ ໝົດສິ້ນເຫດທີ່ພາໃຫ້ໄປເກີດໃນ ອະບາຍ ທຸກຄະຕິ ແລະ ວິນິບາດແລ້ວ ເຮົາເປັນພຣະໂສດາ

ບັນ ບໍ່ມີທາງຕໍ່າຕ້ອຍ ມີຄວາມແນ່ນອນ ທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ" ຄືຫຍັງ? ຄື ພຣະອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະ ຈາຣະນະສະ ເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ"

໒. ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນຊັດແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

໓. ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດຊື່ກົງ ປະຕິບັດຖືກຕ້ອງ ປະຕິບັດສົມຄວນໄດ້ແກ່ອະຣິຍະບຸກຄົນ ໔ ຄູ່ ມີ ໘ ບຸລຸດ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກສິນາ ຄວນແກ່ການເຮັດອັນຊະລີ ເປັນນາບຸນອັນຍອດຢ້ຽມຂອງໂລກ"

໔. ປະກອບດ້ວຍສີນທີ່ພຣະອະຣິຍະເຈົ້າພໍໃຈ ທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ເປັນແປ້ວບໍ່ຕົກເປັນທາດ ທ່ານຜູ້ຮູ້ສັນລະເສີນ ບໍ່ຖືກຕັນຫາ ແລະ ທິດຖິຄອບງຳ ເປັນໄປເພື່ອສະມາທິ

ດູຣາ ອານົນ ນີ້ແລ ຄື ຫຼັກທຳທີ່ຊື່ວ່າແວ່ນທຳ ເປັນເຄື່ອງມືໃຫ້ອະຣິຍະສາວົກ ມີໄວ້ເມື່ອປະສົງກໍຈະເພິ່ງພະຍາກອນຕົນໄດ້ດ້ວຍຕົນເອງວ່າ "ເຮົາໝົດສັ້ງງເຫດທີ່ພາໃຫ້ໄປເກີດໃນນະຣົກ ໝົດສັ້ງງເຫດທີ່ພາໃຫ້ໄປເກີດໃນກຳເນີດສັດດີຣັດສານ ໝົດສັ້ງງເຫດທີ່ພາໃຫ້ໄປເກີດໃນແດນເຜດ ໝົດສັ້ງງເຫດທີ່ພາໃຫ້ໄປເກີດໃນ ອະບາຍ ທຸກຄະຕິ ແລະ ວິນິບາດ ແລ້ວເຮົາເປັນພຣະໂສດາບັນບໍ່ມີທາງຕໍ່າຕ້ອຍ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ"

ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ໃນຕຳໜັກດິນຈີ່ໃນນາທິກະຄາມນັ້ນ ຊົງສະແດງທຳມີກະຖາເປັນຈຳນວນຫຼາຍ ແກ່ພິກຂຸທັງຫຼາຍແນວນີ້ວ່າ "ສີນມີລັກສະນະແນວນີ້ ສະມາທິມີລັກສະນະແນວນີ້ ປັນຍາມີລັກສະນະແນວນີ້ ສະມາທິອັນບຸກຄົນອົບຣົມໂດຍມີສີນເປັນຖານຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ປັນຍາອັນບຸກຄົນອົບຣົມໂດຍມີສະມາທິເປັນຖານ ຍ່ອມມີຜົນຫຼາຍມີອານິສົງຫຼາຍ ຈິດອັນບຸກຄົນອົບຣົມໂດຍມີປັນຍາເປັນຖານ ຍ່ອມຫຼຸດພົ້ນໂດຍຊອບຈາກອາສະວະທັງຫຼາຍ ຄື ກາມາສະວະ ພະວາສະວະ ແລະ ອະວິດຊາສະວະ"

[໑໖໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນນາທິກະຄາມ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປໃນເມືອງເວສາລີກັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງເມືອງເວສາລີ ປະທັບຢູ່ທີ່ອຳພະປາລີວັນ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະ ນີ້ເປັນຄຳສັ່ງສອນຂອງເຮົາສຳລັບທ່ານທັງຫຼາຍ

ດູຣາ ພິກຂຸທັງຫຼາຍ ພິກຂຸຜູ້ມີສະຕິເປັນແນວໃດ ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ฯລฯ

໓. ພິຈາລະນາເຫັນຈິດໃນຈິດຢູ່ ฯລฯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ພິກຂຸຜູ້ມີສະຕິເປັນແນວນີ້ແລ

ດູຣາ ພິກຂຸທັງຫຼາຍ ພິກຂຸຜູ້ມີສຳປະຊັນຍະເປັນແນວໃດ ຄື ພິກຂຸໃນທຳວິໄນນີ້

ທຳຄວາມຮູ້ສຶກໂຕໃນການກ້າວໄປ ໃນການຖອຍຫຼັງ
ທຳຄວາມຮູ້ສຶກໂຕໃນການເບິ່ງ ການຫຼຽວເບິ່ງ
ທຳຄວາມຮູ້ສຶກໂຕໃນການຄູ້ເຂົ້າ ການຢຽດອອກ
ທຳຄວາມຮູ້ສຶກໂຕໃນການຄອງ ສັງຄາ ບາດ ແລະ ຈີວອນ
ທຳຄວາມຮູ້ສຶກໂຕໃນການສັນ ການດື່ມ ການຫຍ້ຳ ການຊີມ
ທຳຄວາມຮູ້ສຶກໂຕໃນການຖ່າຍອຸດຈາຣະ ປັດສາວະ

ທຳຄວາມຮູ້ສຶກໂຕໃນການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າການນິ່ງ ພິກຂຸຜູ້ມີສຳປະຊັນຍະເປັນແນວນີ້ແລ

ດູຣາ ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຢູ່ນີ້ ເປັນຄຳສັ່ງສອນຂອງເຮົາສຳລັບທ່ານທັງຫຼາຍ"

## ນາງອຳພະປາລີຄະນິກາ

[໑໖໑] ນາງອຳພະປາລີຄະນິກາຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າ ສະເດັດເຖິງເມືອງເວສາລີ ປະທັບຢູ່ທີ່ສວນໝາກມ່ວງຂອງເຮົາ" ລຳດັບນັ້ນ ນາງອຳພະປາລີຄະນິກາໃຫ້ກະກຽມຍານພາຫະນະຄັນງາມ ໆ ຂຶ້ນຍານພາຫະນະຄັນງາມ ໆ ນັ້ນແລ້ວ ອອກຈາກເມືອງເວສາລີພ້ອມດ້ວຍຍານພາຫະນະຄັນງາມ ໆ ຕິດຕາມອີກຫຼາຍຄັນ ຊື່ກົງໄປສູ່ສວນຂອງຕົນຈົນສຸດທາງທີ່ຍານພາຫະນະຈະເຂົ້າໄປໄດ້ ແລ້ວໄດ້ລົງຈາກຍານພາຫະນະຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ນາງອຳພະປາລີຄະນິກາເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ ຈາກນັ້ນນາງອຳພະປາລີຄະນິກາຜູ້ອັນພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງ ໂຜດຮັບພັດຕາຫານຂອງຂ້ານ້ອຍໃນມື້ອື່ນນີ້ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນດ້ວຍພຣະອາການດຸດສະດີ

ລຳດັບນັ້ນ ເມື່ອນາງຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວ ຈຶ່ງລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

ພວກເຈົ້າ ລິດສະຫວີ ເມືອງເວສາລີໄດ້ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າ ສະເດັດເຖິງເມືອງເວສາລີປະທັບຢູ່ທີ່ອຳພະປາລີວັນ ຈຶ່ງສັ່ງໃຫ້ກະກຽມຍານພາຫະນະຄັນງາມ ໆ ສະເດັດຂຶ້ນຍານພາຫະນະຄັນງາມ ໆ ອອກຈາກເມືອງເວສາລີ ພ້ອມດ້ວຍຍານພາຫະນະຄັນງາມ ໆ ຕາມສະເດັດອີກຫຼາຍຄັນ ໃນບັນດາເຈົ້າລິດສະຫວີນັ້ນ ລາງພວກໃຊ້ສີດຳ ຊົງຜ້າສີດຳ ຊົງເຄື່ອງປະດັບສີດຳ ລາງພວກໃຊ້ສີເຫຼືອງລ້ວນ ຊົງຜ້າສີເຫຼືອງ ຊົງເຄື່ອງປະດັບສີເຫຼືອງ ລາງພວກໃຊ້ສີແດງລ້ວນ ຊົງຜ້າສີແດງ ຊົງເຄື່ອງປະດັບສີແດງ ລາງພວກໃຊ້ສີຂາວລ້ວນ ຊົງຜ້າສີຂາວ ຊົງເຄື່ອງປະດັບສີຂາວ

ນາງອຳພະປາລີຄະນິກາ ໃຊ້ເພົາກະທົບເພົາ ກົງລໍ້ກະທົບກົງລໍ້ ແອກກະທົບແອກໃສ່ລົດພວກເຈົ້າລິດສະຫວີໜຸ່ມ ໆ

ພວກເຈົ້າລິດສະຫວີຈຶ່ງຕັດຖາມວ່າ "ອຳພະປາລີ ເປັນຫຍັງເຈົ້າ ຈຶ່ງໃຊ້ເພົາກະທົບເພົາກົງລໍ້ກະທົບກົງລໍ້ ແອກກະທົບແອກ ໃສ່ລົດເຈົ້າລິດສະຫວີໜຸ່ມ ໆ ແນວນີ້"

ນາງອຳພະປາລີທູນຕອບວ່າ "ຂ້າແດ່ ພຣະລູກເຈົ້າ ເພາະຂ້ານ້ອຍທູນນິມົນພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງ ໃຫ້ຊົງຮັບພັດຕາຫານໃນມື້ອື່ນນີ້"

ພວກເຈົ້າລິດສະຫວີຕັດວ່າ "ທ່ານຈົ່ງໃຫ້ພັດຕາຫານມື້ນີ້ ແລກປ່ຽນກັບເງິນ ໑໐໐,໐໐໐ ເທີ້ນ"

ນາງອຳພະປາລີທູນວ່າ "ແມ່ນພວກທ່ານຈະຍົກເມືອງເວສາລີ ພ້ອມທັງແວ່ນແຄວັນທັງໝົດໃຫ້ຂ້ານ້ອຍ ຂ້ານ້ອຍກໍບໍ່ຍອມຍົກພັດຕາຫານມື້ສຳຄັນໃຫ້ແກ່ພວກທ່ານດອກ"

ທັນໃດນັ້ນ ພວກເຈົ້າລິດສະຫວີ ຊົງດີດພຣະອົງຄຸລີພ້ອມຕັດວ່າ "ທ່ານທັງຫຼາຍ ນາງອຳພະປາລີຊະນະພວກເຮົາແລ້ວນໍ ນາງອຳພະປາລີຊະນະພວກເຮົາແລ້ວນໍ" ແລ້ວສະເດັດໄປສູ່ອຳພະປາລີວັນ

ພຣະຜູ້ມີພຣະພາກເຈົ້າ ທອດພຣະເນດເຫັນພວກເຈົ້າລິດສະຫວີ ສະເດັດມາແຕ່ໄກຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ຜູ້ທີ່ບໍ່ເຄີຍເຫັນພວກເທບຊັ້ນຕາວະຕິງສາ ຈົ່ງເບິ່ງພວກເຈົ້າລິດສະຫວີ ຈົ່ງປຽບທຽບພວກເຈົ້າລິດສະຫວີກັບພວກເທບຊັ້ນຕາວະຕິງສານັ້ນເທີ້ນ"

ພວກເຈົ້າລິດສະຫວີສະເດັດໄປດ້ວຍຍານພາຫະນະ ຈົນສຸດທາງທີ່ຍານພາຫະນະຈະເຂົ້າໄປໄດ້ ແລ້ວສະເດັດລົງຈາກຍານພາຫະນະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນແຫ່ງຕົນແລ້ວ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພວກເຈົ້າລິດສະຫວີເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນເບີກບານດ້ວຍທຳມີກະຖາ ພວກເຈົ້າລິດສະຫວີຜູ້ອັນພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານ ດ້ວຍທຳມີກະຖາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງ ໂຜດຮັບພັດຕາຫານຂອງພວກຂ້າພຣະອົງໃນມື້ອື່ນນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເຮົາໄດ້ຮັບນິມົນເພື່ອສັນພັດຕາຫານໃນມື້ອື່ນນີ້ຂອງນາງອຳພະປາລີໄວ້ແລ້ວ"

ພວກເຈົ້າລິດສະຫວີ ຊົງດີດພຣະອົງຄຸລີພ້ອມຕັດວ່າ "ນາງອຳພະປາລີຊະນະພວກເຮົາແລ້ວນໍ ນາງອຳພະປາລີຊະນະພວກເຮົາແລ້ວນໍ"" ຈາກນັ້ນ ພວກເຈົ້າລິດສະຫວີຕ່າງຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ສະເດັດລຸກຈາກບ່ອນປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

[໑໗໔] ເມື່ອຄືນນັ້ນຜ່ານໄປ ນາງອຳພະປາລີຄະນິກາ ສັ່ງໃຫ້ກະກຽມຂອງຂົບສັນອັນປະນີດໄວ້ໃນສວນຂອງຕົນ ແລ້ວໃຫ້ຄົນໄປຂາບທູນເວລາແດ່ພຣະຜູ້ມີພຣະພາກເຈົ້າ ວ່າ "ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ"

ຕອນເຊົ້າມາພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນພ້ອມດ້ວຍພິກຂຸສົງ ສະເດັດເຂົ້າໄປສູ່ບ່ອນພັກຂອງນາງອຳພະປາລີຄະນິກາ ປະທັບເທິງພຸດທະອາດທີ່ປູລາດໄວ້ແລ້ວ

ນາງອຳພະປາລີຄະນິກາ ໄດ້ນຳຂອງຂົບສັນອັນປະນີດຖວາຍພິກຂຸສົງ ອັນມີພຣະພຸດທະເຈົ້າເປັນປະທານ ໃຫ້ອີ່ມໜຳສຳຣານດ້ວຍມືຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ວາງພຣະຫັດອອກຈາກບາດ ນາງອຳພະປາລີຄະນິກາ ຈຶ່ງໄດ້ເລືອກນັ່ງຢູ່ບ່ອນສົມຄວນສ່ວນແຫ່ງຕົນ ເຊິ່ງຢູ່ຕ່ຳກວ່າໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍຂໍມອບຖວາຍສວນແຫ່ງນີ້ແດ່ພິກຂຸສົງ ອັນມີພຣະພຸດທະເຈົ້າຊົງເປັນປະທານ"

ພຣະຜູ້ມີພຣະພາກເຈົ້າຊົງຮັບສວນນັ້ນແລ້ວ ຈຶ່ງຊົງຊີ້ແຈ່ງໃຫ້ນາງອຳພະປາລີຄະນິກາເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນເບີກບານດ້ວຍທຳມີກະຖາ ແລ້ວຊົງລຸກຈາກພຸດທະອາດ ສະເດັດຈາກໄປ ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ອຳພະປາລີວັນ ເຂດເມືອງເວສາລີ ຊົງສະແດງທຳມີກະຖາເປັນຈຳນວນຫຼາຍ ແກ່ພິກຂຸທັງຫຼາຍແບບນີ້ວ່າ "ສີນມີລັກສະນະແບບນີ້ ສະມາທິມີລັກສະນະແບບນີ້ ປັນຍາມີລັກສະນະແບບນີ້ ສະມາທິອັນບຸກຄົນອົບຮົມໂດຍມີສີນເປັນຖານ ຍ່ອມມີຜົນຫຼາຍມີອານິສົງຫຼາຍ ປັນຍາອັນບຸກຄົນອົບຮົມໂດຍມີສະມາທິເປັນຖານ ຍ່ອມມີຜົນຫຼາຍມີອານິສົງຫຼາຍ ຈິດອັນບຸກຄົນອົບຮົມໂດຍມີປັນຍາເປັນຖານຍ່ອມຫຼຸດພົ້ນໂດຍຊອບ ຈາກອາສະວະທັງຫຼາຍ ອັນມີ ກາມາສະວະ ພະວາສະວະ ແລະ ອະວິດຊາສະວະ"

## ຊົງເຂົ້າຈຳພັນສາໃນເວລຸວະຄາມ

[໑໗໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຕາມຄວາມພໍພຣະທະໄທ ໃນອຳພະປາລີວັນແລ້ວຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະໄປສູ່ເວລຸວະຄາມກັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ສະເດັດເຖິງເວລຸວະຄາມ ປະທັບຢູ່ໃນເວລຸວຄາມນັ້ນ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ພວກທ່ານຈົ່ງຈຳພັນສາອ້ອມເມືອງເວສາລີ ຕາມ

ບ່ອນທີ່ມີເພື່ອນຢູ່ ຕາມບ່ອນທີ່ມີຄົນລຶ້ງແກ່ນກັນ ຕາມບ່ອນທີ່ມີຄົນຮັກແພງກັນ ສ່ວນເຮົາຈະຈຳພັນສາໃນເວລຸວະຄາມນີ້"

ພວກພິກຂຸທູນຮັບສະໜອງພຣະດຳຣັດແລ້ວ ໄດ້ພາກັນຈຳພັນສາຢູ່ອ້ອມເມືອງເວສາລີ ຕາມທີ່ທີ່ມີເພື່ອນຮູ້ຈັກກັນ ຕາມບ່ອນທີ່ມີຄົນລຶ້ງແກ່ນກັນ ຕາມບ່ອນທີ່ມີຄົນຮັກແພງກັນ ສ່ວນພຣະຜູ້ມີພຣະພາກເຈົ້າ ຊົງຈຳພັນສາໃນເວລຸວະຄາມນັ້ນ

[໑໖໔] ລຳດັບນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຈຳພັນສາໄດ້ເກີດມີອາການພຣະປະຊວນຂຶ້ນຢ່າງຮຸນແຮງ ມີທຸກຂະເວທະນາ໌ ຢ່າງແສນສາຫັດ ໃກ້ເກືອບຈະປະຣິນິບພານ ພຣະອົງຊົງມີສະຕິສຳປະຊັນຍະ ຊົງອົດກັ້ນ ບໍ່ຫວັ່ນໄຫວ ຊົງພຣະດຳຣິວ່າ "ການທີ່ເຮົາບໍ່ບອກຜູ້ອຸປັດຖາກ ບໍ່ອຳລາພິກຂຸສົງ ປະຣິນິບພານໄປແນວນີ້ນັ້ນ ບໍ່ເໝາະແກ່ເຮົາ ທາງທີ່ດີເຮົາຄວນໃຊ້ຄວາມພຽນຂັບໄລ່ອາພາດນີ້ ດຳຣົງຊີວິດສັງຂານຢູ່ຕໍ່ໄປ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງໃຊ້ຄວາມພຽນຂັບໄລ່ອາການພຣະປະຊວນນັ້ນ ຊົງດຳຣົງຊີວິດສັງຂານຢູ່ ອາການພຣະປະຊວນຈຶ່ງສະຫງົບ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫາຍຈາກພຣະປະຊວນ ຫາຍຈາກພຣະອາການໄຂ້ບໍ່ດົນ ໄດ້ສະເດັດອອກຈາກພຣະວິຫານໄປປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວໃນຮົ່ມເງົາພຣະວິຫານ

ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງໄດ້ເຫັນພຣະສຸກຂະພາບຂອງພຣະອົງແລ້ວ ໄດ້ເຫັນພຣະອົງຊົງອົດທົນຕໍ່ທຸກຂະເວທະນາແລ້ວ ເຮັດໃຫ້ຮ່າງກາຍຂອງຂ້າພຣະອົງອ່ອນເປັ້ຍລ່ອຍຄືຄົນເມົາ ຂ້າພຣະອົງຮູ້ສຶກມືດທຸກດ້ານ ແມ່ນທຳກໍບໍ່ຜາກົດແກ່ຂ້າພຣະອົງອີກແລ້ວ ເພາະພຣະອາການໄຂ້ຂອງພຣະຜູ້ມີພຣະພາກເຈົ້າ ແຕ່ຂ້າພຣະອົງກໍຍັງເບົາໃຈຢູ່ໜ້ອຍໜຶ່ງວ່າ "ພຣະຜູ້ມີພຣະພາກເຈົ້າ ຈະຍັງບໍ່ປະຣິນິບພານຕາບເທົ່າທີ່ຍັງບໍ່ໄດ້ຜາຣົບພິກຂຸສົງ ພ້ອມຕັດພຣະພຸດພົດແນວໃດແນວໜຶ່ງ"

[໑໖໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ອານົນ ພິກຂຸສົງ ຍັງຈະຫວັງໄດ້ຫຍັງຈາກເຮົາອີກນໍ ທຳທີ່ເຮົາສະແດງແລ້ວບໍ່ມີໃນບໍ່ມີນອກ ໃນເລື້ອງທຳທັງຫຼາຍຕະຖາຄົດບໍ່ມີອາຈະຣິຍະມຸດຖິ ຜູ້ທີ່ຄິດວ່າເຮົາທີ່ນັ້ນຈັກເປັນຜູ້ບໍລິຫານພິກຂຸສົງຕໍ່ໄປ ຫຼື ວ່າ ພິກຂຸສົງຈະຕ້ອງຢຶດເຮົາທີ່ນັ້ນເປັນຫຼັກ ຜູ້ນັ້ນຈະຕ້ອງຜາຣົບພິກຂຸສົງແລ້ວກ່າວແນວໃດແນວໜຶ່ງເປັນແທ້ ແຕ່ຕະຖາຄົດບໍ່ຄິດວ່າເຮົາທີ່ນັ້ນ ຈັກເປັນຜູ້ບໍລິຫານພິກຂຸສົງຕໍ່ໄປ ຫຼືວ່າ ພິກຂຸສົງຈະຕ້ອງຢຶດເຮົາທີ່ນັ້ນເປັນຫຼັກ ແລ້ວເປັນຫຍັງຕະຖາຄົດຈະຕ້ອງຜາຣົບພິກຂຸສົງກ່າວແນວໃດແນວໜຶ່ງອີກນໍ

ບັດນີ້ເຮົາເປັນຜູ້ຊະຣາ ແກ່ເຖົ້າແລ້ວ ລ່ວງການມາດົນ ຜ່ານອາຍຸມາຫຼາຍ ເຮົາມີອາຍຸ ໘໐ ປີ ຮ່າງກາຍຂອງຕະຖາຄົດກໍຄືກັບກວຽນເກົ່າ ທີ່ສ້ອມແຊມດ້ວຍໄມ້ໄຜ່ ຍັງຢູ່ໄດ້ແຕ່ກໍຄືກັບກວຽນເກົ່າທີ່ສ້ອມແຊມດ້ວຍໄມ້ໄຜ່ມາໂດຍນານແລ້ວ ສະນັ້ນ ຮ່າງກາຍຂອງຕະຖາຄົດສະບາຍຂຶ້ນໄດ້ກໍເພາະໃນເວລາທີ່ຕະຖາຄົດເຂົ້າເຈໂຕສະມາທິ ອັນບໍ່ມີນິມິດເພາະບໍ່ໃສ່ໃຈນິມິດທຸກຢ່າງ ແລະ ເພາະດັບເວທະນາບາງຢ່າງໄດ້ທີ່ນັ້ນ

ດູຣາ ອານົນ ເພາະເຫດນັ້ນແລ ພວກທ່ານຈົ່ງມີຕົນເປັນບ່ອນອາໄສ ມີຕົນເປັນທີ່ເພິ່ງບໍ່ຄວນມີສິ່ງອື່ນເປັນທີ່ເພິ່ງ ມີທໍາເປັນບ່ອນອາໄສ ມີທໍາເປັນທີ່ເພິ່ງ ບໍ່ຄວນມີສິ່ງອື່ນເປັນທີ່ເພິ່ງຢູ່

ພິກຂຸຜູ້ມີຕົນເປັນບ່ອນອາໄສ ມີຕົນເປັນທີ່ເພິ່ງ ບໍ່ມີສິ່ງອື່ນເປັນທີ່ເພິ່ງ ມີທໍາເປັນບ່ອນອາໄສມີທໍາເປັນທີ່ເພິ່ງ ບໍ່ມີສິ່ງອື່ນເປັນທີ່ເພິ່ງຢູ່ເປັນແນວໃດ? ຄື ພິກຂຸໃນທໍາວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ
໓. ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ
໔. ພິຈາລະນາເຫັນທໍາໃນທໍາທັງຫຼາຍຢູ່ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ພິກຂຸ ຜູ້ມີຕົນເປັນບ່ອນອາໄສ ມີຕົນເປັນທີ່ເພິ່ງ ບໍ່ມີສິ່ງອື່ນເປັນທີ່ເພິ່ງ ມີທໍາເປັນບ່ອນອາໄສ ມີທໍາເປັນທີ່ເພິ່ງ ບໍ່ມີສິ່ງອື່ນເປັນທີ່ເພິ່ງຢູ່ແນວນີ້ແລ

ດູຣາ ອານົນ ພິກຂຸເຫຼົ່າໃດເຫຼົ່າໜຶ່ງ ບໍ່ວ່າຈະໃນບັດນີ້ ຫຼື ເມື່ອເຮົາລ່ວງໄປແລ້ວຈະເປັນຜູ້ມີຕົນເປັນບ່ອນອາໄສ ມີຕົນເປັນທີ່ເພິ່ງ ບໍ່ມີສິ່ງອື່ນເປັນທີ່ເພິ່ງ ມີທໍາເປັນບ່ອນອາໄສ ມີທໍາເປັນທີ່ເພິ່ງ ບໍ່ມີສິ່ງອື່ນເປັນທີ່ເພິ່ງຢູ່ ພິກຂຸເຫຼົ່ານັ້ນ ຈັກຢູ່ໃນຄວາມເປັນຜູ້ເລີດກວ່າເຫຼົ່າພິກຂຸຜູ້ຕ້ອງການຕໍ່ການສຶກສາ”

**ຄາມະກັນໃນມະຫາປະຣິນິບພານສູດຈົບບໍລິບູນ**

**ພານະວານທີ ໒ ຈົບ**

# ວ່າດ້ວຍນິມິດໂອພາດ

[໑໖໖] ໃນເວລາເຊົ້າມື້ໜຶ່ງ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດ ແລະຈີວອນສະເດັດເຂົ້າໄປສູ່ເມືອງເວສາລີເພື່ອບິນທະບາດ ເມື່ອສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ທ່ານຈົ່ງຖືຜ້ານິສີທະນະ (ຜ້າຮອງນັ່ງ) ເຮົາຈະເຂົ້າໄປພັກກາງເວັນທີ່ປາວານເຈດີ"

ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ຖືຜ້ານິສີທະນະຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປທາງເບື້ອງປຣິດສະດາງ (ຫຼັງ)

ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດເຂົ້າໄປສູ່ປາວານເຈດີ ປະທັບນັ່ງເທິງພຸດທະອາດທີ່ທ່ານພຣະອານົນປູລາດຖວາຍ ທ່ານພຣະອານົນ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນສົມຄວນ

[໑໖໗] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະອານົນແນວນີ້ວ່າ "ດູຣາ ອານົນ ເມືອງເວສາລີເປັນຕາເບີກບານໃຈ ອຸເທນເຈດີເປັນຕາເບີກບານໃຈ ໂຄຕະມະກະເຈດີເປັນຕາເບີກບານໃຈ ສັດຕັມພະເຈດີເປັນຕາເບີກບານໃຈ ພະຫຸປຸດຕະເຈດີເປັນຕາເບີກບານໃຈ ສາຣັນທະເຈດີເປັນຕາເບີກບານໃຈ ປາວາລະເຈດີເປັນຕາເບີກບານໃຈ ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສ້າງສົມແລ້ວ ຜາຮົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ຫຼາຍເກີນກວ່ານັ້ນ ດູຣາ ອານົນ ອິດທິບາດ ໔ ຕະຖາຄົດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຮົບດີແລ້ວ ດູຣາ ອານົນ ຕະຖາຄົດເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ໑ ກັບ" ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງທຳນິມິດທີ່ຊັດແຈ້ງ ຊົງທຳແສງສະຫວ່າງທີ່ຊັດແຈ້ງ ແມ່ນແນວນີ້ຢູ່ ທ່ານພຣະອານົນ ກໍບໍ່ອາດຈະຮູ້ທັນພຣະປະສົງ ຈຶ່ງບໍ່ໄດ້ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ" ທີ່ເປັນແບບນີ້ ເປັນເພາະທ່ານພຣະອານົນຖືກມານອຳໃຈ

ແມ່ນເທື່ອທີ ໔ ໗ລ໗

ແມ່ນເທື່ອທີ ໖ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະອານົນແນວນີ້ວ່າ "ດູຣາ ອານົນ ເມືອງເວສາລີເປັນຕາເບີກບານໃຈ ອຸເທນເຈດີເປັນຕາເບີກບານໃຈ ໂຄຕະມະກະເຈດີເປັນ

ຕາເບີກບານໃຈ ສັດຕັມພະເຈດີເປັນຕາເບີກບານໃຈ ພະຫຸປຸຕຕະເຈດີເປັນຕາເບີກບານໃຈ ສາຣັນທະເຈດີເປັນຕາເບີກບານໃຈ ປາວາລະເຈດີເປັນຕາເບີກບານໃຈ ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວສ້າງສົມແລ້ວ ຜາຣົບດີແລ້ວ ຜູ້ນັ້ນ ເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ຫຼາຍເກີນກວ່ານັ້ນດູຣາ ອານົນ ອິດທິບາດ ໔ ຕະຖາຄົດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ດູຣາ ອານົນ ຕະຖາຄົດ ເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ໑ ກັບ" ເມື່ອພຣະຜູ້ມີພຣະພາກເຈົ້າຊົງທຳນິມິດທີ່ຊັດແຈ້ງ ຊົງທຳແສງສະຫວ່າງທີ່ຊັດແຈ້ງແມ່ນແນວນີ້ຢູ່ ທ່ານພຣະອານົນກໍບໍ່ອາດຈະຮູ້ທັນພຣະປະສົງ ຈຶ່ງບໍ່ໄດ້ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ" ທັງນີ້ ເປັນເພາະທ່ານພຣະອານົນຖືກມານອຳໃຈ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນແນວນີ້ວ່າ "ໄປເທີ້ນອານົນ ທ່ານ ຈົ່ງກຳ ນົດເວລາທີ່ສົມຄວນໃນບັດນີ້ເທີ້ນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້າ ນ້ອຍ ແລ້ວລຸກຈາກອາສະນະຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວນັ່ງຢູ່ເຫງົ້າໄມ້ແຫ່ງໜຶ່ງໃນບ່ອນບໍ່ໄກ

## ມານຂາບທູນຂໍໃຫ້ປະຣິນິບພານ

[໑໗໗] ເມື່ອທ່ານພຣະອານົນຈາກໄປບໍ່ດົນ ມານຜູ້ມີບາບໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງບ່ອນປະທັບ ຢືນຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າ ໂຜດປະຣິນິບພານເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ພິກຂຸທັງຫຼາຍຜູ້ເປັນສາວົກຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ມານທູນຂໍອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ພິກຂຸທັງຫຼາຍ ຜູ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ສະຫຼາດ ໄດ້ຮັບການແນະນຳ ກ້າຫານ ເປັນພະຫູສູດ ຊົງທຳ

ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວກໍ່ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ແລ້ວ" ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ພິກຂຸນີທັງຫຼາຍ ຜູ້ເປັນສາວິກາຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍ່ຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້" ມານທູນຂໍອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍ່ເວລານີ້ພິກຂຸນີທັງຫຼາຍ ຜູ້ເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ສະຫຼາດ ໄດ້ຮັບການແນະນຳ ກ້າຫານ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ກໍ່ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ແລ້ວ" ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ອຸປາສິກາທັງຫຼາຍ ຜູ້ສາວິກາຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍ່ຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ມານທູນຂໍອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍ່ເວລານີ້ອຸປາສິກາທັງຫຼາຍ ຜູ້ສາວິກາຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ສະຫຼາດ ໄດ້ຮັບການແນະນຳ ກ້າຫານ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວກໍ່ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ແລ້ວ" ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ອຸປາສິກາທັງຫຼາຍ ຜູ້ເປັນສາວິກາຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ມານທູນຂໍອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ອຸປາສິກາທັງຫຼາຍ ຜູ້ເປັນສາວິກາຂອງພຣະຜູ້ມີພຣະພາກ ເປັນຜູ້ສະຫຼາດ ໄດ້ຮັບການແນະນຳ ກ້າຫານ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວກໍບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ແລ້ວ" ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ພົມມະຈັນຂອງເຮົາຍັງບໍ່ບໍລິບູນ ກ້ວາງຂວາງ ແຜ່ຫຼາຍ ຮູ້ຈັກກັນໂດຍສ່ວນຫຼາຍ ໝັ້ນຄົງດີ ຈົນວ່າເທວະດາ ແລະ ມະນຸດທັງຫຼາຍປະກາດໄດ້ດີແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ ພົມມະຈັນຂອງພຣະຜູ້ມີພຣະພາກເຈົ້າ ບໍລິບູນ ກ້ວາງຂວາງ ແຜ່ຫຼາຍ ຮູ້ຈັກກັນໂດຍສ່ວນຫຼາຍ ໝັ້ນຄົງດີ ຈົນວ່າເທວະດາແລະມະນຸດທັງຫຼາຍປະກາດໄດ້ດີແລ້ວ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ເມື່ອມານທູນອາຣາດນາແນວນີ້ ພຣະຜູ້ມີພຣະພາກເຈົ້າ ໄດ້ຕອບມານຜູ້ມີບາບແນວນີ້ວ່າ "ດູຣາ ມານຜູ້ມີບາບ ທ່ານຈົ່ງຢ່າກັງວົນເລີຍ ອີກບໍ່ດົນ ການປະຣິນິບພານຂອງຕະຖາຄົດຈະມີ ຈາກນີ້ໄປອີກ ໓ ເດືອນ ຕະຖາຄົດຈະປະຣິນິບພານ"

## ຊົງປົງພຣະຊົນມາຍຸສັງຂານ

[໑໖໗] ເວລານັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງມີສະຕິສຳປະຊັນຍະ ຊົງປົງພຣະຊົນມາຍຸສັງຂານແລ້ວ ໃນປາວາລະເຈດີ ເມື່ອພຣະອົງຊົງປົງພຣະຊົນມາຍຸສັງຂານແລ້ວ ໄດ້ເກີດແຜ່ນດິນ

ໄຫວຢ່າງຮຸນແຮງ ເປັນຕາຢ້ານ ຂົນພອງສະຫຍອງເກົ້າ ທັງກອງທິບ ກໍດັງກຶກກ້ອງ ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄວາມນັ້ນ ຈຶ່ງຊົງເປັ່ງພຣະອຸທານໃນເວລານັ້ນແນວນີ້ວ່າ

"ພຣະມຸນີ ລະກຳທັງທີ່ກຳນົດໄດ້ ແລະ ທີ່ກຳນົດບໍ່ໄດ້
ອັນເປັນເຫດກໍ່ກຳເນີດ ເປັນເຄື່ອງປຸງແຕ່ງພົບໄດ້ແລ້ວ
ຍິນດີໃນພາຍໃນມີໃຈໝັ້ນຄົງ
ທຳລາຍກິເລດທີ່ເກີດໃນຕົນໄດ້
ຄືນັກຮົບທຳລາຍເກາະໄດ້ສັນນັ້ນ"

## ເຫດທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ ໘ ປະການ

[໑໗໐] ລຳດັບນັ້ນ ທ່ານພຣະອານົນ ໄດ້ມີຄວາມຄິດແນວນີ້ວ່າ "ເປັນຕາງຶດແທ້ນໍບໍ່ເຄີຍຜາກົດແຜ່ນດິນໄຫວ ຄື ເທື່ອນີ້ມາກ່ອນ ເທື່ອນີ້ຮຸນແຮງຫຼາຍ ແຜ່ນດິນໄຫວເທື່ອນີ້ຮຸນແຮງແທ້ ເປັນຕາຢ້ານ ຂົນພອງສະຫຍອງເກົ້າ ທັງກອງທິບ ກໍດັງກຶກກ້ອງ ມີຫຍັງນໍເປັນເຫດ ມີຫຍັງນໍ? ເປັນປັດໄຈ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິ ວາດແລ້ວນັ່ງຢູ່ບ່ອນສົມຄວນ ທູນຖາມພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ: "ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດແຜ່ນດິນໄຫວຄືເທື່ອນີ້ມາກ່ອນ ເທື່ອນີ້ຮຸນແຮງຫຼາຍ ແຜ່ນດິນໄຫວເທື່ອນີ້ຮຸນແຮງແທ້ ເປັນຕາຢ້ານ ຂົນພອງສະຫຍອງເກົ້າ ທັງກອງທິບ ກໍດັງກຶກກ້ອງ ມີຫຍັງນໍເປັນເຫດ ຫຍັງນໍ? ເປັນປັດໄຈ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ ຂ້ານ້ອຍ?"

[໑໗໑] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ອານົນ ເຫດປັດໄຈ ໘ ປະການນີ້ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

ເຫດປັດໄຈ ໘ ປະການມີຫຍັງແດ່ ຄື

໑. ດູຣາ ອານົນ ມະຫາປັດທະພີນີ້ ຕັ້ງຢູ່ເທິງນ້ຳ ນ້ຳຕັ້ງຢູ່ເທິງລົມ ລົມຕັ້ງຢູ່ເທິງອາກາດ ເວລາທີ່ລົມພາຍຸພັດແຮງ ຍ່ອມເຮັດໃຫ້ນ້ຳສະເທືອນ ນ້ຳທີ່ສະເທືອນຍ່ອມເຮັດໃຫ້ແຜ່ນດິນໄຫວ ແນວນີ້ ເປັນເຫດປັດໄຈປະການທີ ໑ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

໔. ດູຣາ ອານົນ ຍັງມີອີກ ສະມະນະ ຫຼື ພາມຜູ້ມີລິດ ມີຄວາມຊຳນານທາງຈິດ ຫຼື ເທບຜູ້ມີລິດຫຼາຍ ມີອານຸພາບຫຼາຍ ໄດ້ຈະເລີນປະທະວີສັນຍາບໍ່ຫຼາຍ ແຕ່ຈະເລີນອາໂປສັນຍາ ຈົນຫາປະມານບໍ່ໄດ້ ຈຶ່ງເຮັດໃຫ້ແຜ່ນດິນນີ້ໄຫວ ສັ່ນ ສະເທືອນ ຫວັ່ນໄຫວ ດັ່ງນີ້ເປັນເຫດປັດໄຈປະການທີ ໔ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

໓. ດູຣາ ອານົນ ຍັງມີອີກ ໃນຄັ້ງທີ່ພຣະໂພທິສັດມີສະຕິສຳປະຊັນຍະ ຈຸຕິຈາກສະຫວັນຊັ້ນດຸສິດ ສະເດັດລົງສູ່ພຣະອຸທອນຂອງພຣະມານດາ ແຜ່ນດິນນີ້ໄຫວ ສັ່ນສະ ເທືອນ ຫວັ່ນໄຫວ ດັ່ງນີ້ ເປັນເຫດປັດໄຈປະການທີ ໓ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

໔. ດູຣາ ອານົນ ຍັງມີອີກ ໃນຄັ້ງທີ່ພຣະໂພທິສັດມີສະຕິສຳປະຊັນຍະ ປະສູດຈາກພຣະອຸ ທອນຂອງພຣະມານດາ ແຜ່ນດິນນີ້ໄຫວ ສັ່ນ ສະເທືອນ ຫວັ່ນໄຫວ ດັ່ງນີ້ເປັນເຫດປັດໄຈປະການທີ ໔ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

໕. ດູຣາ ອານົນ ຍັງມີອີກ ໃນຄັ້ງທີ່ຕະຖາຄົດຕັດສະຮູ້ ອະນຸດຕະຣະສຳມາສຳໂພທິຍານ ແຜ່ນດິນນີ້ໄຫວ ສັ່ນ ສະເທືອນ ຫວັ່ນໄຫວ ດັ່ງນີ້ເປັນເຫດປັດໄຈປະການທີ ໕ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

໖. ດູຣາ ອານົນ ຍັງມີອີກ ໃນຄັ້ງທີ່ຕະຖາຄົດປະກາດທຳມະຈັກອັນຍອດຢ້ຽມໃຫ້ເປັນໄປ ແຜ່ນດິນນີ້ໄຫວ ສັ່ນ ສະເທືອນ ຫວັ່ນໄຫວ ດັ່ງນີ້ ເປັນເຫດປັດໄຈປະການທີ ໖ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

໗. ດູຣາ ອານົນ ຍັງມີອີກ ໃນຄັ້ງທີ່ຕະຖາຄົດມີສະຕິສຳປະຊັນຍະປົງອາຍຸສັງຂານ ແຜ່ນດິນນີ້ໄຫວ ສັ່ນ ສະເທືອນ ຫວັ່ນໄຫວ ດັ່ງນີ້ເປັນເຫດປັດໄຈປະການທີ ໗ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

໘. ດູຣາ ອານົນ ຍັງມີອີກ ໃນຄັ້ງທີ່ຕະຖາຄົດປະຣິນິບພານ ດ້ວຍອະນຸປາທິເສດນິບພານທາດ ແຜ່ນດິນນີ້ໄຫວ ສັ່ນ ສະເທືອນ ຫວັ່ນໄຫວ ດັ່ງນີ້ເປັນເຫດປັດໄຈປະການທີ ໘ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

ດູຣາ ອານົນ ເຫດປັດໄຈ ໘ ປະການນີ້ແລ ທີ່ເຮັດໃຫ້ເກີດແຜ່ນດິນໄຫວຢ່າງຮຸນແຮງ

## ບໍລິສັດ ໘ ຈຳພວກ

[໑໗໘] ດູຣາ ອານົນ ບໍລິສັດ ໘ ຈຳພວກນີ້

ບໍລິສັດ ໘ ຈຳພວກ ມີຈຳພວກໃດແດ່

໑. ຂັດຕິຍະບໍລິສັດ (ຊຸມນຸມກະສັດ)
໒. ພາມມະນະບໍລິສັດ (ຊຸມນຸມພາມ)
໓. ຄະຫະບໍດີບໍລິສັດ (ຊຸມນຸມຄະຫະບໍດີ)
໔. ສະມະນະບໍລິສັດ (ຊຸມນຸມສະມະນະ)

໕. ຈາຕຸມະຫາຣາດບໍລິສັດ (ຊຸມນຸມເທບຊັ້ນຈາຕຸມະຫາຣາດ)
໖. ຕາວະຕິງສາບໍລິສັດ (ຊຸມນຸມເທບຊັ້ນຕາວະຕິງສາ)
໗. ມານບໍລິສັດ (ຊຸມນຸມມານ)
໘. ພົມບໍລິສັດ (ຊຸມນຸມພົມ)

ດູຣາ ອານົນ ເຮົາຈຳໄດ້ວ່າເຄີຍເຂົ້າໄປຫາຂັດຕິຍະບໍລິສັດ ຫຼາຍຮ້ອຍເທື່ອ ທັງເຄີຍນັ່ງ ໂອ້ລົມ ແລະ ສົນທະນາໃນຂັດຕິຍະບໍລິສັດນັ້ນ ກະສັດເຫຼົ່ານັ້ນມີວັນນະແນວໃດ ເຮົາກໍມີວັນນະແນວນັ້ນ ກະສັດເຫຼົ່ານັ້ນມີສຽງແນວໃດ ເຮົາກໍມີສຽງແນວນັ້ນ ເຮົາຊີ້ແຈ່ງໃຫ້ກະສັດເຫຼົ່ານັ້ນເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ ແລະ ເມື່ອເຮົາກຳລັງເວົ້າຢູ່ກໍບໍ່ມີໃຜຮູ້ວ່າ "ຜູ້ກຳລັງເວົ້າຢູ່ນີ້ເປັນໃຜເປັນເທບ ຫຼື ເປັນມະນຸດ" ເມື່ອຊີ້ແຈ່ງໃຫ້ກະສັດເຫຼົ່ານັ້ນເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ ແລ້ວຫາຍໄປ ແລະ ເມື່ອເຮົາຫາຍໄປແລ້ວກໍບໍ່ມີໃຜຮູ້ວ່າ "ຜູ້ທີ່ຫາຍໄປແລ້ວນີ້ເປັນໃຜ ເປັນເທບ ຫຼື ເປັນມະນຸດ"

ດູຣາ ອານົນ ເຮົາຈຳໄດ້ວ່າເຄີຍເຂົ້າໄປຫາພາມມະນະບໍລິສັດຫຼາຍຮ້ອຍເທື່ອ ຯລຯ ຄະຫະບໍດີບໍລິສັດ ຯລຯ ສະມະນະບໍລິສັດ ຯລຯ ຈາຕຸມະຫາຣາດບໍລິສັດ ຯລຯ ຕາວະຕິງສາບໍລິສັດ ຯລຯ ມານບໍລິສັດ ຯລຯ

ດູຣາ ອານົນ ເຮົາຈຳໄດ້ວ່າ ເຄີຍເຂົ້າໄປຫາພົມບໍລິສັດຫຼາຍຮ້ອຍເທື່ອ ທັງເຄີຍນັ່ງ ໂອ້ລົມ ແລະ ສົນທະນາໃນພົມບໍລິສັດນັ້ນ ພົມເຫຼົ່ານັ້ນມີວັນນະແນວໃດ ເຮົາກໍມີວັນນະແນວນັ້ນ ພົມເຫຼົ່ານັ້ນມີສຽງແນວໃດ ເຮົາກໍມີສຽງແນວນັ້ນ ເຮົາຊີ້ແຈ່ງໃຫ້ພົມເຫຼົ່ານັ້ນເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ສຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກ ບານດ້ວຍທຳມີກະຖາ ແລະ ເມື່ອເຮົາກຳລັງເວົ້າຢູ່ກໍບໍ່ມີໃຜຮູ້ວ່າ "ຜູ້ກຳລັງເວົ້າຢູ່ນີ້ເປັນໃຜ ເປັນເທບ ຫຼື ເປັນມະນຸດ" ເມື່ອຊີ້ແຈ່ງໃຫ້ພົມເຫຼົ່ານັ້ນເຫັນຊັດ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາແລ້ວ ກໍຫາຍໄປ ແລະເມື່ອເຮົາຫາຍໄປແລ້ວ ກໍບໍ່ມີໃຜຮູ້ວ່າ "ຜູ້ທີ່ຫາຍໄປແລ້ວນີ້ ເປັນໃຜ ເປັນເທບ ຫຼື ເປັນມະນຸດ" ດູຣາ ອານົນບໍລິສັດ ໘ ຈຳພວກນີ້ແລ

## ອະພິພາຍະຕະນະ ໘ ປະການ

[໑໗໓] ດູຣາ ອານົນອະພິພາຍະຕະນະ ໘ ປະການນີ້

ອະພິພາຍະຕະນະ[๑] ໘ ປະການມີຫຍັງແດ່ ຄື

໑. ບຸກຄົນໜຶ່ງ ມີຮູບສັນຍາພາຍໃນ[໒] ເຫັນຮູບທັງຫຼາຍພາຍນອກ ຂະໜາດນ້ອຍມີສີສັນດີຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໑

໒. ບຸກຄົນໜຶ່ງ ມີຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກຂະໜາດໃຫຍ່ ມີສີສັນດີຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໒

໓. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ[໓] ເຫັນຮູບທັງຫຼາຍພາຍນອກ ຂະໜາດນ້ອຍມີສີສັນດີ ຫຼື ບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໓

໔. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກຂະໜາດໃຫຍ່ມີສີສັນດີຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໔

໕. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ປຽບຄື ດອກຜັກຕົບທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມສັນໃດ ຫຼື ປຽບຄື ຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໒ ດ້ານ ທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວມີສີຂຽວເຂັ້ມສັນໃດ ບຸກຄົນໜຶ່ງມີອະຮູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໕

໖. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ເຫຼືອງ ມີສີເຫຼືອງປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ປຽບຄື ດອກກັນນິກາທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງມີສີເຫຼືອງເຂັ້ມສັນໃດ ຫຼື ປຽບຄືຜ້າ ເມືອງພາຣານະສີ ອັນມີເນື້ອລະອຽດທັງ ໒ ດ້ານທີ່ເຫຼືອງມີສີເຫຼືອງ ປຽບດ້ວຍຂອງເຫຼືອງມີສີເຫຼືອງເຂັ້ມສັນໃດ ບຸກຄົນໜຶ່ງມີອະຮູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີ ເຫຼືອງເຂັ້ມຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໖

໗. ບຸກຄົນໜຶ່ງມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ແດງ ມີສີແດງປຽບດ້ວຍຂອງແດງ ມີສີແດງເຂັ້ມ ປຽບຄືດອກຊະບາທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມສັນໃດ ຫຼື ປຽບຄື ຜ້າເມືອງພາຣານະສີ ອັນມີເນື້ອຜ້າລະອຽດທັງ ໒ ດ້ານ ທີ່ແດງ ມີສີແດງ

ປຽບດ້ວຍຂອງແດງ ມີສີແດງເຂັ້ມສັນໃດ ບຸກຄົນໜຶ່ງມີອະຣູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ແດງມີສີແດງ ປຽບດ້ວຍຂອງແດງມີສີແດງເຂັ້ມຄອບງໍາຮູບເຫຼົ່ານັ້ນໄດ້ມີສັນຍາແບບນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໗

໘. ບຸກຄົນໜຶ່ງ ມີອະຣູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ຂາວ ມີສີຂາວປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ປຽບຄືດາວປະກາຍພຶກ (ດາວເພັດ) ທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວມີສີຂາວເຂັ້ມສັນໃດ ຫຼື ປຽບຄືຜ້າເມືອງພາຣານະສີອັນມີເນື້ອຜ້າລະອຽດທັງ ໒ ດ້ານທີ່ຂາວ ມີສີຂາວປຽບດ້ວຍຂອງຂາວ ມີສີຂາວເຂັ້ມສັນໃດ ບຸກຄົນໜຶ່ງມີອະຣູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນ ຍາແບບນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໘

ດູຣາ ອານົນ ອະພິພາຍະຕະນະ ໘ ປະການມີແບບນີ້ແລ

## ວິໂມກ ໘ ປະການ

[໑໗໔] ດູຣາ ອານົນ ວິໂມກ ໘ ປະການນີ້

ວິໂມກ ໘ ປະການນັ້ນ ມີຫຼັກສະນະຢ່າງໃດ? ຄື

໑. ບຸກຄົນຜູ້ມີຮູບເຫັນຮູບທັງຫຼາຍ ນີ້ເປັນວິໂມກປະການທີ ໑

໒. ບຸກຄົນຜູ້ມີອະຣູບສັນຍາພາຍໃນເຫັນຮູບທັງຫຼາຍພາຍນອກນີ້ເປັນວິໂມກປະການທີ ໒

໓. ບຸກຄົນຜູ້ນ້ອມໃຈໄປວ່າ "ງາມ" ນີ້ເປັນວິໂມກປະການທີ ໓"

໔. ບຸກຄົນບັນລຸອາກາສານັນຈາຍະຕະນະຊານ ໂດຍກໍານົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກໍານົດນານັດຕະສັນຍາໂດຍປະການທັງປວງນີ້ເປັນວິໂມກປະການທີ ໔

໕. ບຸກຄົນລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກໍານົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ນີ້ເປັນວິໂມກປະການທີ ໕

໖. ບຸກຄົນລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານ ໂດຍກໍານົດວ່າ "ບໍ່ມີຫຍັງ" ຢູ່ ນີ້ເປັນວິໂມກປະການທີ ໖

໗. ບຸກຄົນລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນວິໂມກປະການທີ ໗

໘. ບຸກຄົນລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງບັນລຸສັນຍາເວທະຍິຕະນິໂຣດຢູ່ ນີ້ເປັນວິໂມກປະການທີ ໘

ດູຣາ ອານົນ ວິໂມກ ໘ ປະການມີແນວນີ້ແລ

## ຊົງເລົ່າເລື່ອງມານ

[໑໗໕] ດູຣາ ອານົນ ເວລານັ້ນເມື່ອທຳອິດຕັດສະຣູ້ ເຮົາພັກຢູ່ທີ່ຕົ້ນອະຊະປາລະນິໂຄດໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ດູຣາ ອານົນ ລຳດັບນັ້ນ ມານຜູ້ມີບາບໄດ້ເຂົ້າມາຫາເຮົາຢືນຢູ່ໃນບ່ອນສົມຄວນ ໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ"

ເມື່ອມານກ່າວແນວນີ້ ເຮົາໄດ້ຕອບໄປວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ພິກຂຸທັງຫຼາຍຜູ້ເປັນສາວົກຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ພິກຂຸນີທັງຫຼາຍ ຜູ້ເປັນສາວິກາຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້" "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ອຸປາສົກທັງຫຼາຍ ຜູ້ສາວົກຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ອຸປາສິກາທັງຫຼາຍ ຜູ້ເປັນສາວິກາຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້" "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ພົມມະຈັນຂອງເຮົາຍັງບໍ່ບໍລິບູນກ້ວາງຂວາງ ແຜ່ຫຼາຍ ຮູ້ຈັກກັນໂດຍສ່ວນຫຼາຍ ໝັ້ນຄົງດີ ຈົນວ່າເທວະດາ ແລະ ມະນຸດທັງຫຼາຍປະກາດໄດ້ດີແລ້ວ

[໑໗໘] ດູຣາ ອານົນ ມື້ນີ້ ເມື່ອກີ້ນີ້ເອງ ມານຜູ້ມີບາບໄດ້ເຂົ້າມາຫາເຮົາທີ່ປາວາລະເຈດີ ຢືນຢູ່ບ່ອນສົມຄວນ ໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ ພິກຂຸທັງຫຼາຍຜູ້ເປັນສາວົກຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດ ຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ມານທູນຂໍອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ພິກຂຸທັງຫຼາຍ ຜູ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ສະຫຼາດ ໄດ້ຮັບການແນະນຳ ກ້າຫານ ເປັນພະຫູສູດ ຊົງທຳປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ກໍບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ແລ້ວ" ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ພິກຂຸນີທັງຫຼາຍ ຜູ້ເປັນສາວິກາຂອງເຮົາຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ຯລຯ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ອຸປາສົກທັງຫຼາຍ ຜູ້ສາວົກຂອງເຮົາຍັງບໍ່ສະຫຼາດ ຯລຯ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ພິກຂຸນີທັງຫຼາຍ ຜູ້ເປັນສາວິກາຂອງເຮົາ ຍັງບໍ່ສະຫຼາດ ບໍ່ໄດ້ຮັບການແນະນຳ ບໍ່ກ້າ ຫານ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ມານທູນຂໍອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ພິກຂຸນີທັງຫຼາຍ ຜູ້ສາວິກາຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ສະຫຼາດ ໄດ້ຮັບການແນະນຳ ກ້າຫານ ເປັນພະຫູສູດ ຊົງທຳປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳ ຮຽນກັບອາຈານຂອງຕົນແລ້ວກໍບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ແລ້ວ" ຂ້າແດ່ ພຣະອົງຜູ້ຈະເລີນຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ "ດູຣາ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ພົມມະຈັນຂອງເຮົາຍັງບໍ່ບໍລິບູນ ກ້ວາງຂວາງ ແຜ່ຫຼາຍ ຮູ້ຈັກກັນໂດຍສ່ວນຫຼາຍ ໝັ້ນຄົງດີ ຈົນວ່າ ເທວະດາ ແລະ ມະນຸດທັງຫຼາຍປະກາດໄດ້ດີແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ ພົມມະຈັນຂອງພຣະຜູ້ມີພຣະພາກເຈົ້າ ບໍລິບູນກ້ວາງຂວາງ ແຜ່ຫຼາຍ ຮູ້ຈັກກັນໂດຍສ່ວນຫຼາຍ ໝັ້ນຄົງດີ ຈົນວ່າເທວະດາແລະມະນຸດທັງຫຼາຍປະກາດໄດ້ດີແລ້ວ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນບັດນີ້ ຂໍພຣະສຸຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ

[໑໗໗ ] ດູຣາ ອານົນ ເມື່ອມານບອກແນວນີ້ ເຮົາໄດ້ຕອບມານຜູ້ມີບາບແນວນີ້ວ່າ "ດູຣາມານຜູ້ມີບາບ ທ່ານຈົ່ງຢ່າກັງວົນເລີຍ ອີກບໍ່ດົນ ການປະຣິນິບພານຂອງຕະຖາຄົດຈະມີຈາກນີ້ໄປອີກ ໓ ເດືອນ ຕະຖາຄົດຈະປະຣິນິບພານ"

ດູຣາ ອານົນ ມື້ນີ້ ເມື່ອກີ້ນີ້ເອງ ເຮົາມີສະຕິສຳປະຊັນຍະດີ ປົງອາຍຸສັງຂານໃນປາວາລະເຈດີນີ້ແລ້ວ"

## ພຣະອານົນຂາບທູນອາຣາດທະນາ

[໑໗໘] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າ ໂຜດດຳຣົງພຣະຊົນມຊີບຢູ່ຕະຫຼອດກັບດ້ວຍເທີ້ນ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຢ່າເລີຍ ອານົນ ຢ່າມາວິງວອນຕະຖາຄົດເລີຍ ບັດນີ້ບໍ່ແມ່ນເວລາທີ່ຈະວິງວອນຂໍຮ້ອງຕະຖາຄົດ"

ແມ່ນເທື່ອທີ ໒ ທ່ານພຣະອານົນກໍໄດ້ຂາບທູນພຣະຜູ້ມີພຣະພາກແນວນີ້ວ່າ ฯລฯ

ແມ່ນເທື່ອທີ ໓ ທ່ານພຣະອານົນ ກໍໄດ້ຂາບທູນພຣະຜູ້ມີພຣະພາກແນວນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າ ໂຜດດຳຣົງພຣະຊົນມຊີບຢູ່ຕະຫຼອດກັບດ້ວຍເທີ້ນ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຖາມວ່າ "ດູຣາ ອານົນ ທ່ານເຊື່ອໝັ້ນໃນຄວາມຕັດສະຣູ້ຂອງຕະຖາຄົດບໍ?"

ທ່ານພຣະອານົນທູນຕອບວ່າ "ເຊື່ອໝັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ກໍເມື່ອທ່ານເປັນຜູ້ເຊື່ອໝັ້ນຢູ່ ເປັນຫຍັງຍັງຂູ່ຊີຕະຖາຄົດເຖິງ ໓ ເທື່ອແນວນັ້ນນໍ?"

ທ່ານພຣະອານົນທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ສະດັບມາສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າວ່າ ດູຣາ ອານົນ ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງໃຫ້ຕັ້ງໝັ້ນແລ້ວ ສ້າງສົມມາດີແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງຢູ່ ເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ໑ ກັບ ດູຣາ ອານົນ ອິດທິບາດ ໔ ຕະຖາ ຄົດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສ້າງສົມມາດີແລ້ວ ຜາຣົບດີແລ້ວ ດູຣາ ອານົນ ຕະຖາຄົດເມື່ອມຸ່ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ໑ ກັບໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ທ່ານເຊື່ອໝັ້ນບໍ? ອານົນ"
ທ່ານພຣະອານົນທູນຕອບວ່າ "ເຊື່ອໝັ້ນແທ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຫດນັ້ນແລ ອານົນ ເລື້ອງນີ້ ຈຶ່ງເປັນຄວາມບົກພ່ອງຂອງທ່ານ ເລື້ອງນີ້ເປັນຄວາມຜິດພາດຂອງທ່ານ ເມື່ອຕະຖາຄົດເຮັດນິມິດທີ່ຊັດແຈ້ງ ທຳແສງສະຫວ່າງທີ່ຊັດແຈ້ງ ແມ່ນແນວນີ້ ທ່ານກໍບໍ່ອາດຈະຮູ້ທັນໄດ້ ທ່ານຈຶ່ງບໍ່ວິງວອນຕະຖາຄົດດ້ວຍຄຳວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າ ໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບດ້ວຍເທີ້ນ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ" ດູຣາ ອານົນ ຖ້າທ່ານວິງວອນຕະຖາຄົດ ຕະຖາຄົດຈະຫ້າມທ່ານພຽງ ໒ ເທື່ອພໍຮອດເທື່ອທີ ໓ ຕະຖາຄົດຈະຮັບນິມົນຂອງທ່ານ ດ້ວຍເຫດນີ້ ເລື້ອງນີ້ຈຶ່ງເປັນຄວາມບົກພ່ອງຂອງທ່ານ ເລື້ອງນີ້ເປັນຄວາມຜິດຂອງທ່ານ"

## ຊົງສະແດງອານຸພາບຂອງອິດທິບາດ ໔ ປະການ

[໑໗໙] ດູຣາ ອານົນ ສະໄໝໜຶ່ງ ເຮົາຢູ່ທີ່ພູຄິດຊະກູດເຂດເມືອງຣາດຊະຄຶ ໃນທີ່ນັ້ນແລ ຮຽກທ່ານມາກ່າວວ່າ "ອານົນເມືອງຣາດຊະຄຶນີ້ເປັນຕາເບີກບານໃຈ ພູຄິດຊະກູດເປັນຕາເບີກບານໃຈ ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສ້າງສົມແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ຫຼາຍເກີນກວ່ານັ້ນ ດູຣາ ອານົນ ອິດທິບາດ ໔ ຕະຖາຄົດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ດູຣາ ອານົນ ຕະຖາຄົດເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ໑ ກັບ" ເມື່ອຕະຖາຄົດທຳນິມິດທີ່ຊັດແຈ້ງ ເຮັດແສງສະຫວ່າງທີ່ຊັດແຈ້ງແມ່ນແນວນີ້ທ່ານກໍບໍ່ອາດຈະຮູ້ທັນໄດ້ ຈຶ່ງບໍ່ວິງວອນຕະຖາຄົດວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າ ໂຜດດຳຣົງພຣະຊົນມຊີບຢູ່ຕະຫຼອດກັບດ້ວຍເທີ້ນ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ"

ດູຣາ ອານົນ ຖ້າທ່ານວິງວອນຂໍຮ້ອງຕະຖາຄົດ ຕະຖາຄົດຈະຫ້າມທ່ານພຽງ ໒ ເທື່ອ ພໍເທື່ອທີ ໓ ຕະຖາຄົດຈະຮັບນິມົນຂອງທ່ານ ດ້ວຍເຫດນັ້ນ ດູຣາ ອານົນ ເລື້ອງນີ້ຈຶ່ງເປັນ ຄວາມບົກພ່ອງຂອງທ່ານເລື້ອງນີ້ເປັນຄວາມຜິດຂອງທ່ານ

[໑໗໐] ດູຣາ ອານົນ ໃນສະໄໝໜຶ່ງ ເຮົາຢູ່ທີ່ໂຄຕະມະນິໂຄດເຂດເມືອງຣາດຊະຄຶ ฯລฯ ເຮົາຢູ່ທີ່ເຫວຖິ້ມໂຈນເຂດເມືອງຣາດຊະຄຶ ฯລฯ ເຮົາຢູ່ທີ່ຖ້ຳສັດຕະບັນຂ້າງພູເວພາລະເຂດເມືອງຣາດຊະຄຶ ฯລฯ ເຮົາຢູ່ທີ່ກາລະສີລາຂ້າງພູອິສິຄິລິເຂດເມືອງຣາດຊະຄຶ ฯລฯ ເຮົາຢູ່ທີ່ເງີບຜາສັບປະໂສນຖິກະໃນສີຕະວັນເຂດເມືອງຣາດຊະຄຶແລະ ฯລฯ ເຮົາຢູ່ທີ່ຕະໂປທາຣາມເຂດເມືອງຣາດຊະຄຶ ฯລฯ ເຮົາຢູ່ທີ່ເວລຸວັນສະຖານທີ່ໃຫ້ເຫຍື່ອກະແຕເຂດເມືອງຣາດຊະຄຶ ฯລฯ ເຮົາຢູ່ທີ່ຊີວະກັມພະວັນເຂດເມືອງຣາດຊະຄຶ ฯລฯ ເຮົາຢູ່ທີ່ມັດທະກຸດສິມະຣິຄະທາຍະວັນເຂດເມືອງຣາດຊະຄຶ ໃນບ່ອນນັ້ນແລ ເຮົາໄດ້ຮຽກທ່ານມາກ່າວວ່າ "ດູຣາ ອານົນເມືອງ ຣາດຊະຄຶເປັນຕາເບີກບານໃຈ ພູຄິດຊະກູດເປັນຕາເບີກບານໃຈ ໂຄຕະມະນິໂຄດເປັນຕາເບີກ ບານໃຈເຫວຖິ້ມໂຈນເປັນຕາເບີກບານໃຈ ຖ້ຳສັດຕະບັນຂ້າງພູເວພາລະເປັນຕາເບີກບານໃຈ ກາລະສີລາຂ້າງພູອິສິຄິລິເປັນຕາເບີກບານໃຈ ເງີບຜາສັບປະໂສນຖິກະໃນສີຕະວັນເປັນຕາເບີກບານໃຈ ຕະໂປທາຣາມເປັນຕາເບີກບານໃຈ ເວລຸວັນສະຖານທີ່ໃຫ້ເຫຍື່ອກະແຕເປັນຕາເບີກບານໃຈ ຊີວະກັມພະວັນເປັນຕາເບີກບານໃຈ ມັດທະກຸດສິມະຣິຄະທາຍະວັນເປັນຕາເບີກບານໃຈ

ດູຣາ ອານົນ ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສ້າງສົມແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ຫຼາຍເກີນກວ່ານັ້ນ ດູຣາ ອານົນ ອິດທິບາດ ໔ ຕະຖາຄົດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ດູຣາ ອານົນ ຕະຖາຄົດເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າກັບ" ເມື່ອຕະຖາຄົດທຳນິມິດທີ່ຊັດແຈ້ງ ທຳແສງສະຫວ່າງທີ່ຊັດແຈ້ງແມ່ນແນວນີ້ ທ່ານກໍບໍ່ອາດຈະຮູ້ທັນໄດ້ ຈຶ່ງບໍ່ວິງວອນຕະຖາຄົດວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳຣົງພຣະຊົນຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ" ດູຣາ ອານົນ ຖ້າທ່ານວິງວອນຕະຖາຄົດ ຕະຖາຄົດຈະຫ້າມທ່ານພຽງ ໒ ເທື່ອ ພໍເທື່ອທີ ໓ ຕະຖາຄົດຈະຮັບນິມົນ ດ້ວຍເຫດນັ້ນ ອານົນ ເລື້ອງນີ້ຈຶ່ງເປັນຄວາມບົກພ່ອງຂອງທ່ານ ເລື້ອງນີ້ເປັນຄວາມຜິດຂອງທ່ານ

[໑໗໑] ດູຣາ ອານົນ ໃນສະໄໝໜຶ່ງ ເຮົາຢູ່ທີ່ອຸເທນເຈດີເຂດເມືອງເວສາລີ ບ່ອນນັ້ນແລ ເຮົາໄດ້ຮຽກທ່ານມາກ່າວວ່າ "ດູຣາ ອານົນ ເມືອງເວສາລີເປັນຕາເບີກບານໃຈ ອຸເທນເຈດີເປັນຕາເບີກ ບານໃຈ ດູຣາ ອານົນ ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສ້າງສົມແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ຫຼາຍເກີນກວ່ານັ້ນ ດູຣາ ອານົນ ອິດທິບາດ ໔ ຕະຖາຄົດ

ຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ດູຣາ ອານົນ ຕະຖາຄົດເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ກັບ" ເມື່ອຕະຖາຄົດທຳນິມິດທີ່ຊັດແຈ້ງ ທຳແສງສະຫວ່າງທີ່ຊັດແຈ້ງ ແມ່ນແນວນີ້ຢູ່ ທ່ານກໍບໍ່ອາດຈະຮູ້ທັນໄດ້ ຈຶ່ງບໍ່ວິງວອນຕະຖາ ຄົດວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນຊີບຢູ່ຕະຫຼອດກັບຂໍພຣະສຸຄົດເຈົ້າໂຜດດຳຣົງພຣະຊົນມຊີບຢູ່ຕະຫຼອດກັບ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ" ດູຣາ ອານົນ ຖ້າທ່ານວິງວອນຂໍຮອງຕະຖາຄົດ ຕະຖາຄົດຈະຫ້າມທ່ານພຽງ ໒ ເທື່ອ ພໍເທື່ອທີ ໓ ຕະຖາຄົດຈະຮັບນິມົນຂອງທ່ານ ດ້ວຍເຫດນັ້ນ ອານົນ ເລື້ອງນີ້ຈຶ່ງເປັນຄວາມບົກພ່ອງຂອງທ່ານ ເລື້ອງນີ້ເປັນຄວາມຜິດຂອງທ່ານ

[໑໗໘] ດູຣາ ອານົນສະໄໝໜຶ່ງ ເຮົາຢູ່ທີ່ໂຄຕະມະກະເຈດີເຂດເມືອງເວສາລີ ຯລຯ ເຮົາຢູ່ທີ່ສັດຕັມພະເຈດີເຂດເມືອງເວສາລີ ຯລຯ ເຮົາຢູ່ທີ່ພະຫຸປຸດຕະເຈດີເຂດເມືອງເວສາລີ ຯລຯ ເຮົາຢູ່ທີ່ສາຣັນທະເຈດີ ເຂດເມືອງເວສາລີ ຯລຯ ເຮົາຢູ່ທີ່ປາວາລະເຈດີ ມື້ນີ້ເມື່ອກີ້ນີ້ເອງໃນປາວາລະເຈດີ ເຮົາໄດ້ຮຽກທ່ານມາກ່າວວ່າ "ດູຣາ ອານົນ ເມືອງເວສາລີເປັນຕາເບີກບານໃຈ ອຸເທນເຈດີເປັນຕາເບີກບານໃຈ ໂຄຕະມະກະເຈດີເປັນຕາເບີກບານໃຈ ສັດຕັມພະເຈດີເປັນຕາເບີກບານໃຈ ພະຫຸປຸດຕະເຈດີເປັນຕາເບີກບານໃຈ ສາຣັນທະເຈດີເປັນຕາເບີກບານໃຈ ປາວາລະເຈດີເປັນຕາເບີກບານໃຈ ດູຣາ ອານົນ ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສ້າງສົມແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ຫຼາຍເກີນກວ່ານັ້ນ ດູຣາ ອານົນ ອິດທິບາດ ໔ ຕະຖາຄົດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ດູຣາ ອານົນ ຕະຖາ ຄົດເມື່ອມຸ້ງຫວັງເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ກັບ" ເມື່ອຕະຖາຄົດທຳນິມິດທີ່ຊັດແຈ້ງທຳແສງສະຫວ່າງທີ່ຊັດແຈ້ງແມ່ນແນວນີ້ ທ່ານກໍບໍ່ອາດຈະຮູ້ທັນໄດ້ ຈຶ່ງບໍ່ວິງວອນຕະຖາຄົດວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດດຳຣົງພຣະຊົນຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າໂຜດດຳຣົງພຣະຊົນມຊີບຢູ່ຕະຫຼອດກັບ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ"

ດູຣາ ອານົນ ຖ້າທ່ານວິງວອນຕະຖາຄົດ ຕະຖາຄົດຈະຫ້າມທ່ານພຽງ ໒ ເທື່ອ ພໍເທື່ອທີ ໓ ຕະຖາຄົດຈະຮັບນິມົນ ດ້ວຍເຫດນັ້ນ ອານົນ ເລື້ອງນີ້ ຈຶ່ງເປັນຄວາມບົກພ່ອງຂອງທ່ານ ເລື້ອງນີ້ເປັນຄວາມຜິດຂອງທ່ານ

[໑໗໖] ດູຣາ ອານົນ ເຮົາເຄີຍບອກທ່ານໄວ້ກ່ອນບໍ່ແມ່ນບໍ່ວ່າ ການພັດພາກ ການຕ້ອງປະຖິ້ມ ການປ່ຽນແປງເປັນຢ່າງອື່ນ ຈາກຂອງຮັກ ຂອງຖືກໃຈ ທຸກຢ່າງຈະຕ້ອງມີ ສະນັ້ນຈະເພິ່ງຫາແກນສານຫຍັງຈາກສັງຂານນີ້ ອັນເປັນສິ່ງທີ່ເກີດຂຶ້ນ ມີຂຶ້ນຖືກປັດໄຈປຸງແຕ່ງຂຶ້ນມີຄວາມແຕກສະຫຼາຍຫາຍໄປເປັນທຳມະດາ ເປັນໄປບໍ່ໄດ້ເລີຍທີ່ຈະປາຖະໜາວ່າ ຂໍສິ່ງນັ້ນຈົ່ງຢ່າແຕກສະຫຼາຍຫາຍໄປ ຕະຖາຄົດສະລະແລ້ວ ຄາຍແລ້ວ ປ່ອຍແລ້ວ ປະລະແລ້ວ ວາງໃນສັງຂານທັງຫຼາຍນັ້ນໄດ້ແລ້ວປົງອາຍຸສັງຂານແລ້ວ ວາຈາທີ່ຕະຖາຄົດກ່າວໄວ້ວ່າ "ອີກບໍ່ດົນການປະຣິນິບພານຂອງຕະຖາຄົດຈະມີຂຶ້ນຢ່າງແນ່ນອນ ຈາກນີ້ໄປອີກ ໓ ເດືອນ ຕະຖາຄົດຈະປະຣິນິບພານເປັນວາຈາທີ່ປ່ຽນແປງບໍ່ໄດ້ອີກແລ້ວ" ຈຶ່ງເປັນໄປບໍ່ໄດ້ທີ່ຕະຖາຄົດຈະກັບຄືນຄຳເພາະຕ້ອງການມີອາຍຸຢູ່ຕໍ່ໄປອີກ ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ກູຕາຄານສາລາປ່າມະຫາວັນກັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍທ່ານພຣະອານົນ ສະເດັດເຂົ້າໄປສູ້ກູຕາຄານສາລາປ່າມະຫາວັນແລ້ວ ຈຶ່ງຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ໄປເທີ້ນອານົນທ່ານຈົ່ງໄປນິມົນໃຫ້ພິກຂຸເທົ່າທີ່ອາໄສຢູ່ໃນເມືອງເວສາລີມາປະຊຸມກັນໃນຫໍສັນ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ແລ້ວຈຶ່ງນິມົນພິກຂຸທຸກອົງເທົ່າທີ່ອາໄສຢູ່ໃນເມືອງເວສາລີມາປະຊຸມກັນໃນຫໍສັນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວຢືນໃນບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸສົງປະຊຸມກັນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ ຂ້ານ້ອຍ"

[໑໗໘] ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປໃນຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ (ເພາະເຫດນັ້ນ) ທຳທີ່ເຮົາສະແດງແລ້ວ ເພື່ອຄວາມຮູ້ຍິ່ງ ທ່ານທັງຫຼາຍເພິ່ງຮຽນແລ້ວປະຕິບັດ ຈະເລີນພາວະນາເຮັດໃຫ້ຫຼາຍດ້ວຍດີ ໂດຍວິທີນີ້ ພົມມະຈັນນີ້ຈະເພິ່ງຕັ້ງຢູ່ໄດ້ດົນນານ ດຳຣົງຢູ່ໄດ້ດົນນານ ແນວນີ້ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

"ດູຣາ ພິກຂຸທັງຫຼາຍ (ເພາະເຫດນັ້ນ) ທຳທີ່ເຮົາສະແດງແລ້ວ ເພື່ອຄວາມຮູ້ຍິ່ງ ທ່ານທັງຫຼາຍເພິ່ງຮຽນແລ້ວປະຕິບັດ ຈະເລີນພາວະນາເຮັດໃຫ້ຫຼາຍດ້ວຍດີ ໂດຍວິທີນີ້ພົມມະຈັນນີ້ຈະເພິ່ງຕັ້ງຢູ່ໄດ້ດົນນານ ດຳຣົງຢູ່ໄດ້ດົນນານ ແນວນີ້ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ມີທຳຫຍັງແດ່ ຄື

໑. ສະຕິປັດຖານ ໔ | ໒. ສຳມັບປທານ ໔
໓. ອິດທິບາດ ໔ | ໔. ອິນຊີ ໕
໕. ພະລະ ໕ | ໖. ໂພດຊົງ ໗
໗. ອະຣິຍະມັກມີອົງ ໘

ດູຣາ ພິກຂຸທັງຫຼາຍ ທຳເຫຼົ່ານີ້ແລ ຄື ທຳທີ່ເຮົາສະແດງແລ້ວ ເພື່ອຄວາມຮູ້ຍິ່ງ ທ່ານທັງຫຼາຍເພິ່ງຮຽນແລ້ວ ປະຕິບັດ ຈະເລີນພາວະນາເຮັດໃຫ້ຫຼາຍດ້ວຍດີ ໂດຍວິທີນີ້ພົມມະຈັນນີ້ຈະເພິ່ງຕັ້ງຢູ່ໄດ້ດົນນານ ດຳຣົງຢູ່ໄດ້ດົນນານ ແນວນີ້ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

## ສັງເວຊະນີຍະທຳ

### (ທຳອັນເປັນທີ່ຕັ້ງແຫ່ງຄວາມສັງເວດ)

[໑໘໕] ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ບັດນີ້ ເຮົາຂໍເຕືອນທ່ານທັງຫຼາຍວ່າ ສັງຂານທັງຫຼາຍ ມີຄວາມເສື່ອມໄປເປັນທຳມະດາ ທ່ານທັງ ຫຼາຍຈົ່ງເຮັດໜ້າທີ່ໃຫ້ສຳເລັດດ້ວຍຄວາມບໍ່ປະໝາດເທີ້ນ ອີກບໍ່ດົນການປະຣິນິບພານຂອງຕະຖາຄົດຈະມີຂຶ້ນ ຈາກນີ້ໄປອີກ ໓ ເດືອນ ຕະຖາຄົດຈະປະຣິນິບພານ"

ເມື່ອພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

"ມະນຸດທຸກຄົນບໍ່ວ່າ ເດັກນ້ອຍ ຜູ້ໃຫຍ່ ໂງ່ ສະຫຼາດ
ຮັ່ງມີ ຍາກຈົນ ລ້ວນຈະຕ້ອງບ່າຍໜ້າໄປສູ້ຄວາມຕາຍ
ຊີວິດຂອງສັດປຽບ ຄື ພາຊະນະດິນທີ່ຊ່າງໝໍ້ປັ້ນໄວ້ແລ້ວ
ມີນ້ອຍ ໃຫຍ່ ສຸກ ດິບ ເຊິ່ງລ້ວນມີຄວາມແຕກສະຫຼາຍຫາຍໄປເປັນທີ່ສຸດ"

ພຣະສຸຄົດສາດສະດາໄດ້ຕັດພຣະຄາຖາປະພັນຕໍ່ໄປອີກວ່າ

"ວັຍຂອງເຮົາແກ່ຫງ່ອມຫຼາຍແລ້ວ ຊີວິດຂອງເຮົາເຫຼືອໜ້ອຍແລ້ວ
ເຮົາຈະຈາກພວກທ່ານໄປ ເຮົາໄດ້ເຮັດທີ່ເພິ່ງແກ່ຕົນແລ້ວ
ພວກທ່ານຈົ່ງຢ່າປະໝາດ ມີສະຕິ ມີສີນບໍລິສຸດ
ມີຄວາມຄິດໃຫ້ໝັ້ນຄົງ ຖືຮັກສາຈິດຂອງຕົນໄວ້ໃຫ້ດີ
ຜູ້ທີ່ບໍ່ປະໝາດຢູ່ໃນທຳວິໄນນີ້

ເມື່ອລະການວຽນວ່າຍຕາຍເກີດໄດ້ແລ້ວ
ຈັກເຮັດທີ່ສຸດແຫ່ງຄວາມທຸກໄດ້"

**ພານະວານທີ ໓ ຈົບ**

## ການທອດພຣະເນດເມືອງເວສາລີ ຄື ກັບຊ້າງຫຼຽວເບິ່ງ

[໑໗໒] ໃນເວລາເຊົ້າມື້ນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນສະເດັດເຂົ້າໄປສູ່ເມືອງເວສາລີ ເພື່ອບິນທະບາດ ເມື່ອສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ໄດ້ທອດພຣະເນດເມືອງເວສາລີ ຄື ພຣະຍາຊ້າງແນມເບິ່ງ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ການເຫັນເມືອງເວສາລີເທື່ອນີ້ ເປັນການເຫັນສຸດທ້າຍຂອງຕະຖາຄົດ ມາເທີ້ນ ອານົນ ເຮົາຈະເຂົ້າໄປສູ່ພັນຖຸຄາມກັນ" ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງພັນຖຸຄາມ ປະທັບຢູ່ທີ່ພັນຖຸຄາມນັ້ນ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ

"ດູຣາ ພິກຂຸທັງຫຼາຍ ເພາະບໍ່ຮູ້ແຈ້ງແທງຕະຫຼອດທຳ ໔ ປະການ ເຮົາແລະທ່ານທັງຫຼາຍຈຶ່ງທ່ອງທ່ຽວໄປໃນວັດຕະສົງສານ ຕະຫລອດການອັນຍາວນານແນວນີ້

ທຳ ໔ ປະການນັ້ນ ມີຫຍັງແດ່? ຄື

໑. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສີນ ເຮົາແລະທ່ານທັງຫຼາຍ ຈຶ່ງທ່ອງທ່ຽວໄປໃນວັດຕະສົງສານ ຕະຫລອດການອັນຍາວນານແນວນີ້

໒. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ ເຮົາແລະທ່ານທັງຫຼາຍ ຈຶ່ງທ່ອງທ່ຽວໄປໃນວັດຕະສົງສານ ຕະຫລອດການອັນຍາວນານແນວນີ້

໓. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະປັນຍາ ເຮົາແລະທ່ານທັງຫຼາຍ ຈຶ່ງທ່ອງທ່ຽວໄປໃນວັດຕະສົງສານ ຕະຫລອດການອັນຍາວນານແນວນີ້

໔. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ ເຮົາແລະທ່ານທັງຫຼາຍ ຈຶ່ງທ່ອງທ່ຽວໄປໃນວັດຕະສົງສານຕະຫລອດການອັນຍາວນານແນວນີ້

ດູຣາ ພິກຂຸທັງຫຼາຍ ໃນບັດນີ້ ເຮົາແລະທ່ານທັງຫຼາຍ ໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສີ ເຮົາແລະທ່ານທັງຫຼາຍໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ ເຮົາແລະທ່ານທັງຫຼາຍໄດ້ຮູ້ແຈ້ງ

ແຫງຕະຫຼອດອະຣິຍະປັນຍາ ເຮົາ ແລະ ທ່ານທັງຫຼາຍໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ ເຮົາ ແລະ ທ່ານທັງຫຼາຍ ຖອນພາວະຕັນຫາໄດ້ແລ້ວ ພະວະເນດຕິໝົດສິ້ນໄປແລ້ວ ບັດນີ້ພົບໃໝ່ບໍ່ມີອີກ"

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

"ສີນ ສະມາທິ ປັນຍາ ແລະ ວິມຸດຕິ ອັນຍອດຢ້ຽມ
ທຳເຫຼົ່ານີ້ ພຣະໂຄດົມຜູ້ມີຍົດຕັດສະຣູ້ດີແລ້ວ
ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຕັດບອກທຳ
ແກ່ພິກຂຸທັງຫຼາຍ ເພື່ອຄວາມຮູ້ຍິ່ງ
ພຣະສາດສະດາ ຊົງທຳທີ່ສຸດແຫ່ງຄວາມທຸກ
ມີພຣະຈັກຂຸປະຣິນິບພານແລ້ວ"

ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ທີ່ພັນຖຸຄາມ ຊົງສະແດງທຳມີກະຖາເປັນຈຳນວນຫຼາຍແກ່ພິກຂຸທັງຫຼາຍ ແນວນີ້ວ່າ "ສີນມີລັກສະນະແນວນີ້ ສະມາທິມີລັກສະນະແນວນີ້ ປັນຍາມີລັກສະນະແນວນີ້ ສະມາທິອັນບຸກຄົນອົບຮົມໂດຍມີສີນເປັນຖານ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ປັນຍາອັນບຸກຄົນອົບຮົມໂດຍມີສະມາທິເປັນຖານ ຍ່ອມມີຜົນຫຼາຍມີອານິສົງຫຼາຍ ຈິດອັນບຸກຄົນອົບຮົມໂດຍມີປັນຍາເປັນຖານ ຍ່ອມຫຼຸດພົ້ນໂດຍຊອບ ຈາກອາສະວະທັງຫຼາຍ ຄື ກາມາສະວະ ພະວາສະວະ ແລະ ອະວິດຊາສະວະ"

## ມະຫາປະເທດ ໔ ປະການ

## (ຂໍ້ໃຊ້ອ້າງອີງທີ່ສຳຄັນ)

[໑໗໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຕາມຄວາມພໍພຣະທະໄທ ໃນພັນຖຸຄາມແລ້ວ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ຫັດຖິຄາມກັນ" ຯລຯ "ມາເທີ້ນ ອານົນ ເຮົາຈະເຂົ້າໄປສູ່ອຳພະຄາມກັນ" ຯລຯ "ມາເທີ້ນ ອານົນ ເຮົາຈະເຂົ້າໄປສູ່ຊຳພູຄາມກັນ" ຯລຯ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ໂພຄະນະຄອນກັນ" ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໂພຄະນະຄອນປະທັບຢູ່ທີ່ອານັນທະເຈດີ ໃນໂພຄະນະຄອນຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ເຮົາຈະສະແດງມະຫາປະເທດ ໔ ປະການນີ້ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດແນວນີ້ວ່າ

[໑໗໗] ໑. ພິກຂຸ ໃນທຳວິໄນນີ້ ເພິ່ງກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍ ຢ່າໄດ້ຟ້າວຊົມຊື່ນ ຢ່າຟ້າວຄັດຄ້ານຄຳເວົ້າຂອງຜູ້ນັ້ນ ໃຫ້ຮຽນບົດ ແລະ ພະຍັນຊະນະເຫຼົ່ານັ້ນໃຫ້ດີ ແລ້ວເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ "ນີ້ບໍ່ແມ່ນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຢ່າງແນ່ນອນ ແລະ ພິກຂຸນີ້ຮັບມາຜິດ"ທ່ານທັງຫຼາຍ ເພິ່ງຖິ້ມຄຳນັ້ນເສຍ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ ເພິ່ງລົງສັນນິດຖານວ່າ "ນີ້ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ແນ່ນອນ ແລະ ພິກຂຸນີ້ຮັບມາດ້ວຍດີ" ທ່ານທັງຫຼາຍ ເພິ່ງຈຳມະຫາປະເທດປະການທີ ໑ ນີ້ໄວ້

໔. ພິກຂຸໃນທຳວິໄນນີ້ ເພິ່ງກ່າວແນວນີ້ວ່າ "ໃນອາວາດຊື່ນັ້ນ ມີສົງຢູ່ພ້ອມດ້ວຍພຣະເຖຣະ ພ້ອມດ້ວຍປາໂມກ ຂ້າພະເຈົ້າໄດ້ສະດັບມາສະເພາະໜ້າສົງນັ້ນວ່າ "ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍ ຢ່າຟ້າວຊົມຊື່ນ ຢ່າຟ້າວຄັດຄ້ານຄຳກ່າວຂອງຜູ້ນັ້ນເພິ່ງຮຽນບົດ ແລະ ພະຍັນ ຊະນະເຫຼົ່ານັ້ນໃຫ້ດີແລ້ວ ເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ "ນີ້ບໍ່ແມ່ນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຢ່າງແນ່ນອນ ແລະສົງນັ້ນຮັບມາຜິດ" ທ່ານທັງຫຼາຍ ເພິ່ງຖິ້ມຄຳນັ້ນເສຍ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ເພິ່ງລົງສັນນິດຖານວ່າ "ນີ້ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນແນ່ນອນ ແລະ ສົງນັ້ນຮັບມາດ້ວຍດີ" ທ່ານທັງ ຫຼາຍເພິ່ງຈຳມະຫາປະເທດປະການທີ ໔ ນີ້ໄວ້

໓. ພິກຂຸໃນທຳວິໄນນີ້ ເພິ່ງກ່າວແນວນີ້ວ່າ "ໃນອາວາດຊື່ນັ້ນ ມີພິກຂຸຜູ້ເປັນພຣະເຖຣະຢູ່ຈຳນວນຫຼາຍ ເປັນພະຫູສູດ ຮຽນຄັມພີ ຊົງທຳ ຊົງວິໄນ ຊົງມາຕິກາ ຂ້າພະເຈົ້າໄດ້ສະດັບມາສະເພາະໜ້າພຣະເຖຣະເຫຼົ່ານັ້ນວ່າ "ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍ ຢ່າຟ້າວຊົມຊື່ນ ຢ່າຟ້າວຄັດຄ້ານຄຳກ່າວຂອງຜູ້ນັ້ນ ເພິ່ງຮຽນບົດ ແລະ ພະຍັນ ຊະນະເຫຼົ່ານັ້ນໄວ້ແລ້ວໃຫ້ສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ "ນີ້ບໍ່ແມ່ນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຢ່າງແນ່ນອນ ແລະ ພຣະເຖຣະເຫຼົ່ານັ້ນຮັບມາຜິດ" ໃຫ້ທ່ານທັງຫຼາຍເພິ່ງຖິ້ມຄຳນັ້ນເສຍ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ເພິ່ງລົງສັນນິດຖານວ່າ "ນີ້ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ແນ່ນອນ ແລະ ພຣະເຖຣະເຫຼົ່ານັ້ນຮັບມາດ້ວຍດີ" ທ່ານທັງຫຼາຍເພິ່ງຈຳມະຫາປະເທດປະການທີ ໓ ນີ້ໄວ້

໔. ພິກຂຸໃນທຳວິໄນນີ້ ເພິ່ງກ່າວແນວນີ້ວ່າ "ໃນອາວາດຊື່ນັ້ນ ມີພິກຂຸຜູ້ເປັນເຖຣະຢູ່ອົງໜຶ່ງ ເປັນພະຫູສູດ ຮຽນຄັມພີ ຊົງທຳ ຊົງວິໄນ ຊົງມາຕິກາ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະໜ້າ ພຣະເຖຣະອົງນັ້ນວ່າ "ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ" ທ່ານທັງຫຼາຍຢ່າຟ້າວຊົມຊື່ນ ຢ່າຟ້າວຄັດຄ້ານຄຳກ່າວຂອງຜູ້ນັ້ນ ໃຫ້ຮຽນບົດ ແລະ ພະຍັນຊະນະເຫຼົ່ານັ້ນໄວ້ ແລ້ວເພິ່ງສອບເບິ່ງໃນສູດ ທຽບເບິ່ງໃນວິໄນ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍບໍ່ໄດ້ ທຽບເຂົ້າໃນວິໄນກໍບໍ່ໄດ້ ເພິ່ງລົງສັນນິດຖານວ່າ "ນີ້ບໍ່ແມ່ນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຢ່າງແນ່ນອນ ແລະ ພຣະເຖຣະອົງນັ້ນຮັບມາຜິດ" ໃຫ້ທ່ານທັງຫຼາຍ ຖິ້ມເສຍ ຖ້າບົດ ແລະ ພະຍັນຊະນະເຫຼົ່ານັ້ນ ສອບລົງໃນສູດກໍໄດ້ ທຽບເຂົ້າໃນວິໄນກໍໄດ້ ເພິ່ງລົງສັນນິດຖານວ່າ "ນີ້ເປັນພຣະດຳຣັດ ຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນແນ່ ນອນ ແລະ ພຣະເຖຣະອົງນັ້ນ ຮັບມາດ້ວຍດີ" ທ່ານທັງຫຼາຍເພິ່ງຈຳມະຫາປະເທດປະການທີ ໔ ນີ້ໄວ້

ດູຣາ ພິກຂຸທັງຫຼາຍ ໃຫ້ທ່ານທັງຫຼາຍຈົ່ງຈຳມະຫາປະເທດ ໔ ປະການເອົາໄວ້ແນວນີ້ແລ

ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ທີ່ອານັນທະເຈດີ ໃນໂພຄະນະຄອນ ຊົງສະແດງທຳມີກະຖາເປັນຈຳນວນຫຼາຍ ແກ່ພິກຂຸທັງຫຼາຍແນວນີ້ວ່າ "ສີນມີລັກສະນະແນວນີ້ ສະມາທິມີລັກສະນະແນວນີ້ ປັນຍາມີລັກສະນະແນວນີ້ ສະມາທິອັນບຸກຄົນອົບຮົມໂດຍມີສີນເປັນຖານ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ປັນຍາອັນບຸກຄົນອົບຮົມໂດຍມີສະມາທິເປັນຖານຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຈິດອັນບຸກຄົນອົບຮົມ ໂດຍມີປັນຍາເປັນຖານ ຍ່ອມຫຼຸດພົ້ນໂດຍຊອບຈາກອາສະວະທັງຫຼາຍ ຄື ກາ ມາສະວະ ພະວາສະວະ ແລະ ອະວິດຊາສະວະ"

## ເລື່ອງທ້າວຈຸນທະກຳມາຣະບຸດ (ບຸດຊ່າງຄຳ)

[໑໗໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບຢູ່ຕາມຄວາມພໍພຣະທະໄທໃນໂພຄະນະຄອນແລ້ວ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ເມືອງປາວາກັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ຕໍ່ມາພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດໄປເຖິງເມືອງປາວາ ປະທັບຢູ່ທີ່ອຳພະວັນຂອງທ້າວຈຸນທະກຳມາຣະບຸດ ເຂດເມືອງປາວາ ເມື່ອທ້າວຈຸນທະກຳມາຣະບຸດໄດ້ຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າ ສະເດັດເຖິງເມືອງປາວາປະທັບຢູ່ທີ່ສວນໝາກມ່ວງຂອງເຮົາຢູ່" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນສ່ວນແຫ່ງຕົນ ພຣະຜູ້ມີ

ພຣະພາກເຈົ້າຊົງຊີ້ແຈ່ງໃຫ້ທ້າວຈຸນທະກຳມາຣະບຸດເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ

ລຳດັບ ນັ້ນທ້າວຈຸນທະກຳມາຣະບຸດ ຜູ້ອັນພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ

ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນດ້ວຍພຣະອາການດຸດສະດີ

ເມື່ອທ້າວຈຸນທະກຳມາຣະບຸດ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວຈຶ່ງລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

ເມື່ອຣາຕີນັ້ນຜ່ານໄປ ທ້າວຈຸນທະກຳມາຣະບຸດໄດ້ກະກຽມຂອງຂົບສັນອັນປະນີດ ແລະສູກະ ຣະມັດທະວະຈຳນວນພຽງພໍໄວ້ໃນນິເວດຂອງຕົນ ເມື່ອຮອດເວລາກໍໄດ້ໃຫ້ຄົນໄປຂາບທູນເວລາແດ່ ພຣະຜູ້ມີພຣະພາກເຈົ້າວ່າ "ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນພ້ອມດ້ວຍພິກຂຸສົງສະເດັດເຂົ້າໄປສູ່ນິເວດຂອງທ້າວຈຸນທະກຳມາຣະບຸດ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຮັບສັ່ງຮຽກທ້າວຈຸນທະກຳມາຣະບຸດມາຕັດວ່າ "ດູຣາ ຈຸນທະ ທ່ານຈົ່ງຖວາຍສູກະຣະມັດທະວະທີ່ກະກຽມໄວ້ແກ່ເຮົາ ຖວາຍຂອງຂົບສັນຢ່າງອື່ນທີ່ກະກຽມໄວ້ແກ່ພິກຂຸສົງເທີ້ນ

ເຂົາທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ແລ້ວຖວາຍສູກະຣະມັດທະວະທີ່ກະກຽມໄວ້ແດ່ ພຣະຜູ້ມີພຣະພາກເຈົ້າ ຖວາຍຂອງຂົບສັນຢ່າງອື່ນທີ່ກະກຽມໄວ້ແດ່ພິກຂຸສົງທັງຫຼາຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ້າວຈຸນທະກຳມາຣະບຸດມາຕັດວ່າ "ດູຣາຈຸນທະສູກະຣະມັດທະວະທີ່ເຫຼືອທ່ານຈົ່ງຝັງລົງໃນຂຸມ ເຮົາຍັງບໍ່ເຫັນໃຜໃນໂລກພ້ອມເທວະໂລກມານຣະໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາຫຼືມະນຸດ ທີ່ບໍລິໂພກສູກະຣະມັດທະວະນັ້ນແລ້ວ ຈະຍ່ອຍໄດ້ດ້ວຍດີ ນອກຈາກຕະຖາຄົດ"

ທ້າວຈຸນທະກຳມາຣະບຸດທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ຝັງສູກະຣະມັດທະວະທີ່ເຫຼືອລົງໃນຂຸມ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງບ່ອນປະທັບຖວາຍອະພິວາດນັ່ງຢູ່ບ່ອນສົມຄວນສ່ວນແຫ່ງຕົນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ທ້າວຈຸນທະກຳມາຣະບຸດ ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນເບີກບານດ້ວຍທຳມີກະຖາ ແລ້ວຊົງລຸກຈາກພຸດທະອາດສະເດັດຈາກໄປ

[໑໙໐] ລຳດັບນັ້ນ ຫຼັງຈາກພຣະຜູ້ມີພຣະພາກເຈົ້າສະເຫວີຍພຣະກະຍາຫານຂອງທ້າວຈຸນທະກຳມາຣະບຸດແລ້ວ ໄດ້ເກີດອາການພຣະປະຊວນຢ່າງຮຸນແຮງຂຶ້ນ ມີອາການຖ່າຍໜັກເປັນເລືອດ ຊົງມີທຸກຂະເວທະນາຢ່າງແສນສາຫັດ ເກືອບຈະປະຣິນິບພານ ພຣະອົງຊົງມີສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນາເຫຼົ່ານັ້ນໄວ້ ບໍ່ຫວັ່ນໄຫວ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ເມືອງກຸສິນາຣາກັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ແລ້ວໄດ້ຄຶດຮ່ຳເພິງໃນໃຈວ່າ

> ພຣະຜູ້ມີພຣະພາກເຈົ້າຜູ້ຊົງມີພຣະປຣີຊາ
> ສະເຫວີຍພັດຕາຫານຂອງທ້າວຈຸນທະກຳມາຣະບຸດແລ້ວ
> ຊົງພຣະປະຊວນຢ່າງແສນສາຫັດ
> ເກືອບຈະປະຣິນິບພານ
> ເມື່ອພຣະສາດສະດາສະເຫວີຍສູກະຣະມັດທະວະແລ້ວ
> ໄດ້ເກີດອາການພຣະປະຊວນຢ່າງຮຸນແຮງ
> ຖ່າຍໜັກເປັນເລືອດ ຕັດວ່າ

"ເຮົາຈະໄປສູ່ເມືອງກຸສິນາຣາກັນ" ແລ້ວຊົງຮັບສັ່ງຂໍນ້ຳດື່ມ

[໑໙໑] ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງແວ່ຂ້າງທາງ ສະເດັດເຂົ້າໄປສູ່ກ້ອງກົກໄມ້ຕົ້ນໜຶ່ງ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ທ່ານຊ່ອຍປູຜ້າສັງຄາຊ້ອນກັນ ໔ ຊັ້ນ ອານົນ ເຮົາເມື່ອຍຫຼາຍ ຈະນັ່ງພັກເຊົາເອົາແຮງ"

ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ແລ້ວໄດ້ປູຜ້າສັງຄາຊ້ອນກັນ ໔ ຊັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບເທິງອາສະນະທີ່ທ່ານພຣະອານົນປູລາດຖວາຍໄວ້ໃຫ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ທ່ານຊ່ອຍໄປຕັກນ້ຳດື່ມມາໃຫ້ເຮົາແດ່ ເຮົາຄໍແຫ້ງຢາກດື່ມນ້ຳ"

ເມື່ອພຣະຜູ້ມີພຣະພາກເຈົ້າຮັບສັ່ງແນວນີ້ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມີກວຽນປະມານ ໕໐໐ ເຫຼັ້ມ ຫາກໍຂ້າມໄປເມື່ອ

ກີ້ນີ້ ນ້ຳນັ້ນມີໜ້ອຍ ພ້ອມກັບຖືກກົງກວຽນຢຽບຈົນຂຸ່ນຈົນເປັນຕົມໄຫຼໄປ ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນ້ຳກະກຸທາຢູ່ບໍ່ໄກຈາກນີ້ ມີນ້ຳໃສຈືດເຢັນສະອາດ ມີທ່ານ້ຳຂຶ້ນລົງສະດວກ ເປັນຕາເບີກບານໃຈ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດອົດທົນສະເດັດໄປໃຫ້ເຖິງບ່ອນນັ້ນ ຈະຊົງໄດ້ດື່ມ ແລະ ສົງພຣະວໍຣະກາຍໃນແມ່ນ້ຳກະກຸທານັ້ນເທີ້ນ"

ແມ່ນເທື່ອທີ ໘ ພຣະຜູ້ມີພຣະພາກຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ທ່ານຊ່ອຍໄປຕັກນ້ຳດື່ມມາໃຫ້ເຮົາແດ່ ເຮົາຄໍແຫ້ງຢາກດື່ມນ້ຳ" ແມ່ນເທື່ອທີ ໘ ທ່ານພຣະອານົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມີກວຽນປະມານ ໕໐໐ ເຫຼັ້ມ ຫາກໍຂ້າມໄປເມື່ອກີ້ນີ້ ນ້ຳນັ້ນມີໜ້ອຍ ພ້ອມກັບຖືກກົງກວຽນຢຽບຈົນຂຸ່ນຈົນເປັນຕົມໄຫຼໄປ ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນ້ຳກະກຸທາຢູ່ບໍ່ໄກຈາກນີ້ ມີນ້ຳໃສຈືດເຢັນສະອາດ ມີທ່ານ້ຳຂຶ້ນລົງສະດວກ ເປັນຕາເບີກບານໃຈ ຂໍພຣະຜູ້ມີພຣະພາກເຈົ້າໂຜດອົດທົນສະເດັດໄປໃຫ້ເຖິງບ່ອນນັ້ນ ຈະຊົງໄດ້ດື່ມ ແລະ ສົງພຣະວໍຣະກາຍໃນແມ່ນ້ຳກະກຸທານັ້ນເທີ້ນ"

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າ ກໍຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ທ່ານຊ່ອຍໄປຕັກນ້ຳດື່ມມາ ເຮົາຄໍແຫ້ງຢາກດື່ມນ້ຳ" ແມ່ນເທື່ອທີ ໓ ທ່ານພຣະອານົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມີກວຽນປະມານ ໕໐໐ ເຫຼັ້ມ ຫາກໍຂ້າມໄປເມື່ອກີ້ນີ້ ນ້ຳນັ້ນມີໜ້ອຍ ພ້ອມກັບຖືກກົງກວຽນຢຽບຈົນຂຸ່ນຈົນເປັນຕົມໄຫຼໄປ ແຕ່ເມື່ອທ່ານ ພຣະອານົນເຂົ້າໄປໃກ້ທີ່ນັ້ນ ນ້ຳທີ່ຂຸ້ນຢູ່ຊ່ຳພັດໃສສະອາດບໍ່ຂຸ່ນໄຫຼຢູ່ ທ່ານພຣະອານົນຈຶ່ງຄິດວ່າ "ເປັນຕາອັດສະຈັນແທ້ນໍ ບໍ່ເຄີຍພົບເຫັນມາກ່ອນ ພຣະຕະຖາຄົດເຈົ້າຊົງມີລິດຫຼາຍ ມີອານຸພາບຫຼາຍ ແມ່ນ້ຳນີ້ມີນ້ຳໜ້ອຍຖືກກົງກວຽນຢຽບຈົນຂຸ່ນເປັນຕົມໄຫຼໄປ ເມື່ອເຮົາເຂົ້າມາໃກ້ ຊ່ຳພັດໃສສະອາດບໍ່ຂຸ່ນ ຈຶ່ງໃຊ້ບາດຕັກນ້ຳແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບແລ້ວ ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຕາອັດສະຈັນແທ້ນໍ ບໍ່ເຄີຍພົບມີມາກ່ອນ ພຣະຕະຖາຄົດເຈົ້າຊົງມີລິດຫຼາຍ ມີອານຸພາບຫຼາຍ ແມ່ນ້ຳນັ້ນມີນ້ຳໜ້ອຍ ຖືກກົງກວຽນຢຽບຈົນຂຸ່ນເປັນຕົມໄຫຼໄປ ເມື່ອຂ້າພຣະອົງຍ່າງເຂົ້າໄປໃກ້ຊ່ຳພັດໃສສະອາດບໍ່ຂຸ່ນ ຂໍພຣະຜູ້ມີພຣະພາກເຈົ້າຊົງດື່ມນ້ຳເທີ້ນ ຂໍພຣະສຸຄົດເຈົ້າຊົງດື່ມນ້ຳເທີ້ນ" ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງດື່ມນ້ຳທີ່ພຣະອານົນຕັກມາຖວາຍແລ້ວຊົງພັກຜ່ອນ

## ເລື້ອງປຸກກຸສະມັນລະບຸດ

[໑໙໘] ກໍສະໄໝນັ້ນ ໂອຣົດເຈົ້າມັນລະພຣະນາມວ່າ ປຸກກຸສະ ເປັນສາວົກຂອງອາລາຣະ ລືສີ ກາລາມະໂຄດ ເດີນທາງໄກຈາກເມືອງກຸສີນາຣາໄປເມືອງປາວາໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບຢູ່ກ້ອງກົກໄມ້ ຕົ້ນໜຶ່ງ ຄັນແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນສົມຄວນຂອງຕົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້

ວ່າ " ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດມີມາກ່ອນ ບັນພະຊິດທັງຫຼາຍຍ່ອມຢູ່ດ້ວຍທຳເປັນເຄື່ອງຢູ່ອັນສະຫງົບ ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງມີຢູ່ວ່າອາລາຣະລືສີ ກາລາມະໂຄດ ເດີນທາງໄກແວ່ຂ້າງທາງພັກຢູ່ກ້ອງກົກໄມ້ ຕົ້ນໜຶ່ງໃນບ່ອນບໍ່ໄກ ເວລານັ້ນ ກວຽນຕັ້ງ ໕໐໐ ເຫຼັ້ມ ໄດ້ຜ່ານທ່ານອາລາຣະລືສີ ກາລາມະໂຄດຕິດ ໆ ກັນໄປຂະນະນັ້ນ ບຸຣຸດຄົນໜຶ່ງ ກຳລັງຍ່າງຕາມຫຼັງໝູ່ກວຽນມາ ເຂົ້າໄປຫາທ່ານອາລາຣະລືສີ ກາລາມະໂຄດເຖິງບ່ອນຢູ່ແລ້ວ ໄດ້ຖາມທ່ານອາລາຣະລືສີ ແນວນີ້ວ່າ "ຂ້າແດ່ ທ່ານຜູ້ຈະເລີນ ທ່ານເຫັນກວຽນ ໕໐໐ ເຫລັ້ມ ທີ່ຜ່ານໄປແດ່ບໍ?"

ທ່ານອາລາຣະລືສີ ຕອບວ່າ

"ເຮົາບໍ່ເຫັນເລີຍ ຜູ້ມີອາຍຸ"

"ທ່ານໄດ້ຍິນສຽງແດ່ບໍ?"

"ເຮົາບໍ່ໄດ້ຍິນ ຜູ້ມີອາຍຸ"

"ທ່ານຫຼັບຢູ່ບໍ?"

"ເຮົາບໍ່ໄດ້ຫຼັບ ຜູ້ມີອາຍຸ"

"ທ່ານຮູ້ເມື່ອຢູ່ບໍ?"

"ເຮົາຮູ້ເມື່ອຢູ່ ຜູ້ມີອາຍຸ"

"ທ່ານຮູ້ເມື່ອຢູ່ ແຕ່ບໍ່ໄດ້ເຫັນກວຽນຕັ້ງ ໕໐໐ ເຫຼັ້ມ ທີ່ຜ່ານຕິດ ໆ ກັນໄປ ທັງບໍ່ໄດ້ຍິນສຽງກໍຜ້າພາດບ່າຂອງທ່ານເປື້ອນຝຸ່ນໄທງ່ແດ່ບໍ?"

"ເປັນແນວນັ້ນ ຜູ້ມີອາຍຸ"

ບຸຣຸດນັ້ນ ມີຄວາມຄິດແນວນີ້ວ່າ "ທ່ານຜູ້ຈະເລີນ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດມີມາກ່ອນ ບັນພະຊິດທັງຫຼາຍຍ່ອມຢູ່ດ້ວຍທຳເປັນເຄື່ອງຢູ່ອັນສະຫງົບຢ່າງຍິ່ງ ດັ່ງທີ່ທ່ານອາລາຣະລືສີຜູ້ຮູ້ເມື່ອຢູ່ ແຕ່ບໍ່ເຫັນກວຽນຕັ້ງ ໕໐໐ ເຫລັ້ມ ທີ່ແລນຜ່ານຕິດ ໆ ກັນໄປ ທັງບໍ່ໄດ້ຍິນສຽງ" ເຂົາປະກາດຄວາມເຫຼື້ອມໃສໃນທ່ານອາລາຣະລືສີ ກາລາມະໂຄດແລ້ວຈາກໄປ"

[໑໙໑] ພຣະຜູ້ມີພຣະພາກເຈົ້າຕັດຖາມປຸກກຸສະວ່າ "ດູຣາປຸກກຸສະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເຮັດໄດ້ຍາກກວ່າກັນ ເກີດຂຶ້ນໄດ້ຍາກກວ່າກັນ ລະຫວ່າງຜູ້ຮູ້ເມື່ອຢູ່ ບໍ່ເຫັນກວຽນຕັ້ງ ໕໐໐ ເຫຼັ້ມ ທີ່ຜ່ານຕິດ ໆ ກັນໄປ ທັງບໍ່ໄດ້ຍິນສຽງກັບຜູ້ທີ່ຮູ້ເມື່ອຢູ່ ເມື່ອຝົນກຳລັງຕົກ ແລະ ຕົກແຮງ ຟ້າແມບ ຟ້າຜ່າລົງມາ ກໍບໍ່ໄດ້ເຫັນ ແລະ ບໍ່ໄດ້ຍິນສຽງ"

ປຸກກຸສະທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ກວຽນ ໕໐໐ ເຫຼັ້ມ ໖໐໐ ເຫຼັ້ມ ໗໐໐ ເຫຼັ້ມ ໘໐໐ ເຫຼັ້ມ ໙໐໐ ເຫຼັ້ມ ໑,໐໐໐ ເຫຼັ້ມ ໗ລ໗ ກວຽນ ໑໐໐,໐໐໐ ເຫຼັ້ມ ຈະປຽບກັນໄດ້ແນວໃດ ແທ້ຈິງ ຜູ້ທີ່ຮູ້ເມື່ອຢູ່ ເມື່ອຝົນກຳລັງຕົກ ແລະ ຕົກແຮງ ຟ້າແມບ ຟ້າຜ່າຢູ່ ກໍບໍ່ໄດ້ເຫັນ ແລະ ບໍ່ໄດ້ຍິນສຽງແນວນີ້ ເຮັດໄດ້ຍາກກວ່າ ແລະ ເກີດຂຶ້ນໄດ້ຍາກກວ່າ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ປຸກກຸສະ ຄັ້ງໜຶ່ງ ເຮົາພັກຢູ່ເຫີບຄົກມອງເຂດເມືອງອາຕຸມາ ເວລານັ້ນ ຝົນກຳລັງຕົກ ຕົກແຮງ ຟ້າແມບ ຟ້າຜ່າຢູ່ ມີຊາວນາ ໔ ຄົນພີ່ນ້ອງ ແລະ ງົວ ໔ ໂຕ ຖືກຟ້າຜ່າໃກ້ເຫີບຄົກມອງ ໃນຂະນະນັ້ນ ໝູ່ມະຫາຊົນໃນເມືອງອາຕຸມາອອກໄປຫຸ້ມເບິ່ງ ຊາວນາ ໔ ຄົນ ອ້າຍນ້ອງ ແລະ ງົວ ໔ ໂຕ ທີ່ຖືກຟ້າຜ່ານັ້ນ ເມື່ອເຮົາອອກຈາກເຫີບຄົກມອງ ຍ່າງຈົງກົມຢູ່ທີ່ກາງແຈ້ງໃກ້ປະຕູເຫີບຄົກມອງ ມີບຸຣຸດຄົນໜຶ່ງອອກມາຈາກບ່ອນຊຸມນຸມນັ້ນ ຍ່າງເຂົ້າມາຫາເຮົາເຖິງບ່ອນຢູ່ ໄດ້ໄຫວ້ເຮົາຢືນໃນບ່ອນສົມຄວນແລ້ວເຮົາໄດ້ຖາມບຸຣຸດນັ້ນແນວນີ້ວ່າ "ດູຣາ ຜູ້ມີອາຍຸ ຊາວບ້ານໝູ່ນັ້ນ ຊຸມນຸມກັນດ້ວຍສາເຫດອັນໃດ?"

ບຸຣຸດນັ້ນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ດຽວນີ້ເອງ ໃນຂະນະທີ່ຝົນກຳລັງຕົກ ແລະ ຕົກແຮງ ຟ້າແມບ ຟ້າຜ່າຢູ່ ມີຊາວນາ ໔ ຄົນ ອ້າຍນ້ອງ ແລະ ງົວ ໔ ໂຕ ຖືກຟ້າຜ່າ ຊາວບ້ານຊຸມນຸມກັນເບິ່ງຢູ່ນັ້ນເພາະເຫດນີ້ ທ່ານເຮັດຫຍັງຢູ່ບໍ?"

ເຮົາຕອບວ່າ "ເຮົາຍ່າງຈົງກົມຢູ່"
ບຸຣຸດນັ້ນຖາມວ່າ "ທ່ານເຫັນບໍ"
ເຮົາຕອບວ່າ "ເຮົາບໍ່ເຫັນເລີຍ ຜູ້ມີອາຍຸ"
ບຸຣຸດນັ້ນຖາມວ່າ "ທ່ານໄດ້ຍິນສຽງບໍ?"
ເຮົາຕອບວ່າ "ເຮົາບໍ່ໄດ້ຍິນ ຜູ້ມີອາຍຸ"
ບຸຣຸດນັ້ນຖາມວ່າ "ທ່ານຫຼັບຢູ່ບໍ?"
ເຮົາຕອບວ່າ "ເຮົາບໍ່ໄດ້ຫຼັບ ຜູ້ມີອາຍຸ"
ບຸຣຸດນັ້ນຖາມວ່າ "ທ່ານຮູ້ເມື່ອຢູ່ບໍ?"
ເຮົາຕອບວ່າ "ເຮົາຮູ້ເມື່ອຢູ່ ຜູ້ມີອາຍຸ"

ບຸຣຸດນັ້ນ ຖາມວ່າ "ທ່ານຮູ້ເມື່ອຢູ່ ໃນຂະນະຝົນກຳລັງຕົກ ຕົກແຮງ ຟ້າແມບ ຟ້າຜ່າຢູ່ ບໍ່ໄດ້ເຫັນ ແລະ ບໍ່ໄດ້ຍິນສຽງເລີຍບໍ?"

ເຮົາຕອບວ່າ "ເປັນແນວນັ້ນ ຜູ້ມີອາຍຸ"

ບຸຣຸດນັ້ນ ມີຄວາມຄິດແນວນີ້ວ່າ "ທ່ານຜູ້ຈະເລີນ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດມີມາກ່ອນ ບັນພະຊິດທັງຫຼາຍຢູ່ດ້ວຍທຳເປັນເຄື່ອງຢູ່ອັນສະຫງົບເປັນແນວນີ້ເອງ ດັ່ງທີ່ທ່ານສະມະນະຜູ້ຮູ້ເມື່ອຢູ່ ເມື່ອຝົນກຳລັງຕົກ ຕົກແຮງ ຟ້າແມບ ຟ້າຜ່າຢູ່ ກໍບໍ່ເຫັນ ແລະ ບໍ່ໄດ້ຍິນສຽງຫຍັງເລີຍ" ເຂົາໄດ້ປະກາດຄວາມເຫຼື້ອມໃສໃນເຮົາ ໂດຍການກະທຳປະທັກຂິນແລ້ວຍ່າງຈາກໄປ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ປຸກກຸສະມັນລະບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຂໍໂຮຍຄວາມເຫຼື້ອມໃສ ທີ່ມີໃນອາລາຣະລືສີກາລາມະໂຄດ ໄປຕາມກະແສລົມທີ່ພັດແຮງ ຫຼື ລອຍໃນແມ່ນ້ຳໄຫຼແຮງນັ້ນ ໆ ດ້ວຍເຫີນ

ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດແຈ້ງນ່ວນຫຼາຍ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງນ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳຊັດແຈ້ງ ໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດ ໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມກັບພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈື່ຂ້າພຣະອົງວ່າເປັນອຸປາສົກ ຜູ້ຖືສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

[໑໘໔] ລຳດັບນັ້ນ ປຸກກຸສະມັນລະບຸດຮັບສັ່ງຮຽກບຸຣຸດຄົນໜຶ່ງມາຕັດວ່າ "ຫ້າວເອີຍ ເຈົ້າຊ່ອຍນຳຜ້າເນື້ອລະອຽດສີຄຳເປັນຕາໃຊ້ຄູ່ໜຶ່ງ (໔ ຜືນ) ຂອງເຮົາມາໃຫ້ແດ່" ບຸຣຸດນັ້ນຮັບຄຳວ່າ ໂດຍຂ້ານ້ອຍ ແລ້ວໄດ້ນຳຄູ່ຜ້າເນື້ອລະອຽດສີຄຳ ເປັນຕາໃຊ້ຄູ່ນັ້ນມາໃຫ້ ຈາກນັ້ນ ປຸກກຸສະມັນລະບຸດໄດ້ນ້ອມຜ້າຄູ່ເນື້ອລະອຽດສີຄຳເປັນຕາໃຊ້ຄູ່ນັ້ນ ເຂົ້າໄປຖວາຍພຣະຜູ້ມີພຣະພາກເຈົ້າ ພ້ອມກັບຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຮັບຄູ່ຜ້າເນື້ອລະອຽດສີຄຳເປັນຕາໃຊ້ຄູ່ນີ້ ເພື່ອອະນຸເຄາະ ຂ້າພຣະອົງດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ປຸກກຸສະ ຖ້າເປັນແບບນັ້ນ ທ່ານຈົ່ງໃຫ້ເຮົາຄອງຜືນໜຶ່ງ ອີກຜືນໜຶ່ງໃຫ້ອານົນຄອງເທີ້ນ"

ປຸກກຸສະມັນລະບຸດ ທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ແລ້ວຖວາຍໃຫ້ພຣະຜູ້ມີພຣະພາກເຈົ້າຊົງຄອງຜືນໜຶ່ງ ຖວາຍໃຫ້ທ່ານພຣະອານົນຄອງອີກຜືນໜຶ່ງ

ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ປຸກກຸສະມັນລະບຸດເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາແລ້ວ ລຳດັບນັ້ນ ປຸກກຸສະມັນລະບຸດ ຜູ້ອັນພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານ ອອຍໃຈໃຫ້ສົດຊື່ນ ເບີກບານດ້ວຍທຳມີກະຖາ ໄດ້ລຸກຈາກບ່ອນນັ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

[໑໘໕] ເມື່ອປຸກກຸສະມັນລະບຸດຈາກໄປບໍ່ດົນ ທ່ານພຣະອານົນໄດ້ນ້ອມຄູ່ຜ້າເນື້ອລະອຽດສີຄຳເປັນຕາໃຊ້ຄູ່ນັ້ນ ເຂົ້າໄປຄຸມພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ພໍທ່ານພຣະອານົນນ້ອມເຂົ້າໄປຄຸມພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ຜ້ານັ້ນຜາກົດມີສີຮຸ່ງເຮືອງຄືຖ່ານໄຟທີ່ບໍ່ມີແປວ

ຄັ້ງນັ້ນ ທ່ານພຣະອານົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດພຣະສະຫວີວັນຂອງພຣະຕະຖາຄົດເຈົ້າ ບໍລິສຸດສົດໃສຄືແບບນີ້ມາກ່ອນ ຄູ່ຜ້າເນື້ອລະອຽດສີຄຳເປັນຕາໃຊ້ຄູ່ນີ້ ພຽງແຕ່ຂ້າພຣະອົງນ້ອມເຂົ້າໄປຄຸມພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ກໍຜາກົດມີສີຮຸ່ງເຮືອງຄືຖ່ານໄຟທີ່ບໍ່ມີແປວ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ອານົນ ໃນເລື້ອງນີ້ເປັນແນວນັ້ນ ດູຣາ ອານົນຂໍ້ນີ້ເປັນແນວນັ້ນ ກາຍຂອງຕະຖາຄົດຍ່ອມບໍລິສຸດ ຜິວພັນສົດໃສຢ່າງຍິ່ງຢູ່ໃນ ໒ ຄັ້ງ ກາຍຂອງຕະຖາຄົດຍ່ອມບໍລິສຸດ ຜິວພັນສົດໃສຢ່າງຍິ່ງຢູ່ໃນ ໒ ຄັ້ງນັ້ນ ມີຄັ້ງໃດແດ່ ຄື

໑. ໃນຣາຕີທີ່ຕະຖາຄົດໄດ້ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານ

໒. ໃນຣາຕີທີ່ຕະຖາຄົດ ປະຣິນິບພານດ້ວຍອະນຸປາທິເສດນິບພານທາດ

ດູຣາ ອານົນ ກາຍຂອງຕະຖາຄົດຍ່ອມບໍລິສຸດຜິວພັນສົດໃສຢ່າງຍິ່ງຢູ່ໃນ ໒ ຄັ້ງນີ້ແລ

ໃນປັດສິມມະຍາມແຫ່ງຣາຕີນີ້ນີ້ ຕະຖາຄົດຈະປະຣິນິບພານໃນລະຫວ່າງໄມ້ສາລະທັງຄູ່ໃນສາລະວັນຂອງມັນລະ ອັນເປັນທາງເຂົ້າທິດໃຕ້ເມືອງກຸສິນາຣາ ມາເທີ້ນອານົນ ເຮົາຈະເຂົ້າໄປສູ່ແມ່ນ້ຳກະກຸທາກັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ປຸກກຸສະນ້ອມຖວາຍຜ້າສີຄຳເນື້ອລະອຽດຄູ່ໜຶ່ງ ພໍພຣະສາດສະດາຊົງຄອງຜ້າຄູ່ນັ້ນ ມີພຣະສະຫວີວັນດັ່ງຄຳງົດງາມຫຼາຍ

[໑໙໖] ຕໍ່ມາ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຂົ້າໄປສູ່ແມ່ນ້ຳກະກຸທາ ສະເດັດລົງສົງໃນແມ່ນ້ຳກະກຸທາຊົງດື່ມ ແລ້ວສະເດັດຂຶ້ນໄປສູ່ອຳພະວັນ ຮັບສັ່ງຮຽກທ່ານພຣະຈຸນທະກະ ມາຕັດວ່າ "ດູຣາ ຈຸນທະກະ ທ່ານຊ່ອຍປູຜ້າສັງຄາຊ້ອນກັນ ໔ ຊັ້ນ ເຮົາເມື່ອຍຫຼາຍຈະນອນພັກ"

ທ່ານພຣະຈຸນທະກະທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ແລ້ວໄດ້ປູຜ້າສັງຄາຊ້ອນກັນ ໔ ຊັ້ນ ພຣະຜູ້ມີພຣະພາກເຈົ້າຊົງສຳເລັດສີຫະໄສຍາ ໂດຍສະແຄງເບື້ອງຂວາຊົງຊ້ອນພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະ ຊົງກຳນົດພຣະຫະໄທພ້ອມຈະສະເດັດລຸກຂຶ້ນ ສ່ວນທ່ານພຣະຈຸນທະກະ ນັ່ງເຝົ້າຢູ່ເບື້ອງພຣະພັກຂອງພຣະຜູ້ມີພຣະພາກເຈົ້າໃນບ່ອນນັ້ນ

ພຣະພຸດທະເຈົ້າຜູ້ເປັນພຣະສາດສະດາ
ຜູ້ຊົງເຂົ້າເຖິງສະພາວະຕາມຄວາມເປັນຈິງ
ຫາຜູ້ໃດໃນໂລກສະເໝີເໝືອນບໍ່ໄດ້
ສະເດັດເຖິງແມ່ນ້ຳກະກຸທາທີ່ມີນ້ຳໃສ ຈືດ ເຢັນ ສະອາດ
ລົງສົງແລ້ວຈຶ່ງຊົງບັນເທົາຄວາມເມື່ອຍ
ພຣະບໍຣົມສາດສະດາຜູ້ຊົງສັ່ງສອນ ແຈກແຈງທຳ
ໃນພຣະສາດສະໜານີ້ເປັນຜູ້ສະແຫວງຫາຄຸນອັນໃຫຍ່
ເມື່ອສົງນ້ຳ ແລະ ຊົງດື່ມນ້ຳແລ້ວ

ກໍສະເດັດນໍາໜ້າໝູ່ພິກຂຸໄປສູ່ອໍາພະວັນ
ຮັບສັ່ງພິກຂຸຊື່ຈຸນທະກະມາຕັດວ່າ
"ທ່ານຈົ່ງຊ່ອຍປູຜ້າສັງຄາຊ້ອນກັນ ໔ ຊັ້ນ ໃຫ້ເປັນບ່ອນນອນພັກແກ່ເຮົາ"
ທ່ານພຣະຈຸນທະກະນັ້ນ ຜູ້ໄດ້ຮັບການເຝິກມາດີແລ້ວ
ພໍໄດ້ຮັບຄໍາສັ່ງກໍຟ້າວປູຜ້າສັງຄາຊ້ອນກັນ ໔ ຊັ້ນ
ພຣະສາດສະດາບັນທົມແລ້ວຊົງບັນເທົາຄວາມອິດເມື່ອຍ
ຝ່າຍທ່ານພຣະຈຸນທະກະກໍນັ່ງເຝົ້າສະເພາະພຣະພັກຢູ່ໃນບ່ອນນັ້ນ

[໑໙໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນຕໍ່ໄປພາຍພາກໜ້າ ອາດມີຜູ້ເຮັດໃຫ້ທ້າວຈຸນທະກໍາມາຣະບຸດເດືອດຮ້ອນໃຈວ່າ "ຈຸນທະ ການທີ່ພຣະຕະຖາຄົດເຈົ້າສະເຫວີຍບິນທະບາດຂອງທ່ານ ເປັນຄາບສຸດທ້າຍແລ້ວໄດ້ປະຣິນິບພານໄປ ທ່ານຈະບໍ່ໄດ້ອານິສົງ ຄວາມດີງາມເປັນເລື້ອງທີ່ທ່ານຈະເພິ່ງຫວັງໄດ້ຍາກ"

ດູຣາ ອານົນ ທ່ານເພິ່ງຊ່ອຍບັນເທົາຄວາມຮ້ອນໃຈຂອງທ້າວຈຸນທະກໍາມາຣະບຸດແນວນີ້ວ່າ "ຜູ້ມີອາຍຸ ຈຸນທະ ການທີ່ພຣະຕະຖາຄົດເຈົ້າ ສະເຫວີຍບິນທະບາດຂອງທ່ານ ເປັນຄາບສຸດທ້າຍແລ້ວປະຣິນິບພານນັ້ນ ທ່ານຈະໄດ້ຮັບອານິສົງ ຄວາມດີງາມກໍຈະໄດ້ໂດຍງ່າຍ ເລື້ອງນີ້ເຮົາໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ແລະ ຈໍາໄດ້ວ່າ "ບິນທະບາດ ໒ ຄັ້ງ ມີຜົນທໍ່ກັນ ມີວິບາກທໍ່ກັນ ມີຜົນຫຼາຍກວ່າ ມີອານິສົງຫຼາຍກວ່າ ຍິ່ງກວ່າບິນທະບາດອື່ນ ໆ ບິນທະບາດ ໒ ຄັ້ງນັ້ນ ມີຄັ້ງໃດແດ່ ຄື

໑. ບິນທະບາດທີ່ພຣະຕະຖາຄົດເຈົ້າສະເຫວີຍແລ້ວ ໄດ້ຕັດສະຣູ້ອະນຸດຕະຣະສໍາມາສໍາໂພທິຍານ

໒. ບິນທະບາດທີ່ພຣະຕະຖາຄົດເຈົ້າ ສະເຫວີຍແລ້ວປະຣິນິບພານ ດ້ວຍອະນຸປາທິເສດນິບພານທາດ ບິນທະບາດ ໒ ຄັ້ງ ມີຜົນທໍ່ກັນ ມີວິບາກທໍ່ກັນ ມີຜົນຫຼາຍກວ່າ ມີອານິສົງຫຼາຍກວ່າ ຍິ່ງກວ່າບິນທະບາດອື່ນ ໆ"

ກໍາທີ່ຈຸນທະກໍາມາຣະບຸດສ້າງສົມໄວ້ ເປັນໄປເພື່ອອາຍຸ ເປັນໄປເພື່ອວັນນະ ເປັນໄປເພື່ອສຸຂະ ເປັນໄປເພື່ອຍົດ ເປັນໄປເພື່ອເກີດໃນສະຫວັນ ເປັນໄປເພື່ອຄວາມເປັນໃຫຍ່"

ດູຣາ ອານົນ ທ່ານເພິ່ງຊ່ອຍບັນເທົາຄວາມຮ້ອນໃຈຂອງຈຸນທະກໍາມາຣະບຸດແນວນີ້ແລ"

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄວາມນັ້ນແລ້ວ ຊົງເປັ່ງອຸທານໃນເວລານັ້ນວ່າ

"ຜູ້ໃຫ້ຍ່ອມເພີ່ມພູນບຸນ ຜູ້ສັງລວມຍ່ອມບໍ່ກໍ່ເວນ
ສ່ວນຜູ້ສະຫຼາດຍ່ອມລະກໍາຊົ່ວໄດ້
ຜູ້ນັ້ນດັບໄດ້ແລ້ວ ເພາະສິ້ນຣາຄະ ໂທສະ ແລະ ໂມຫະ"

**ພານະວານທີ ໔ ຈົບ**

# ສະເດັດໄປສູ່ຕົ້ນສາລະທັງຄູ່

[໑໗໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນ ອານົນ ເຮົາຈະຂ້າມໄປຝັ່ງນັ້ນ ແຫ່ງແມ່ນໍ້າຫິຣັນຍະວະດີ ກົງສາລະວັນຂອງພວກເຈົ້າມັນລະອັນ ເປັນທາງເຂົ້າເມືອງກຸສິນາຣາກັນ" ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດວ່າ ໂດຍ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດໄປສູ່ຝັ່ງແມ່ນໍ້າຫິຣັນຍະວະດີ ກົງສາລະວັນຂອງພວກເຈົ້າມັນລະ ອັນເປັນທາງເຂົ້າເມືອງກຸສິນາຣາແລ້ວ ຮັບສັ່ງຮຽກທ່ານພຣະ ອານົນມາຕັດວ່າ "ດູຣາ ອານົນ ທ່ານຊ່ອຍຕັ້ງຕຽງລະຫວ່າງຕົ້ນສາລະທັງຄູ່ ໃຫ້ປິ່ນຫົວໄປທາງ ທິດເໜືອ ເຮົາເມື່ອຍຫຼາຍ ຈະນອນພັກຜ່ອນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ຕັ້ງຕຽງລະຫວ່າງຕົ້ນສາລະທັງຄູ່ ປິ່ນດ້ານພຣະສຽນໄປທາງທິດເໜືອຕາມຊົງຮັບສັ່ງ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສຳເລັດສີຫະໄສຍາດ ໂດຍສະແດງເບື້ອງຂວາຊົງ ຊ້ອນພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະຕັ້ງໝັ້ນຢູ່

ໃນເວລານັ້ນ ຕົ້ນສາລະທັງຄູ່ ໄດ້ປົ່ງດອກນອກລະດູການ ບານຮຸ່ງເຕັມຕົ້ນ ດອກສາລະ ເຫຼົ່ານັ້ນ ໄດ້ຕົກຫຼົ່ນໂຮຍຮຳຖືກພຣະສະຣີຣະຂອງພຣະຕະຖາຄົດເຈົ້າ ເພື່ອບູຊາພຣະຕະຖາຄົດ ເຈົ້າ ດອກມົນທາ ອັນເປັນທິບ ກໍຕົກລົງຈາກອາກາດ ໂຮຍຮຳຖືກພຣະສະຣີຣະຂອງພຣະ ຕະຖາຄົດເຈົ້າ ເພື່ອບູຊາພຣະຕະຖາຄົດເຈົ້າ ຝຸ່ນໄມ້ຈັນ ອັນເປັນທິບ ກໍຕົກລົງຈາກອາກາດ ໂຮຍຮຳຖືກພຣະສະຣີຣະຂອງພຣະຕະຖາຄົດເຈົ້າ ເພື່ອບູຊາພຣະຕະຖາຄົດເຈົ້າ ດົນຕີທິບກໍດັງ ຂຶ້ນໃນອາກາດ ເພື່ອບູຊາພຣະຕະຖາຄົດເຈົ້າ ມີທັງສັງ ຄີຕະທິບ ກໍດັງຂຶ້ນໃນອາກາດເພື່ອບູຊາ ພຣະຕະຖາຄົດເຈົ້າ

[໑໗໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ຕົ້ນສາລະທັງຄູ່ ໄດ້ປົ່ງດອກນອກລະດູການ ບານຮຸ່ງເຕັມຕົ້ນ ດອກສາລະເຫຼົ່ານັ້ນໄດ້ຕົກ ຫຼົ່ນໂຮຍຮຳຖືກພຣະສະຣີຣະຂອງພຣະຕະຖາຄົດ ເພື່ອບູຊາພຣະຕະຖາຄົດ ດອກມົນທາອັນເປັນ ທິບກໍຕົກລົງຈາກອາກາດ ໂຮຍຮຳຖືກພຣະສະຣີຣະຂອງພຣະຕະຖາຄົດ ເພື່ອບູຊາພຣະຕະ ຖາຄົດ ຝຸ່ນໄມ້ຈັນ ອັນເປັນທິບ ກໍຕົກລົງຈາກອາກາດ ໂຮຍຮຳຖືກພຣະສະຣີຣະຂອງພຣະຕະ ຖາຄົດ ເພື່ອບູຊາພຣະຕະຖາ ຄົດ ດົນຕີທິບກໍດັງຂຶ້ນໃນອາກາດ ເພື່ອບູຊາພຣະຕະຖາຄົດມີທັງ ສັງຄີຕະທິບ ກໍດັງຂຶ້ນໃນອາກາດເພື່ອບູຊາພຣະຕະຖາຄົດ ດູຣາ ອານົນ ເຖິງແມ່ນວ່າຜາກົດເຫັນ ຢູ່ແນວນີ້ ຕະຖາຄົດກໍບໍ່ໄດ້ຊື່ວ່າ ອັນບໍລິສັດສັກກາຣະ ເຄົາຣົບ ນັບຖື ບູຊາ ນອບນ້ອມ ດ້ວຍ ເຄື່ອງສັກກາຣະນັ້ນເລີຍ ຜູ້ໃດກໍຕາມບໍ່ວ່າຈະເປັນພິກຂຸ ພິກຂຸນີ ອຸປາສົກ ຫຼື ອຸປາສິກາ ເປັນຜູ້ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບປະຕິບັດຕາມທຳຢູ່ ຜູ້ນັ້ນຊື່ວ່າ ສັກກາຣະເຄົາຣົບນັບຖື ບູຊາ ນອບນ້ອມ ດ້ວຍການບູຊາຢ່າງຍອດຢ້ຽມ ສະນັ້ນ ດູຣາ ອານົນ ທ່ານທັງຫຼາຍເພິ່ງໃສ່ໃຈ

ແນວນີ້ວ່າ "ເຮົາຈະເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳຢູ່" ດູຣາ ອານົນ ທ່ານທັງຫຼາຍເພິ່ງໃສ່ໃຈແນວນີ້ແລ"

## ເລື້ອງພຣະອຸປະວານະເຖຣະ

[໔໐໐] ເວລານັ້ນ ທ່ານພຣະອຸປະວານະຢືນຖວາຍງານພັດພຣະຜູ້ມີພຣະພາກເຈົ້າຢູ່ຊື່ພຣະພັກ ໃນຂະນະນັ້ນເອງ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງໃຫ້ທ່ານພຣະອຸປະວານະໃຫ້ຍັບອອກໄປດ້ວຍພຣະດຳຣັດວ່າ "ດູຣາ ພິກຂຸ ທ່ານຈົ່ງຍັບອອກໄປ ຢ່າຢືນຊື່ໜ້າເຮົາ"

ທ່ານພຣະອານົນ ມີຄວາມຄິດແນວນີ້ວ່າ "ທ່ານພຣະອຸປະວານະ ຜູ້ນີ້ເຄີຍເປັນອຸປັດຖາກເຝົ້າໃກ້ຊິດພຣະຜູ້ມີພຣະພາກເຈົ້າມາດົນ ເຖິງຈັ່ງຊັ້ນໃນປັດສິມມະການພຣະຜູ້ມີພຣະພາກເຈົ້າຕັດສັ່ງໃຫ້ທ່ານພຣະອຸປະວານະຍັບອອກໄປດ້ວຍພຣະດຳຣັດວ່າ "ດູຣາ ພິກຂຸ ທ່ານຈົ່ງຍັບອອກໄປ ຢ່າຢືນຊື່ໜ້າເຮົາ" ເພາະມີຫຍັງເປັນເຫດ ເພາະມີຫຍັງເປັນປັດໄຈ ໃຫ້ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ທ່ານພຣະອຸປະວານະຍັບອອກໄປດ້ວຍພຣະດຳຣັດວ່າ "ດູຣາ ພິກຂຸ ທ່ານຈົ່ງຍັບອອກໄປ ຢ່າຢືນກົງໜ້າເຮົາ"

ລຳດັບນັ້ນ ທ່ານພຣະອານົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະອຸປະວານະນີ້ເຄີຍເປັນອຸປັດຖາກ ເຝົ້າໃກ້ຊິດພຣະຜູ້ມີພຣະພາກເຈົ້າມາດົນ ເຖິງຈັ່ງຊັ້ນ ໃນປັດສິມມະການພຣະຜູ້ມີພຣະພາກເຈົ້າ ຍັງຮັບສັ່ງໃຫ້ທ່ານພຣະອຸປະວານະຍັບອອກໄປ ດ້ວຍພຣະດຳຣັດວ່າ "ດູຣາ ພິກຂຸ ທ່ານຈົ່ງຍັບອອກໄປຢ່າຢືນກົງໜ້າເຮົາ" ເພາະມີຫຍັງເປັນເຫດ ເພາະມີຫຍັງເປັນປັດໄຈ ໃຫ້ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ທ່ານອຸປະວານະຍັບອອກໄປ ດ້ວຍພຣະດຳຣັດວ່າ "ດູຣາ ພິກຂຸ ທ່ານຈົ່ງຍັບອອກໄປ ຢ່າຢືນຊື່ໜ້າເຮົາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ອານົນ ເທບທັງຫຼາຍໃນ ໑໐ ໂລກກະທາດມາປະຊຸມກັນ ເພື່ອຈະຢ້ຽມຢາມຕະຖາຄົດ ໃນສວນສາລະວັນຂອງພວກເຈົ້າມັນລະ ອັນເປັນທາງເຂົ້າເມືອງກຸສິນາຣານີ້ ມີເນື້ອທີ່ ໑໒ ໂຍດ ໂດຍຮອບ ໃນບ່ອນນີ້ພວກເທບຜູ້ມີສັກໃຫຍ່ ບໍ່ໄດ້ບຽດສຽດກັນແມ່ນເທົ່າປາຍຂົນເນື້ອຊາຍສຽບລົງໄດ້ກໍບໍ່ມີ ພວກເທບຈະໂທດວ່າ ພວກເຮົາມາໄກກໍເພື່ອຈະເຫັນພຣະຕະຖາຄົດເຈົ້າ ໃນຄັ້ງທີ່ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າຈະສະເດັດອຸບັດຂຶ້ນໃນໂລກ ໃນປັດສິມມະຍາມແຫ່ງຣາຕີ ມື້ນີ້ ພຣະຕະຖາຄົດເຈົ້າຈະປະຣິນິບພານ ແຕ່ມີພິກຂຸຜູ້ມີສັກໃຫຍ່ທ່ານນີ້ ຢືນບັງຢູ່ເບື້ອງໜ້າພຣະພັກພຣະຜູ້ມີພຣະພາກເຈົ້າ ເຮັດໃຫ້ພວກເຮົາບໍ່ໄດ້ເຝົ້າພຣະຕະຖາຄົດເຈົ້າ ໃນປັດສິມມະການ"

[໔໐໑] ທ່ານພຣະອານົນ ທູນຖາມວ່າ "ພວກເທວະດາເປັນແນວໃດ? ຄິດກັນແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ອານົນ ມີເທວະດາລາງພວກເປັນຜູ້ກຳນົດແຜ່ນດິນຂຶ້ນເທິງອາກາດ ຍ່ອງຜົມ ຍົກມື ຍົກແຂນ ຮ້ອງໄຫ້ ຮ່ຳໄຮ ລົ້ມກິ້ງເກືອກລີເລືອໄປມາ ຄື ຄົນຂາຂາດ ຮ່ຳໄຮຈົ່ມວ່າ "ພຣະຜູ້ມີພຣະພາກເຈົ້າ ຟ້າວປະຣິນິບພານໄວແທ້ນໍ ພຣະສຸຄົດເຈົ້າຟ້າວປະຣິນິບພານໄວແທ້ນໍ ຈັກຂຸຂອງໂລກຈະສູນຫາຍໄປແລ້ວ"

ມີເທວະດາລາງພວກເປັນຜູ້ກຳນົດແຜ່ນດິນຂຶ້ນເທິງແຜ່ນດິນ ຍ່ອງຜົມ ຍົກມື ຍົກແຂນຮ້ອງ ໄຫ້ຮ່ຳໄຮ ລົ້ມກິ້ງເກືອກລີເລືອໄປມາ ຄືຄົນຂາຂາດ ຮ່ຳໄຮຈົ່ມວ່າ "ພຣະຜູ້ມີພຣະພາກເຈົ້າຟ້າວປະຣິນິບພານໄວແທ້ ພຣະສຸຄົດເຈົ້າຟ້າວປະຣິນິບພານໄວແທ້ ຈັກຂຸຂອງໂລກຈະສູນຫາຍໄປແລ້ວ"

ສ່ວນພວກເທວະດາທີ່ບໍ່ມີຣາຄະ ມີສະຕິສຳປະຊັນຍະ ມີປັນຍາຮູ້ວ່າ ສັງຂານທັງຫຼາຍບໍ່ທ່ຽງມີຄວາມແຕກສະຫຼາຍ ດັບໄປເປັນທຳມະດາ"

## ສັງເວຊະນີຍະສະຖານ ໔ ແຫ່ງ

[໔໐໔] ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແຕ່ກ່ອນພິກຂຸທັງຫຼາຍຜູ້ຈຳພັນສາໃນທິດຕ່າງ ໆ ເຂົ້າມາເຝົ້າພຣະຕະຖາຄົດເຈົ້າ ຍ່ອມໄດ້ພົບ ໄດ້ໃກ້ຊິດ ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດລ່ວງລັບໄປແລ້ວ ພວກຂ້າພຣະອົງທັງຫຼາຍ ຈະບໍ່ໄດ້ພົບ ບໍ່ໄດ້ເຫັນບໍ່ໄດ້ໃກ້ຊິດພຣະອົງອີກຕໍ່ໄປແລ້ວ ພວກຂ້າອົງຄວນເຮັດແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ອານົນ ສັງເວຊະນີຍະສະຖານ ໔ ແຫ່ງນີ້ ເປັນສະຖານ ທີ່ທີ່ກຸນລະບຸດຜູ້ມີສັດທາຄວນໄປຢ້ຽມຢາມ ສັກກາຣະ ເຄົາຣົບບູຊາ"

ສັງເວຊະນີຍະສະຖານ ໔ ແຫ່ງນັ້ນມີຫຍັງແດ່ ຄື

໑. ສັງເວຊະນີຍະສະຖານທີ່ກຸນລະບຸດຜູ້ມີສັດທາ ຄວນໄປຢ້ຽມຢາມ ສັກກາຣະ ເຄົາຣົບບູຊາ ດ້ວຍການລະນຶກວ່າ "ພຣະຕະຖາຄົດເຈົ້າປະສູດໃນສະຖານທີ່ນີ້"

໒. ສັງເວຊະນີຍະສະຖານທີ່ກຸນລະບຸດ ຜູ້ມີສັດທາຄວນໄປຢ້ຽມຢາມ ສັກກາຣະ ເຄົາຣົບບູຊາ ດ້ວຍການລະນຶກວ່າ "ພຣະຕະຖາຄົດເຈົ້າໄດ້ຕັດສະຣູ້ ອະນຸດຕະຣະ ສຳມາສຳໂພທິຍານໃນສະຖານທີ່ນີ້"

໓. ສັງເວຊະນີຍະສະຖານທີ່ກຸນລະບຸດ ຜູ້ມີສັດທາຄວນໄປຢ້ຽມຢາມ ສັກກາຣະ ເຄົາຣົບບູຊາ ດ້ວຍການລະນຶກວ່າ "ພຣະຕະຖາຄົດເຈົ້າ ຊົງປະກາດທຳມະຈັກອັນຍອດຢ້ຽມໃນສະຖານທີ່ນີ້"

໔. ສັງເວຊະນີຍະສະຖານທີ່ກຸນລະບຸດຜູ້ມີສັດທາ ຄວນໄປຢ້ຽມຢາມ ສັກກາຣະ ເຄົາຣົບ ບູຊາ ດ້ວຍການລະນຶກວ່າ "ພຣະຕະຖາຄົດເຈົ້າໄດ້ສະເດັດດັບຂັນທະປະຣິນິບພານ ດ້ວຍອະນຸປາທິເສສະນິບພານທາດໃນສະຖານທີ່ນີ້"

ດູຣາ ອານົນ ສັງເວຊະນີຍະສະຖານ ໔ ແຫ່ງນີ້ ເປັນສະຖານທີ່ທີ່ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ຜູ້ມີສັດທາຄວນໄປຢ້ຽມຢາມ ສັກກາຣະ ເຄົາຣົບ ບູຊາ ດ້ວຍການລະນຶກວ່າ "ພຣະຕະຖາຄົດເຈົ້າປະສູດໃນສະຖານທີ່ນີ້" ຯລຯ ວ່າ "ພຣະຕະຖາຄົດເຈົ້າໄດ້ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານໃນສະຖານທີ່ນີ້" ຯລຯ ວ່າ "ພຣະຕະຖາຄົດເຈົ້າປະກາດທຳມະຈັກອັນຍອດຢ້ຽມໃນສະຖານທີ່ນີ້" ຯລຯ ວ່າ "ພຣະຕະຖາຄົດເຈົ້າໄດ້ສະເດັດດັບຂັນທະປະຣິນິບພານ ດ້ວຍອະນຸປາທິເສສະນິບພານທາດໃນສະຖານທີ່ນີ້"

ດູຣາ ອານົນ ຊົນເຫຼົ່າໃດເຫຼົ່າໜຶ່ງ ຈາຣິກໄປສູ່ເຈດີສະຖານທີ່ເຫຼົ່ານັ້ນ ເມື່ອມີຈິດເຫຼື້ອມໃສຕາຍໄປແລ້ວ ຊົນເຫຼົ່ານັ້ນທັງໝົດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

## ເລື້ອງຄຳຖາມພຣະອານົນ

[໔໐໓] ທ່ານພຣະອານົນທູນຖາມວ່າ "ຕໍ່ແຕ່ນີ້ໄປ ໃຫ້ພວກຂ້າພຣະອົງ ປະຕິບັດຕໍ່ສະຕີແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຢ່າແນມເບິ່ງ"
"ເມື່ອຈຳເປັນຕ້ອງແນມເບິ່ງ ຄວນເຮັດແນວໃດນໍ? ຂ້ານ້ອຍ"
"ຢ່າເວົ້ານຳ"
"ເມື່ອຈຳເປັນຕ້ອງເວົ້ານຳ ຄວນເຮັດແນວໃດນໍ? ຂ້ານ້ອຍ"
"ໃຫ້ຕັ້ງສະຕິໄວ້ໃຫ້ດີ"

[໔໐໔] ທ່ານພຣະອານົນທູນຖາມວ່າ "ໃຫ້ພວກຂ້າພຣະອົງປະຕິບັດຕໍ່ພຣະສະຣີຣະຂອງພຣະຕະຖາຄົດເຈົ້າແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພວກທ່ານຢ່າກັງວົນໃນພິທີການບູຊາສະຣີຣະຂອງຕະຖາ ຄົດເລີຍ ຈົ່ງພະຍາຍາມຂົນຂວາຍເຮັດໜ້າທີ່ຂອງຕົນເອງໃຫ້ດີເທີ້ນ ຢ່າປະໝາດໃນໜ້າທີ່ຂອງຕົນ ໃຫ້ມີຄວາມພຽນອຸທິດກາຍ ແລະ ໃຈຢູ່ເທີ້ນ ກະສັດຜູ້ເປັນບັນດິດ ພາມຜູ້ເປັນບັນດິດ ຄະຫະບໍດີຜູ້ເປັນບັນດິດ ຜູ້ເຫຼື້ອມໃສໃນຕະຖາຄົດ ຈະທຳການບູຊາສະຣີຣະຂອງຕະຖາຄົດເອງ"

[໔໐໕] ທ່ານພຣະອານົນທູນຖາມວ່າ "ພວກເຂົາຄວນປະຕິບັດ ຕໍ່ພຣະສະຣີຣະຂອງພຣະຕະຖາ ຄົດເຈົ້າແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເພິ່ງປະຕິບັດຕໍ່ສະຣີຣະຂອງຕະຖາຄົດ ຄືກັນກັບທີ່ພວກເຂົາປະຕິບັດຕໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດນັ້ນແລ"

ທ່ານພຣະອານົນທູນຖາມວ່າ "ພວກເຂົາປະຕິບັດຕໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພວກເຂົາໃຊ້ຜ້າໃໝ່ຫໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດ ແລ້ວຈຶ່ງຫໍ່ດ້ວຍສຳລີບໍລິສຸດ ແລ້ວຈຶ່ງຫໍ່ດ້ວຍຜ້າໃໝ່ອີກຊັ້ນໜຶ່ງ ເຮັດໂດຍວິທີນີ້ ແລ້ວຫໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດດ້ວຍຜ້າ ແລະ ສຳລີໄດ້ ໑,໐໐໐ ຊັ້ນແລ້ວອັນເຊີນພຣະບໍຣົມມະສົບລົງໃນຮາງເຫຼັກເຕັມດ້ວຍນ້ຳມັນ ໃຊ້ຮາງເຫຼັກອີກອັນໜຶ່ງກວມແລ້ວທຳຈິຕະກາທານດ້ວຍໄມ້ຈັນຫອມລ້ວນ ແລ້ວຖວາຍພຣະເພີງພຣະບໍຣົມມະສົບພຣະເຈົ້າຈັກກະພັດ ສ້າງສະຖູບຂອງພຣະເຈົ້າຈັກກະພັດໄວ້ທີ່ທາງໃຫຍ່ສີ່ແຍກ ດູຣາ ອານົນ ພວກເຂົາປະຕິບັດຕໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດແນວນີ້ແລ

ພວກເຂົາເພິ່ງປະຕິບັດຕໍ່ສະຣີຣະຂອງຕະຖາຄົດ ແນວດຽວກັນກັບທີ່ພວກເຂົາປະຕິບັດຕໍ່ພຣະບໍຣົມມະສົບພຣະເຈົ້າຈັກກະພັດ ສ້າງສະຖູບຂອງຕະຖາຄົດໄວ້ທີ່ທາງໃຫຍ່ສີ່ແຍກ ເພື່ອຊົນເຫຼົ່າໃດຈັກຍໍຊໍ່ດອກໄມ້ ຂອງຫອມ ຫຼື ແປ້ງຫອມ ຈັກອະພິວາດ ຫຼື ຈັກທຳຈິດໃຫ້ເຫຼື້ອມໃສໃນສະຖູບນັ້ນ ການກະທຳນັ້ນ ຈັກເປັນໄປເພື່ອເກື້ອກູນ ເພື່ອຄວາມສຸກ ແກ່ຊົນເຫຼົ່ານັ້ນ ຕະຫຼອດການະນານ

## ຖູປາຣະຫະບຸກຄົນ

[໔໐໓] ດູຣາ ອານົນ ຖູປາຣະຫະບຸກຄົນ (ຜູ້ຄວນສ້າງສະຖູບຖວາຍ) ໔ ຈຳພວກນີ້

ຖູປາຣະຫະບຸກຄົນ ໔ ຈຳພວກ ມີຈຳພວກໃດແດ່ ຄື

໑. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ເປັນຖູປາຣະຫະບຸກຄົນ
໔. ພຣະປັດເຈກະສຳພຸດທະເຈົ້າ ເປັນຖູປາຣະຫະບຸກຄົນ
໓. ພຣະສາວົກຂອງພຣະຕະຖາຄົດ ເປັນຖູປາຣະຫະບຸກຄົນ
໔. ພຣະເຈົ້າຈັກກະພັດ ເປັນຖູປາຣະຫະບຸກຄົນ

ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ເປັນຖູປາຣະຫະບຸກຄົນເພາະອາໄສອຳນາດປະໂຫຍດອັນໃດ ຄື ເພື່ອຊົນເປັນຈຳນວນຫຼາຍ ທຳຈິດໃຫ້ເຫຼື້ອມໃສດ້ວຍຄິດວ່າ "ນີ້ເປັນພຣະສະຖູບຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ" ພວກເຂົາທຳຈິດໃຫ້ເຫຼື້ອມໃສໃນພຣະສະຖູບນັ້ນ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະ

ຫວັນ ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ເປັນຖູປາຣະຫະບຸກຄົນ ເພາະອາໄສອຳນາດປະໂຫຍດຂໍ້ນີ້ແລ

ພຣະປັດເຈກະສຳພຸດທະເຈົ້າເປັນຖູປາຣະຫະບຸກຄົນ ເພາະອາໄສອຳນາດປະໂຫຍດຫຍັງ ຄື ຊົນເປັນຈຳນວນຫຼາຍ ທຳຈິດໃຫ້ເຫຼື້ອມໃສດ້ວຍຄິດວ່າ "ນີ້ເປັນພຣະສະຖູບຂອງພຣະປັດເຈກະສຳພຸດທະເຈົ້າ ພຣະອົງນັ້ນ ພວກເຂົາທຳຈິດໃຫ້ເຫຼື້ອມໃສໃນພຣະສະຖູບນັ້ນຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ພຣະປັດເຈກະສຳພຸດທະເຈົ້າເປັນຖູປາຣະຫະບຸກຄົນ ເພາະອາໄສອຳນາດປະໂຫຍດຂໍ້ນີ້ແລ

ພຣະສາວົກຂອງພຣະຕະຖາຄົດ ເປັນຖູປາຣະຫະບຸກຄົນ ເພາະອາໄສອຳນາດປະໂຫຍດຫຍັງ ຄື ຊົນເປັນຈຳນວນຫຼາຍ ທຳຈິດໃຫ້ເຫຼື້ອມໃສດ້ວຍຄິດວ່າ ນີ້ເປັນສະຖູບຂອງພຣະສາວົກ ຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ພວກເຂົາທຳຈິດໃຫ້ເຫຼື້ອມໃສໃນສະຖູບນັ້ນແລ້ວ ຫຼັງຈາກຕາຍຈະໄປເກີດໃນສຸກຄະຕິໂລກສະຫວັນພຣະສາວົກຂອງພຣະຕະຖາຄົດນັ້ນ ເປັນຖູປາຣະຫະບຸກຄົນ ເພາະອາໄສອຳນາດປະໂຫຍດຂໍ້ນີ້ແລ

ພຣະເຈົ້າຈັກກະພັດເປັນຖູປາຣະຫະບຸກຄົນ ເພາະອາໄສອຳນາດປະໂຫຍດຫຍັງ ຄື ຊົນເປັນຈຳນວນຫຼາຍ ເມື່ອທຳຈິດໃຫ້ເຫຼື້ອມໃສ ດ້ວຍຄິດວ່ານີ້ເປັນພຣະສະຖູບຂອງພຣະທຳຣາຊາຜູ້ຊົງທຳພຣະອົງນັ້ນ ພວກເຂົາທຳຈິດໃຫ້ເຫຼື້ອມໃສໃນພຣະສະຖູບນັ້ນແລ້ວ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກ ຄະຕິໂລກສະຫວັນ ພຣະເຈົ້າຈັກກະພັດເປັນຖູປາຣະຫະບຸກຄົນ ເພາະອາໄສອຳນາດປະໂຫຍດຂໍ້ນີ້ແລ

ດູຣາ ອານົນ ຖູປາຣະຫະບຸກຄົນມີ ໔ ຈຳພວກແນວນີ້ແລ"

## ເລື້ອງຄວາມເປັນອັດສະລິຍະຂອງພຣະອານົນ

[໔໐໗] ເວລານັ້ນ ທ່ານພຣະອານົນເຂົ້າໄປສູ່ພຣະວິຫານຢືນຈັບໄມ້ຄັດປະຕູຮ້ອງໄຫ້ເສຍໃຈຢູ່ວ່າ "ເຮົາຍັງເປັນເສຂະບຸກຄົນມີກິດທີ່ຈະຕ້ອງເຮັດອີກ ແຕ່ພຣະສາດສະດາຜູ້ຊົງອະນຸເຄາະເຮົາຈະປະຣິນິບພານໄປແລ້ວ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ "ອານົນໄປໃສ"

ພວກພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະອານົນເຂົ້າໄປສູ່ພຣະວິຫານຢືນຈັບໄມ້ຄັດປະຕູຮ້ອງໄຫ້ເສຍໃຈຢູ່ວ່າ "ເຮົາຍັງເປັນເສຂະບຸກຄົນ ຍັງມີກິດທີ່ຈະຕ້ອງເຮັດອີກ ແຕ່ພຣະສາດສະດາຜູ້ຊົງອະນຸເຄາະເຮົາຈະປະຣິນິບພານແລ້ວ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ "ດູຣາ ພິກຂຸ ທ່ານຈົ່ງໄປບອກອານົນຕາມຄຳຂອງເຮົາວ່າ "ທ່ານອານົນ ພຣະສາດສະດາຮັບສັ່ງຮຽກຫາທ່ານ"

ພິກຂຸຮູບນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາທ່ານພຣະອານົນເຖິງບ່ອນຢູ່ບອກວ່າ "ທ່ານອານົນ ພຣະສາດສະດາຮັບສັ່ງຮຽກຫາທ່ານ"

ທ່ານພຣະອານົນຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນສ່ວນແຫ່ງຕົນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພຣະອານົນ ແນວນີ້ວ່າ "ຢ່າເລີຍ ອານົນ ທ່ານຢ່າເສົ້າໂສກ ຢ່າຮ່ຳໄຮເລີຍ ເຮົາບອກໄວ້ກ່ອນແລ້ວບໍ່ແມ່ນບໍວ່າ "ຄວາມພັດພາກ ຄວາມປະຖິ້ມ ຄວາມປ່ຽນເປັນຢ່າງອື່ນ ຈາກຂອງຮັກ ຂອງພໍໃຈ ທຸກຢ່າງຈະຕ້ອງມີຂຶ້ນ ບໍ່ມື້ໃດ ກໍມື້ໜຶ່ງ ດັ່ງນັ້ນຈະເພິ່ງຫາຄວາມແນ່ນອນຫຍັງຈາກສັງຂານນີ້ ສັງຂານທັງຫຼາຍທີ່ເກີດຂຶ້ນ ມີຂຶ້ນ ຖືກປັດໄຈປຸງແຕ່ງລ້ວນແລ້ວແຕ່ຈະຕ້ອງແຕກສະຫຼາຍຫາຍໄປເປັນທຳມະດາ ເປັນໄປບໍ່ໄດ້ທີ່ຈະປາຖະໜາວ່າ "ຂໍໃຫ້ສັງຂານເຫຼົ່ານັ້ນຢ່າໄດ້ເສື່ອມສະຫຼາຍຫາຍໄປເລີຍ" ທ່ານໄດ້ອຸປັດຖາກຕະຖາຄົດມາດົນ ດ້ວຍເມດຕາກາຍະກຳ ອັນເກື້ອກູນ ໃຫ້ເກີດຄວາມສຸກ ສະເໝີຕົ້ນສະເໝີປາຍ ບໍ່ມີປະມານດ້ວຍເມດຕາວະຈີກຳ ອັນເກື້ອກູນ ໃຫ້ເກີດຄວາມສຸກ ສະເໝີຕົ້ນສະເໝີປາຍ ບໍ່ມີປະມານ ດ້ວຍເມດຕາມະໂນກຳອັນເກື້ອກູນໃຫ້ເກີດຄວາມສຸກ ສະເໝີຕົ້ນສະເໝີປາຍ ບໍ່ມີປະມານ ດູຣາ ອານົນ ທ່ານໄດ້ເຮັດບຸນໄວ້ແລ້ວ ຈົ່ງປະກອບຄວາມພຽນເທີ້ນ ທ່ານຈະເປັນຜູ້ສິ້ນອາສະວະໃນໄວ ໆ ນີ້"

[໔໐໗] ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ພິກຂຸຜູ້ອຸປັດຖາກຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫຼາຍໃນອະດີດຕະການ ທີ່ຈັດວ່າເປັນຜູ້ອຸປັດຖາກຊັ້ນເລີດ ຍອດຢ້ຽມ ກໍຄືອານົນຂອງເຮົານີ້ເອງ

ພິກຂຸ ຜູ້ອຸປັດຖາກຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫຼາຍໃນອະນະຄົດຕະການທີ່ຈັດວ່າ ເປັນອຸປັດຖາກຜູ້ຍອດຢ້ຽມກໍຄືອານົນຂອງເຮົານີ້ເອງ

ອານົນ ເປັນບັນດິດ ອານົນ ມີປັນຍາສະຫຼາດ ຫຼັກແຫຼມຮູ້ວ່າ "ນີ້ເປັນເວລາຂອງພິກຂຸທີ່ຈະເຂົ້າເຝົ້າພຣະຕະຖາຄົດ ນີ້ເປັນເວລາຂອງພິກຂຸນີ ນີ້ເປັນເວລາຂອງອຸປາສົກ ນີ້ເປັນເວລາຂອງອຸປາສິກາ ນີ້ເປັນເວລາຂອງພຣະຣາຊາ ນີ້ເປັນເວລາຂອງມະຫາອຳມາດ ນີ້ເປັນເວລາຂອງເດຍຣະຖີ ນີ້ເປັນເວລາຂອງສາວົກເດຍຣະຖີ"

[໔໐໘] ດູຣາ ພິກຂຸທັງຫຼາຍ ຄວາມເປັນອັດສະລິຍະບໍ່ເຄີຍຜາກົດມີ ໔ ປະການນີ້ ມີຢູ່ໃນອານົນ ຄວາມເປັນອັດສະລິຍະບໍ່ເຄີຍຜາກົດມີ ໔ ປະການນັ້ນ ມີຫຍັງແດ່? ຄື

໑. ດູຣາ ພິກຂຸທັງຫຼາຍ ຖ້າພິກຂຸບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບເຫັນທໍ່ນັ້ນກໍ ມີໃຈຍິນດີ ຖ້າອານົນສະແດງທຳໃນພິກຂຸບໍລິສັດນັ້ນ ເມື່ອກຳລັງສະແດງທຳຢູ່ບໍລິສັດນັນກໍມີໃຈ ຍິນດີ ບໍ່ເຕັມອີ່ມໃນທຳ ເມື່ອອານົນຢຸດສະແດງທຳ

໒. ດູຣາ ພິກຂຸທັງຫຼາຍ ຖ້າພິກຂຸນີບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອາ ນົນສະແດງທຳໃນພິກຂຸນີບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ພິກຂຸນີບໍລິສັດຍັງ ບໍ່ເຕັມອີ່ມໃນທຳ ເມື່ອອານົນຢຸດສະແດງ

໓. ດູຣາ ພິກຂຸທັງຫຼາຍ ຖ້າອຸປາສົກບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນສະແດງທຳໃນອຸປາສົກບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ອຸປາສົກບໍລິສັດ ເຫຼົ່ານັ້ນ ຍັງບໍ່ເຕັມອີ່ມໃນທຳ ເມື່ອອານົນຢຸດສະແດງ

໔. ດູຣາ ພິກຂຸທັງຫຼາຍ ຖ້າອຸປາສິກາບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນສະແດງທຳໃນອຸປາສິກາບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ອຸປາສິກາ ບໍລິສັດຍັງບໍ່ເຕັມອີ່ມໃນທຳ ເມື່ອອານົນຢຸດສະແດງ

ດູຣາ ພິກຂຸທັງຫຼາຍ ຄວາມເປັນອັດສະລິຍະບໍ່ເຄີຍຜາກົດ ໔ ປະການນີ້ ມີຢູ່ໃນອານົນ

ດູຣາ ພິກຂຸທັງຫຼາຍ ເໝືອນຄວາມເປັນອັດສະລິຍະບໍ່ເຄີຍຜາກົດ ໔ ປະການນີ້ມີຢູ່ໃນ ພຣະເຈົ້າຈັກກະພັດ ຄວາມເປັນອັດສະລິຍະບໍ່ເຄີຍຜາກົດ ໔ ປະການ ນັ້ນ ມີຫຍັງແດ່? ຄື

໑. ດູຣາ ພິກຂຸທັງຫຼາຍ ຖ້າຂັດຕິຍະບໍລິສັດ ເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ ເຂົ້າເຝົ້າກໍມີໃຈຍິນດີ ຖ້າພຣະເຈົ້າຈັກກະພັດ ມີພຣະຣາດປະຕິສັນຖານໃນຂັດຕິຍະບໍລິສັດນັ້ນ ແມ່ນພຽງມີພຣະຣາດປະຕິສັນຖານກໍມີໃຈຍິນດີ ຂັດຕິຍະບໍລິສັດຍັງບໍ່ເຕັມອີ່ມເມື່ອພຣະເຈົ້າ ຈັກກະພັດຊົງນິ່ງ

໒. ດູຣາ ພິກຂຸທັງຫຼາຍ ຖ້າພາມມະນະບໍລິສັດເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ ເຂົ້າເຝົ້າກໍມີໃຈຍິນດີ ຖ້າພຣະເຈົ້າຈັກກະພັດມີພຣະຣາດປະຕິສັນຖານໃນພາມມະນະບໍລິສັດນັ້ນ ແມ່ນພຽງມີພຣະຣາດປະຕິສັນຖານກໍມີໃຈຍິນດີ ພາມມະນະບໍລິສັດຍັງບໍ່ເຕັມອີ່ມເມື່ອພຣະເຈົ້າ ຈັກກະພັດຊົງນິ່ງ

໓. ດູຣາ ພິກຂຸທັງຫຼາຍ ຖ້າຄະຫະບໍດີບໍລິສັດເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ ເຂົ້າເຝົ້າກໍມີໃຈຍິນດີຖ້າພຣະເຈົ້າຈັກກະພັດ ມີພຣະຣາດປະຕິສັນຖານໃນຄະຫະບໍດີບໍລິສັດນັ້ນ ແມ່ນພຽງມີພຣະຣາດປະຕິສັນຖານກໍມີໃຈຍິນດີ ຄະຫະບໍດີບໍລິສັດຍັງບໍ່ເຕັມອີ່ມເມື່ອພຣະເຈົ້າ ຈັກກະພັດຊົງນິ່ງ

໔. ດູຣາ ພິກຂຸທັງຫຼາຍ ຖ້າສະມະນະບໍລິສັດເຂົ້າເຝົ້າພຣະເຈົ້າຈັກກະພັດ ແມ່ນພຽງໄດ້ເຂົ້າເຝົ້າກໍມີໃຈຍິນດີ ຖ້າພຣະເຈົ້າຈັກກະພັດມີພຣະຣາດປະຕິສັນຖານໃນສະມະນະບໍລິສັດນັ້ນ ແມ່ນພຽງມີພຣະຣາດປະຕິສັນຖານກໍມີໃຈຍິນດີ ສະມະນະບໍລິສັດຍັງບໍ່ເຕັມອີ່ມ ເມື່ອພຣະເຈົ້າຈັກກະພັດຊົງນິ່ງສັນໃດ

ດູຣາ ພິກຂຸທັງຫຼາຍ ຄວາມເປັນອັດສະລິຍະບໍ່ເຄີຍຜາກົດມີ ໔ ປະການນີ້ແລ ມີຢູ່ໃນພຣະເຈົ້າຈັກກະພັດ ດູຣາ ພິກຂຸທັງຫຼາຍ ເໝືອນຄວາມເປັນອັດສະລິຍະບໍ່ເຄີຍຜາກົດ ໔ ປະການທີ່ມີຢູ່ໃນອານົນ ຄວາມເປັນອັດສະລິຍະບໍ່ເຄີຍຜາກົດ ໔ ປະການນັ້ນ ມີຫຍັງແດ່? ຄື

໑. ດູຣາ ພິກຂຸທັງຫຼາຍ ຖ້າພິກຂຸບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບເຫັນທໍ່ນັ້ນກໍມີໃຈຍິນດີ ຖ້າອານົນສະແດງທຳໃນພິກຂຸບໍລິສັດນັ້ນ ເມື່ອກຳລັງສະແດງທຳຢູ່ບໍລິສັດນັ້ນກໍມີໃຈຍິນດີ ບໍ່ເຕັມອີ່ມໃນທຳເມື່ອອານົນຢຸດສະແດງທຳ

໒. ດູຣາ ພິກຂຸທັງຫຼາຍ ຖ້າພິກຂຸນີບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອາ ນົນສະແດງທຳໃນພິກຂຸນີບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ພິກຂຸນີບໍລິສັດຍັງບໍ່ເຕັມອີ່ມໃນທຳເມື່ອອານົນເຊົາສະແດງທຳ

໓. ດູຣາ ພິກຂຸທັງຫຼາຍ ຖ້າອຸປາສົກບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນສະແດງທຳໃນອຸປາສົກບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ອຸປາສົກບໍລິສັດເຫຼົ່ານັ້ນ ຍັງບໍ່ເຕັມອີ່ມໃນທຳ ເມື່ອອານົນເຊົາສະແດງທຳ

໔. ດູຣາ ພິກຂຸທັງຫຼາຍ ຖ້າອຸປາສິກາບໍລິສັດເຂົ້າພົບອານົນ ແມ່ນພຽງໄດ້ພົບກໍມີໃຈຍິນດີ ຖ້າອານົນສະແດງທຳໃນອຸປາສິກາບໍລິສັດນັ້ນ ແມ່ນພຽງສະແດງທຳກໍມີໃຈຍິນດີ ອຸປາສິກາບໍລິສັດຍັງບໍ່ເຕັມອີ່ມໃນທຳ ເມື່ອອານົນເຊົາສະແດງທຳ

ດູຣາ ພິກຂຸທັງຫຼາຍ ຄວາມເປັນອັດສະລິຍະບໍ່ເຄີຍຜາກົດ ໔ ປະການນີ້ ມີຢູ່ໃນອານົນ"

## ຊົງສະແດງມະຫາສຸທັດສະນະສູດ

[໔໑໐] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຢ່າໄດ້ປະຣິນິບພານໃນເມືອງນ້ອຍ ເມືອງໂຄກ ກິ່ງເມືອງແນວນີ້ເລີຍ ຍັງມີເມືອງໃຫຍ່ທີ່ຈະເລີນເຊັ່ນເມືອງຈຳປາ ເມືອງຣາດຊະຄຶ ເມືອງສາວັດຖີ ເມືອງສາເກດ ເມືອງໂກສັມພີ ເມືອງພາຣານະສີຂໍພຣະຜູ້ມີພຣະພາກເຈົ້າ ໂຜດປະຣິນິບພານໃນເມືອງເຫຼົ່ານີ້ເທີ້ນ ຂັດຕິຍະມະຫາສານ ພາມມະຫາສານຄະຫະ

ບໍດີມະຫາສານ ຜູ້ເຫຼື້ອມໃສຢ່າງຍິ່ງໃນພຣະຕະຖາຄົດເຈົ້າມີຢູ່ຫຼາຍໃນເມືອງເຫຼົ່ານັ້ນ ທ່ານເຫຼົ່ານັ້ນຈະທຳການບູຊາພຣະສະຣີ ຣະຂອງພຣະຕະຖາຄົດເຈົ້າ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ອານົນ ທ່ານຢ່າກ່າວແນວນັ້ນ ຢ່າເວົ້າແນວນັ້ນວ່າ "ກຸສິນາຣາເປັນເມືອງນ້ອຍ ເມືອງໂຄກ ກິ່ງເມືອງ"

ດູຣາ ອານົນ ເລື້ອງເຄີຍມີມາແລ້ວແນວນີ້ວ່າ ໄດ້ມີພຣະເຈົ້າຈັກກະພັດພຣະນາມວ່າມະຫາສຸທັດສະນະ ຜູ້ຊົງທຳ ຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນ ມີມະຫາສະໝຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະ ມີພຣະຣາດອານາຈັກໝັ້ນຄົງສົມບູນ ດ້ວຍຣັດຕະນະ ໗ ປະການ ເມືອງກຸສິນາຣານີ້ມີນາມວ່າ ເມືອງກຸສາວະດີໄດ້ເປັນຣາດຊະທານີຂອງພຣະເຈົ້າມະຫາສຸທັດສະນະ ດ້ານທິດຕາເວັນອອກ ແລະ ທິດຕາເວັນຕົກຍາວ ໑໒ ໂຍດ ດ້ານທິດເໜືອແລະທິດໃຕ້ກວ້າງ ໗ ໂຍດ ເມືອງກຸສາວະດີເປັນຣາດຊະທານີທີ່ຈະເລີນຮຸ່ງເຮືອງ ມີປະຊາ ກອນຫຼາຍມີພົນລະເມືອງໜາແໜ້ນ ເສດ ຖະກິດດີ ຄືກັບເມືອງອາລະກະມັນທາ ເຊິ່ງເປັນຣາດຊະທານີຂອງທວຍເທບທີ່ຈະເລີນຮຸ່ງເຮືອງ ມີປະ ຊາກອນຫຼາຍ ມີຍັກໜາແໜ້ນເສດຖະກິດດີ ດູຣາ ອານົນ ເມືອງກຸສາວະດີເປັນຣາດຊະທານີທີ່ມີສຽງນອງນັນດ້ວຍສຽງ ໑໐ ຊະນິດ ທັງກາງເວັນ ແລະ ກາງຄືນ ໄດ້ແກ່ສຽງຊ້າງ ສຽງມ້າ ສຽງລົດ ສຽງກອງ ສຽງຕະໂພນ ສຽງພິນສຽງຂັບຮ້ອງ ສຽງກັງສະດານ ສຽງເສບດົນຕີ ແລະ ສຽງໂອ້ລົມກັນຂອງຜູ້ຄົນ ເຊື້ອເຊີນກັນດ້ວຍຄຳວ່າ" ທ່ານທັງຫຼາຍ ໂຜດບໍລິໂພກ ດື່ມ ຫຍໍ້າກິນ" ໄປເທີ້ນອານົນ ທ່ານຈົ່ງເຂົ້າໄປເມືອງກຸສິນາຣາ ແຈ້ງແກ່ເຈົ້າມັນລະທັງຫຼາຍຜູ້ຄອງເມືອງກຸສິນາຣາວ່າ "ວາເສດຖະທັງຫຼາຍ ພຣະຕະຖາຄົດຈະປະຣິນິບພານໃນປັດສິມມະຍາມແຫ່ງຣາຕີນີ້ນີ້ ທ່ານທັງຫຼາຍຈົ່ງຟ້າວອອກໄປເຂົ້າເຝົ້າ ຈະໄດ້ບໍ່ເສຍໃຈໃນພາຍຫຼັງວ່າ "ພຣະຕະຖາຄົດເຈົ້າປະຣິນິບພານໃນເຂດບ້ານເມືອງຂອງພວກເຮົາແທ້ ໆ ແຕ່ພວກເຮົາກັບບໍ່ໄດ້ເຝົ້າພຣະຕະຖາຄົດເຈົ້າເປັນເທື່ອສຸດທ້າຍ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ແລ້ວຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນເຂົ້າໄປສູ່ເມືອງກຸສິນາຣາພຽງຜູ້ດຽວ

## ການຖວາຍອະພິວາດຂອງເຈົ້າມັນລະ

[໔໑໑] ໃນຂະນະນັ້ນ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ກຳລັງປະຊຸມກັນຢູ່ທີ່ສັນຖາຄານດ້ວຍຣາດຊະກິດບາງຢ່າງ ທ່ານພຣະອານົນເຂົ້າໄປທີ່ສັນຖາຄານຂອງພວກເຈົ້າມັນລະຖວາຍພຣະພອນວ່າ "ວາເສດຖະທັງຫຼາຍ ພຣະຕະຖາຄົດເຈົ້າຈະປະຣິນິບພານໃນປັດສິມມະຍາມແຫ່ງຣາຕີນີ້ນີ້ ທ່ານທັງຫຼາຍຈົ່ງຟ້າວອອກໄປເຂົ້າເຝົ້າຈະໄດ້ບໍ່ເສຍພຣະທະໄທໃນພາຍຫຼັງວ່າ "ພຣະຕະຖາຄົດເຈົ້າ ປະຣິນິບພານໃນເຂດບ້ານເມືອງຂອງພວກເຮົາ ພວກເຮົາກັບບໍ່ໄດ້ເຝົ້າພຣະຕະຖາຄົດເຈົ້າເປັນເທື່ອສຸດທ້າຍ"

ພວກເຈົ້າມັນລະໂອຣົດສຸນິສາ ແລະ ປະຊາບໍດີຂອງພວກເຈົ້າມັນລະພໍໄດ້ສະດັບຄໍາຂອງທ່ານພຣະອານົນແລ້ວ ຊົງໂສກເສົ້າເສຍພຣະທະໄທປຸ່ງມໄປດ້ວຍໂທມະນັດ ລາງພວກຍ່ອງຜົມຍົກມື ຍົກແຂນ ຮ້ອງໄຫ້ຮ່ໍາໄຮ ລົ້ມກິ້ງ ເກືອກລີເລືອໄປມາ ຄືຄົນຂາຂາດ ຮ່ໍາໄຮຈົ່ມວ່າ "ພຣະຜູ້ມີພຣະພາກເຈົ້າຈະປະຣິນິບພານແລ້ວ ພຣະສຸຄົດເຈົ້າຈະປະຣິນິບພານ ແລ້ວ ຈັກຂຸຂອງໂລກຈັກອັນຕະຣະທານຫາຍໄປແລ້ວ" ຈາກນັ້ນ ພວກເຈົ້າມັນລະ ໂອຣົດ ສຸນິສາ ແລະປະຊາບໍດີຂອງພວກເຈົ້າມັນລະ ຊົງໂສກເສົ້າເສຍພຣະທະໄທ ປຸ່ງມໄປດ້ວຍໂທມະນັດຕ່າງພາກັນເຂົ້າໄປຫາທ່ານພຣະອານົນ ທີ່ສາລະວັນ ເຊິ່ງເປັນທາງເຂົ້າເມືອງກຸສິນາຣາຂອງພວກເຈົ້າມັນລະ

ຄັ້ງນັ້ນ ທ່ານພຣະອານົນຄິດແນວນີ້ວ່າ "ຖ້າເຮົາຈະໃຫ້ເຈົ້າມັນລະທັງຫຼາຍ ຜູ້ຄອງເມືອງກຸສິນາຣາຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າເທື່ອລະອົງ ຈະໄດ້ເຂົ້າຖວາຍການອະພິວາດບໍ່ທົ່ວກັນ ຣາຕີນີ້ຈະສະຫວ່າງກ່ອນ ທາງທີ່ດີເຮົາຄວນໃຫ້ໄດ້ເຂົ້າຖວາຍອະພິວາດຕາມລໍາດັບຕະກູນໂດຍຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເຈົ້າມັນລະມີຊື່ນີ້ພ້ອມໂອຣົດ ແລະ ພຣະຊາຍາບໍລິສັດ ແລະ ອໍາມາດ ຂໍຖວາຍອະພິວາດ ພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍພຣະສຽນ" ແລ້ວຈຶ່ງຈັດໃຫ້ເຈົ້າມັນລະທັງຫຼາຍ ຜູ້ຄອງເມືອງກຸສິນາຣາຖວາຍອະພິວາດຕາມລໍາດັບຕະກູນ ໂດຍຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເຈົ້າມັນລະມີຊື່ນີ້ພ້ອມໂອຣົດ ແລະ ພຣະຊາຍາບໍລິສັດ ແລະ ອໍາມາດ ຂໍຖວາຍອະພິ ວາດພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍພຣະສຽນ" ດ້ວຍວິທີນີ້ທ່ານພຣະອານົນສາມາດຈັດໃຫ້ເຈົ້າມັນລະທັງຫຼາຍ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າໄດ້ສໍາເລັດລົງພຽງແຕ່ໃຊ້ເວລາໃນປະຖົມມະຍາມທໍ່ນັ້ນ

## ເລື້ອງສຸພັດທະປະຣິພາຊົກ

[໔໑໔] ສະໄໝນັ້ນ ສຸພັດທະປະຣິພາຊົກ ອາໄສຢູ່ໃນເມືອງກຸສິນາຣາໄດ້ຮູ້ວ່າ "ພຣະສະມະນະໂຄດົມ ຈະປະຣິນິບພານໃນປັດສິມມະຍາມແຫ່ງຣາຕີມື້ນີ້" ເຂົາຄິດແນວນີ້ວ່າ "ເຮົາໄດ້ຟັງຄໍາຂອງພວກປະຣິພາຊົກຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ຜູ້ເປັນປະຣະມາຈານ ລົມກັນວ່າ "ພຣະຕະຖາຄົດ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ຈະຊົງອຸບັດຂຶ້ນໃນໂລກ ບາງຍຸກສະໄໝທໍ່ນັ້ນ" ພຣະສະມະນະໂຄດົມ ຈະປະຣິນິບພານໃນປັດສິມມະຍາມແຫ່ງຣາຕີຂອງມື້ນີ້ ກໍເຮົາຍັງມີຄວາມສົງໄສຢູ່ ແລະ ເຮົາກໍເປັນຜູ້ເຫຼື້ອມໃສທ່ານພຣະສະມະນະໂຄດົມເຊື່ອໝັ້ນວ່າ "ພຣະສະມະນະໂຄດົມ ຈະສະແດງທໍາໃຫ້ເຮົາລະຄວາມສົງໄສນີ້ໄດ້" ເຮົາຈຶ່ງສົມຄວນເຂົ້າໄປຫາທ່ານພຣະອານົນທີ່ສາລະວັນ ເຊິ່ງເປັນທາງເຂົ້າເມືອງກຸສິນາຣາຂອງພວກເຈົ້າມັນລະແລ້ວກ່າວກັບທ່ານພຣະອານົນແນວນີ້ວ່າ "ທ່ານອານົນ ຂ້າພະ ເຈົ້າໄດ້ຟັງຄໍາຂອງພວກປະຣິພາຊົກຜູ້ແກ່ ຜູ້ເຖົ້າຜູ້ເປັນອາຈານ ແລະ ຜູ້ເປັນປະຣະມາຈານເວົ້າກັນວ່າ "ພຣະຕະຖາ ຄົດ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ຈະຊົງອຸບັດຂຶ້ນໃນໂລກເປັນບາງຍຸກສະໄໝທໍ່ນັ້ນ" ພຣະສະມະນະໂຄດົມ ຈະປະຣິນິບພານໃນປັດສິມມະຍາມແຫ່ງຣາຕີຂອງມື້ນີ້ ຂ້າພະເຈົ້າຍັງມີຄວາມສົງໄສຢູ່ ຂ້າພະເຈົ້າເຫຼື້ອມ

ໃສພຣະສະມະນະໂຄດົມເຊື່ອໝັ້ນແນວນີ້ວ່າ "ພຣະສະມະນະໂຄດົມ ຈະສະແດງທຳໃຫ້ຂ້າພະເຈົ້າລະຄວາມສົງໄສນີ້ໄດ້" ຂໍໂອກາດໃຫ້ຂ້າພະເຈົ້າໄດ້ເຂົ້າເຝົ້າ ພຣະສະມະນະໂຄດົມດ້ວຍເທີ້ນ"

ເມື່ອສຸພັດທະປະຣິພາຊົກກ່າວແນວນີ້ ທ່ານພຣະອານົນຕອບວ່າ "ຢ່າເລີຍ ສຸພັດທະຜູ້ມີອາຍຸ ທ່ານຢ່າລົບກວນພຣະຕະຖາຄົດເຈົ້າເລີຍ ພຣະຜູ້ມີພຣະພາກເຈົ້າຊົງເມື່ອຍຢູ່"

ແມ່ນເທື່ອທີ ໒ ສຸພັດທະປະຣິພາຊົກ ກໍກ່າວກັບທ່ານພຣະອານົນແນວນີ້ວ່າ ຯລຯ

ແມ່ນເທື່ອທີ ໓ ສຸພັດທະປະຣິພາຊົກ ກໍກ່າວກັບທ່ານພຣະອານົນແນວນີ້ວ່າ "ທ່ານອານົນຂ້າພະເຈົ້າໄດ້ຟັງຄຳຂອງພວກປະຣິພາຊົກຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ຜູ້ເປັນປະຣະມາຈານລົມກັນວ່າ "ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຈະຊົງອຸບັດຂຶ້ນໃນໂລກເປັນບາງຍຸກສະໄໝທີ່ນັ້ນ" ບັດນີ້ ພຣະສະມະນະໂຄດົມຈະປະຣິນິບພານໃນປັດສົມມະຍາມແຫ່ງຣາຕີຂອງມື້ນີ້ ຂ້າພະ ເຈົ້າຍັງມີຄວາມສົງໄສຢູ່ ຂ້າພະເຈົ້າເປັນຜູ້ເຫຼື້ອມໃສພຣະສະມະນະໂຄດົມແນວນີ້ວ່າ "ພຣະສະມະນະໂຄດົມ ຈະສະແດງທຳໃຫ້ຂ້າພະເຈົ້າລະຄວາມສົງໄສນີ້ໄດ້" ຂໍໂອກາດໃຫ້ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະສະມະນະໂຄດົມດ້ວຍເທີ້ນ"

ແມ່ນເທື່ອທີ ໓ ທ່ານພຣະອານົນ ກໍກ່າວກັບສຸພັດທະປະຣິພາຊົກແນວນີ້ວ່າ "ຢ່າເລີຍສຸພັດທະຜູ້ມີອາຍຸ ທ່ານຢ່າລົບກວນພຣະຕະຖາຄົດເຈົ້າເລີຍ ພຣະຜູ້ມີພຣະພາກເຈົ້າຊົງເມື່ອຍຢູ່"

[໒໑໓] ພຣະຜູ້ມີພຣະພາກເຈົ້າ ຊົງໄດ້ຍິນຄຳເວົ້າຂອງທ່ານພຣະອານົນ ເຈຣະຈາກັບສຸພັດທະປະຣິພາຊົກຢູ່ ຈຶ່ງຣັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ຢ່າຫ້າມສຸພັດທະເລີຍອານົນໃຫ້ສຸພັດທະເຂົ້າມາຫາຕະຖາຄົດ ເຂົາຈະຖາມບັນຫາບາງຢ່າງກັບເຮົາ ເຂົາຈະຖາມເພື່ອຫວັງຄວາມຮູ້ທີ່ນັ້ນ ບໍ່ຫວັງລົບກວນເຮົາ ອັນໜຶ່ງ ເມື່ອເຮົາຕອບສິ່ງທີ່ຖາມເຂົາຈະຮູ້ໄດ້ທັນທີ"

ລຳດັບນັ້ນ ທ່ານພຣະອານົນໄດ້ກ່າວກັບສຸພັດທະປະຣິພາຊົກແນວນີ້ວ່າ "ໄປເທີ້ນສຸພັດທະຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າປະທານໂອກາດແກ່ທ່ານແລ້ວ"

ສຸພັດທະປະຣິພາຊົກ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ທັກທາຍພໍເປັນທີ່ຊື່ນບານໃຈ ພໍເປັນທີ່ລະນຶກເຖິງກັນແລ້ວ ນັ່ງລົງບ່ອນສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ສະມະນະພາມ ທີ່ເປັນເຈົ້າໝູ່ ເຈົ້າຄະນະ ເປັນອາຈານ ມີຊື່ສຽງ ກຽດ ຕິຍົດ ເປັນເຈົ້າລັດທິ ປະຊາຊົນຍົກຍ້ອງກັນວ່າເປັນຄົນດີ ໄດ້ແກ່ປູຣະນະກັດສະປະ ມັກຂະລິໂຄສານ ອະຊິຕະເກສະກຳພົນ ປະກຸທະກັດຈາຍະນະ ສັນໄຊເວລັດຖະບຸດ ນິຄົນນາດຕະບຸດ ເຈົ້າລັດທິເຫຼົ່ານີ້ທັງໝົດຮູ້ຕາມທີ່ຕົນກ່າວອ້າງ ຫຼື ບໍ່ຮູ້ຕາມທີ່ຕົນກ່າວອ້າງ ຫຼື ລາງພວກຮູ້ ລາງພວກບໍ່ຮູ້ນໍ ຂ້ານ້ອຍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສຸພັດທະ ຢ່າເລີຍ ເລື້ອງທີ່ທ່ານຖາມວ່າ "ເຈົ້າລັດທິເຫຼົ່ານັ້ນທັງໝົດ ຮູ້ຕາມທີ່ຕົນກ່າວອ້າງ ຫຼື ບໍ່ຮູ້ຕາມທີ່ຕົນກ່າວອ້າງ ຫຼື ລາງພວກຮູ້ ລາງພວກບໍ່ຮູ້ນັ້ນ" ຢ່າໄດ້ສົນໃຈເລີຍ ເຮົາຈະສະແດງທຳແກ່ທ່ານ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈະກ່າວ"

ສຸພັດທະປະຣິພາຊົກ ທູນຮັບສະໜອງພຣະດຳຣັດ ແລ້ວນັ່ງນິ່ງຕັ້ງໃຈຟັງ

ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດແນວນີ້ ວ່າ

[໔໑໔] "ດູຣາ ສຸພັດທະ ໃນທຳວິໄນທີ່ບໍ່ມີອະຣິຍະມັກມີອົງ ໘ ຍ່ອມບໍ່ມີສະມະນະທີ ໑ ຍ່ອມບໍ່ມີສະມະນະທີ ໒ ຍ່ອມບໍ່ມີສະມະນະທີ ໓ ຍ່ອມບໍ່ມີສະມະນະທີ ໔ ມີພຽງແຕ່ໃນທຳວິໄນທີ່ມີອະຣິຍະມັກມີອົງ ໘ ຈຶ່ງມີສະມະນະທີ ໑ ຈຶ່ງມີສະມະນະທີ ໒ ຈຶ່ງມີສະມະນະທີ ໓ ຈຶ່ງມີສະມະນະທີ ໔ ດູຣາ ສຸພັດທະ ໃນທຳວິໄນນີ້ມີອະຣິຍະມັກມີອົງ ໘ ສະມະນະທີ ໑ ມີຢູ່ໃນທຳວິໄນນີ້ທີ່ນັ້ນ ສະມະນະທີ ໒ ມີຢູ່ໃນທຳວິໄນນີ້ທີ່ນັ້ນ ສະມະນະທີ ໓ ມີຢູ່ໃນທຳວິໄນນີ້ທີ່ນັ້ນ ສະມະນະທີ ໔ ກໍມີຢູ່ໃນທຳວິໄນນີ້ທີ່ນັ້ນ ນອກຈາກນີ້ລັດທິອື່ນ ວ່າງຈາກສະມະນະທັງຫຼາຍ ຜູ້ຮູ້ທົ່ວເຖິງທຳ ດູຣາ ສຸພັດທະ ຖ້າພິກຂຸເຫຼົ່ານີ້ເປັນຢູ່ໂດຍມັກມີອົງ ໘ ໂລກຈະບໍ່ຄວນວ່າງຈາກພຣະອະຣະຫັນ

ດູຣາ ສຸພັດທະ ເຮົາອອກບວດຕອນອາຍຸ ໒໙ ປີ
ສະແຫວງຫາແມ່ນຫຍັງຄືກຸສົນ
ເຮົາບວດມາໄດ້ ໕໐ ພັນສາກວ່າ
ເຮົາຍັງແນມບໍ່ເຫັນວ່າມີສະມະນະທີ ໑ ພາຍນອກທຳວິໄນນີ້
ຜູ້ສາມາດສະແດງທຳເປັນເຄື່ອງນຳອອກຈາກທຸກໄດ້

ບໍ່ມີສະມະນະທີ ໒ ບໍ່ມີສະມະນະທີ ໓ ບໍ່ມີສະມະນະທີ ໔ ລັດທິອື່ນວ່າງຈາກສະມະນະຜູ້ຮູ້ທົ່ວເຖິງທຳ ດູຣາ ສຸພັດທະ ຖ້າພິກຂຸເຫຼົ່ານັ້ນເປັນຢູ່ໂດຍມີມັກມີອົງ ໘ ໂລກນີ້ຈະບໍ່ວ່າງຈາກພຣະອະຣະຫັນ"

[໔໑໕] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ສຸພັດທະປະຣິພາຊົກໄດ້ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກຊັດແຈ້ງມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດແຈ້ງມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກແນມເຫັນຮູບໄດ້ ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ແລະ ຂ້າພຣະອົງເພິ່ງໄດ້ຮັບການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ສຸພັດທະ ຜູ້ເຄີຍເປັນອັນຍະເດຍຣະຖີ ປະສົງຈະບັນພະ ຊາ ປະສົງຈະອຸປະສົມບົດໃນທຳວິໄນນີ້ ຕ້ອງຢູ່ປະຣິວາດ ໔ ເດືອນ ຫຼັງຈາກ ໔ ເດືອນລ່ວງໄປແລ້ວ ເມື່ອພິກຂຸທັງຫຼາຍ ພໍໃຈໃນຄວາມປະພຶດຂອງທ່ານ ກໍຈະໃຫ້ບັນພະຊາໃຫ້ອຸປະສົມບົດເປັນພິກຂຸແກ່ທ່ານ ອັນໜຶ່ງ ໃນເລື້ອງນີ້ ເຮົາຄຳນຶງເຖິງຄວາມແຕກຕ່າງລະຫວ່າງບຸກຄົນດ້ວຍ"

ສຸພັດທະປະຣິພາຊົກຂາບທູນວ່າ "ຫາກຜູ້ທີ່ເຄີຍເປັນອັນຍະເດຍຣະຖີ ປະສົງຈະບັນພະຊາ ປະສົງຈະອຸປະສົມບົດໃນພຣະທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນຫຼັງຈາກ ໔ເດືອນລ່ວງໄປ ເມື່ອພິກຂຸທັງຫຼາຍພໍໃຈໃນຄວາມປະພຶດ ກໍຈະໃຫ້ບັນພະຊາ ໃຫ້ອຸປະສົມບົດເປັນພິກຂຸແກ່ຂ້າພະອົງ ຖ້າເປັນແນວນັ້ນ ຂ້າພະອົງຈັກຂໍຢູ່ປະຣິວາດເປັນເວລາ ໔ ປີ ຫຼັງຈາກ ໔ ປີລ່ວງໄປແລ້ວ ເມື່ອພິກຂຸພໍໃຈກໍຈົ່ງໃຫ້ບັນພະຊາ ຈົ່ງໃຫ້ອຸປະສົມບົດເປັນພິກຂຸແກ່ຂ້າພະອົງເທີ້ນ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນຖ້າເປັນແນວນັ້ນທ່ານຈົ່ງໃຫ້ສຸພັດທະບວດເທີ້ນ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດວ່າ ໂດຍຂ້ານ້ອຍ ໃນຂະນະນັ້ນສຸພັດທະປະຣິພາຊົກຈຶ່ງກ່າວກັບທ່ານພຣະອານົນແນວນີ້ວ່າ "ທ່ານພຣະອານົນ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວທີ່ພຣະສາດສະດາ ຊົງແຕ່ງຕັ້ງທ່ານໂດຍມອບໝາຍໃຫ້ບັນພະຊາອັນເຕວາສິກໃນບ່ອນສະເພາະພຣະພັກ"

ສຸພັດທະປະຣິພາຊົກໄດ້ຮັບການບັນພະຊາ ໄດ້ຮັບການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ເມື່ອທ່ານສຸພັດທະໄດ້ບັນພະຊາ ອຸປະສົມບົດແລ້ວ ບໍ່ດົນໄດ້ຫຼີກອອກໄປຢູ່ຜູ້ດຽວ ບໍ່ປະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນກໍໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດອັນຍອດຢ້ຽມ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນໄປ ບວດເປັນບັນພະຊິດໂດຍທຳຕ້ອງ ການ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ໄດ້ຮູ້ຊັດແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ໄດ້ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ຈຶ່ງເປັນອັນວ່າ ທ່ານສຸພັດທະໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ ທ່ານໄດ້ເປັນສັກຂີສາວົກ໌ ອົງສຸດທ້າຍຂອງພຣະຜູ້ມີພຣະພາກເຈົ້າ

**ພານະວານທີ ໕ ຈົບ**

## ພຣະປັດສິມວາຈາຂອງພຣະຕະຖາຄົດ

[໔໑໖] ຕໍ່ມາ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ດູຣາ ອານົນ ບາງທີພວກທ່ານອາດຈະຄິດວ່າ "ທຳທີ່ມີພຣະສາດສະດາລ່ວງລັບໄປແລ້ວ ກໍເໝືອນພວກເຮົາບໍ່ມີພຣະສາດສະດາ" ຂໍ້ນີ້ ພວກທ່ານບໍ່ຄວນເຫັນແນວນັ້ນ ທຳ ແລະ ວິໄນທີ່ເຮົາສະແດງແລ້ວ ບັນຍັດແລ້ວ ແກ່ທ່ານທັງຫຼາຍ ຫຼັງຈາກເຮົາລ່ວງລັບໄປແລ້ວກໍຈະເປັນສາດສະດາຂອງທ່ານທັງຫຼາຍ

ດູຣາ ອານົນ ເມື່ອເຮົາລ່ວງລັບໄປແລ້ວພິກຂຸບໍ່ຄວນຮຽກກັນ ແລະ ກັນດ້ວຍຄຳວ່າ "ອາວຸໂສ"[๑] ຄື ດັ່ງທີ່ຮຽກກັນຕອນນີ້ ພິກຂຸຜູ້ແກ່ກວ່າເພິ່ງຮຽກພິກຂຸຜູ້ອ່ອນກວ່າ ໂດຍຊື່ຫຼືຕະກູນໂດຍວາທະວ່າ "ອາວຸໂສ" ກໍໄດ້ ພິກຂຸຜູ້ອ່ອນກວ່າເພິ່ງຮຽກພິກຂຸຜູ້ແກ່ກວ່າວ່າ "ພັນເຕ" ຫຼື "ອາຍັດສະມາ" ກໍໄດ້ ດູຣາ ອານົນ ເມື່ອເຮົາລ່ວງລັບໄປແລ້ວ ຖ້າສົງປາຖະໜາຈະຖອນສິກຂາບົດເລັກໜ້ອຍ ກໍໃຫ້ຖອນໄດ້ ດູຣາ ອານົນ ເມື່ອເຮົາລ່ວງລັບໄປ ສົງເພິ່ງລົງພົມມະທັນແກ່ພິກຂຸສັນນະ"

ທ່ານພຣະອານົນ ທູນຖາມວ່າ "ພົມມະທັນເປັນແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ອານົນ ປ່ອຍໃຫ້ພິກຂຸສັນນະເວົ້າໄດ້ຕາມຕ້ອງການ ແຕ່ບໍ່ໃຫ້ພິກຂຸວ່າກ່າວຕັກເຕືອນ ຫຼື ສັ່ງສອນທ່ານ"

[໔໑໗] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ຖ້າພິກຂຸແມ່ນພຽງອົງດຽວເພິ່ງມີຄວາມສົງໄສ ຫຼື ຄວາມເຄືອບແຄງໃນພຣະພຸດ ພຣະທຳ ພຣະສົງ ຫຼື ໃນປະຕິປະທາ (ຂໍ້ປະຕິບັດ) ທ່ານທັງຫຼາຍຈົ່ງຖາມມາເທີ້ນຈະໄດ້ບໍ່ເສຍໃຈໃນພາຍຫຼັງວ່າ "ເວລາທີ່ພຣະສາດສະດາຢູ່ຕໍ່ໜ້າເຮົາ ແຕ່ເຮົາບໍ່ກ້າທູນຖາມໃນບ່ອນສະ ເພາະພຣະພັກ" ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນໄດ້ນິ່ງງຽບຢູ່ບໍ່ມີອົງໃດກ້າຖາມ

ແມ່ນເທື່ອທີ ໔ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍຕັດວ່າ ຯລຯ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ຖ້າພິກຂຸແມ່ນພຽງອົງດຽວເພິ່ງມີຄວາມສົງໄສ ຫຼື ຄວາມເຄືອບແຄງໃນພຣະພຸດ ພຣະທຳ ພຣະສົງ ຫຼື ໃນປະຕິປະທາ (ຂໍ້ປະຕິບັດ) ທ່ານທັງຫຼາຍຈົ່ງຖາມມາເທີ້ນ ຈະໄດ້ບໍ່ເສຍໃຈໃນພາຍຫຼັງວ່າ "ເວລາທີ່ພຣະສາດສະດາຢູ່ຕໍ່ໜ້າເຮົາ ແຕ່ເຮົາບໍ່ກ້າທູນຖາມໃນບ່ອນສະເພາະພຣະພັກ" ແມ່ນເທື່ອທີ ໓ ພິກຂຸເຫຼົ່ານັ້ນກໍຍັງນິ່ງງຽບຢູ່ຄືເກົ່າບໍ່ມີອົງໃດກ້າຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸ

ທັງຫຼາຍ ຖ້າທ່ານທັງຫຼາຍບໍ່ກ້າຖາມ ເພາະຄວາມເຄົາຣົບໃນສາດສະດາ ກໍຂໍໃຫ້ພິກຂຸຜູ້ເປັນເພື່ອນບອກ (ຄວາມສົງໄສ) ແກ່ພິກຂຸຜູ້ເປັນເພື່ອນໃຫ້ຖາມແທນກໍໄດ້ ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ພິກຂຸເຫຼົ່ານັ້ນໄດ້ນິ່ງງຽບຢູ່

ທ່ານພຣະອານົນໄດ້ຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດມີ ຂ້າພຣະອົງເຫຼື້ອມໃສໃນພິກຂຸສົງແນວນີ້ວ່າ ແມ່ນພິກຂຸພຽງອົງດຽວກໍບໍ່ມີຄວາມສົງໄສ ຫຼື ຄວາມເຄືອບແຄງໃນພຣະພຸດ ພຣະທຳ ພຣະສົງ ຫຼື ໃນປະຕິປະທາ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ດູຣາ ອານົນ ທ່ານກ່າວເພາະຄວາມເຫຼື້ອມໃສ ແຕ່ຕະຖາຄົດມີຍານຮູ້ໃນເລື້ອງນີ້ດີວ່າ ໃນພິກຂຸສົງທັງຫຼາຍເຫຼົ່ານີ້ ແມ່ນພິກຂຸພຽງອົງດຽວກໍບໍ່ມີຄວາມສົງໄສ ຫຼື ຄວາມເຄືອບແຄງໃນພຣະພຸດ ພຣະທຳ ພຣະສົງ ຫຼື ໃນປະຕິປະທາ ໃນຈຳນວນພິກຂຸ ໕໐໐ ອົງນີ້ ພິກຂຸຜູ້ມີຄຸນທຳຂັ້ນຕ່ຳສຸດເປັນພຣະໂສດາບັນ ບໍ່ມີທາງຕ່ຳຕ້ອຍ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າຢ່າງແນ່ນອນ

[໔໑໗] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຣັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ “ດູຣາພິກຂຸທັງຫຼາຍ ບັດນີ້ເຮົາຂໍເຕືອນທ່ານທັງຫຼາຍວ່າ ສັງຂານທັງຫຼາຍມີຄວາມເສື່ອມໄປເປັນທຳມະດາ ທ່ານທັງຫຼາຍຈົ່ງເຮັດໜ້າທີ່ໃຫ້ສຳເລັດ ດ້ວຍຄວາມບໍ່ປະໝາດເທີ້ນ” ນີ້ເປັນພຣະປັດສິມວາຈາຂອງພຣະຕະຖາຄົດເຈົ້າ

## ເລື້ອງພຸດທະປະຣິນິບພານ

[໔໑໘] ຕໍ່ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງເຂົ້າປະຖົມມະຊານ ອອກຈາກປະຖົມມະຊານ ຊົງເຂົ້າທຸຕິຍະຊານ ອອກຈາກທຸຕິຍະຊານ ຊົງເຂົ້າຕະຕິຍະຊານ ອອກຈາກຕະຕິຍະຊານ ຊົງເຂົ້າຈະຕຸດຖະຊານ ອອກຈາກຈະຕຸດຖະຊານ ຊົງເຂົ້າອາກາສານັນຈາຍະຕະນະສະມາບັດ ອອກຈາກອາກາສານັນຈາຍະຕະນະສະມາບັດ ຊົງເຂົ້າວິນຍານັນຈາຍະຕະນະສະມາບັດ ອອກຈາກວິນຍານັນຈາຍະຕະນະສະມາບັດ ຊົງເຂົ້າອາກິນຈັນຍາຍະຕະນະສະມາບັດ ອອກຈາກອາກິນຈັນຍາຍະຕະນ ສະມາບັດ ຊົງເຂົ້າເນວະສັນຍານາສັນຍາຍະຕະນະສະມາບັດ ອອກຈາກເນວະສັນຍານາສັນຍາຍະຕະນະສະມາບັດ ຊົງເຂົ້າສັນຍາເວທະຍິຕະນິໂຣດ

ໃນຂະນະນັ້ນ ທ່ານພຣະອານົນຮຽນຖາມທ່ານພຣະອະນຸຣຸດທະແນວນີ້ວ່າ “ທ່ານອະນຸຣຸດທະຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າປະຣິນິບພານແລ້ວບໍ?”

ທ່ານພຣະອະນຸຣຸດທະຕອບວ່າ “ທ່ານອານົນ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າ ຍັງບໍ່ປະຣິນິບພານ ຊົງເຂົ້າສັນຍາເວທະຍິຕະນິໂຣດຢູ່”

ຕໍ່ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດຊຶ່ງເຂົ້າເນວະສັນຍານາສັນຍາຍະຕະນະສະມາບັດ ອອກຈາກເນວະສັນຍານາສັນຍາຍະຕະນະສະມາບັດ ຊຶ່ງເຂົ້າອາກິນຈັນຍາຍະຕະນະສະມາບັດ ອອກຈາກອາກິນຈັນຍາຍະຕະນະສະມາບັດ ຊຶ່ງເຂົ້າວິນຍານັນຈາຍະຕະນະສະມາບັດ ອອກຈາກວິນຍານັນຈາຍະຕະນະສະມາບັດແລ້ວ

ຊຶ່ງເຂົ້າອາກາສານັນຈາຍະຕະນະສະມາບັດ ອອກຈາກອາກາສານັນຈາຍະຕະນະສະມາບັດ ຊຶ່ງເຂົ້າຈະຕຸດຖະຊານ ອອກຈາກຈະຕຸດຖະຊານ ຊຶ່ງເຂົ້າຕະຕິຍະຊານ ອອກຈາກຕະຕິຍະຊານ ຊຶ່ງເຂົ້າທຸຕິຍະຊານອອກຈາກທຸຕິຍະຊານ ຊຶ່ງເຂົ້າປະຖົມມະຊານອອກຈາກປະຖົມມະຊານ ຊຶ່ງເຂົ້າທຸຕິຍະຊານ ອອກຈາກທຸຕິຍະຊານ ຊຶ່ງເຂົ້າຕະຕິຍະຊານ ອອກຈາກຕະຕິຍະຊານ ຊຶ່ງເຂົ້າຈະຕຸດຖະຊານ ອອກຈາກຈະຕຸດຖະຊານແລ້ວ ໄດ້ສະເດັດດັບຂັນທະປະຣິນິບພານໃນລຳດັບຖັດມາ

[໔໔໐] ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດດັບຂັນທະປະຣິນິບພານແລ້ວ ໄດ້ເກີດແຜ່ນດິນໄຫວຢ່າງຮຸນແຮງເປັນຕາຢ້ານ ຂົນຫົວລຸກ ທັງກອງທິບກໍດັງກ້ອງສະນັ່ນຂຶ້ນພ້ອມກັບການສະເດັດດັບຂັນທະປະຣິນິບພານຂອງພຣະອົງ

ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດດັບຂັນທະປະຣິນິບພານແລ້ວ ທ້າວສະຫຳບໍດີພົມກ່າວຄາຖານີ້ຂຶ້ນພ້ອມກັບການສະເດັດດັບຂັນທະປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າວ່າ

“ສັບພະສັດຈະຕ້ອງປະຖິ້ມຮ່າງກາຍໄວ້ໃນໂລກ
ພຣະສາດສະດາຜູ້ຫາໃຜປຽບທຽບບໍ່ໄດ້ໃນໂລກ
ຜູ້ເຂົ້າເຖິງສະພາວະຕາມຄວາມເປັນຈິງ ຜູ້ບັນລຸພະລະທຳ
ຜູ້ຕັດສະຮູ້ເອງໂດຍຊອບ ແນວນີ້ ກໍຍັງຕ້ອງດັບຂັນປະຣິນິບພານ”

[໔໔໑] ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດດັບຂັນທະປະຣິນິບພານ ທ້າວສັກກະຜູ້ເປັນຈອມແຫ່ງເທບ ໄດ້ກ່າວຄາຖານີ້ຂຶ້ນພ້ອມກັບການສະເດັດດັບຂັນທະປະຣິນິບພານວ່າ

“ສັງຂານທັງຫຼາຍບໍ່ທ່ຽງນໍ
ມີຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປເປັນທຳມະດາ
ເກີດຂຶ້ນແລ້ວຍ່ອມດັບໄປ
ການເຂົ້າໄປລະງັບດັບສັງຂານເຫຼົ່ານັ້ນເປັນຄວາມສຸກ”

[໔໔໔] ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດດັບຂັນທະປະຣິນິບພານແລ້ວ ທ່ານພຣະອະນຸຣຸດທະກ່າວຄາຖາເຫຼົ່ານີ້ຂຶ້ນ ພ້ອມກັບການສະເດັດດັບຂັນທະປະຣິນິບພານວ່າ

"ລົມຫັນໃຈເຂົ້າລົມຫັນໃຈອອກ
ຂອງພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຫະໄທໝັ້ນຄົງ ຜູ້ຕັ້ງໝັ້ນບໍ່ມີແລ້ວ
ພຣະມຸນີຜູ້ບໍ່ຊົງຫວັ່ນໄຫວ ຊົງມຸ່ງຫາສັນຕິປະຣິນິບພານແລ້ວ
ພຣະອົງຜູ້ມີພຣະຫະໄທບໍ່ຫົດຫູ່
ຊົງອົດກັ້ນເວທະນາໄດ້ ມີພຣະຫະໄທຫຼຸດພົ້ນແລ້ວ
ຄືດວງປະທີບທີ່ເຄີຍຮຸ່ງແຈ້ງ ສະຫວ່າງສະໄຫວ ດັບໄປແລ້ວສັນນັ້ນ"

[໔໔໓] ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດດັບຂັນທະປະຣິນິບພານແລ້ວ ທ່ານພຣະອານົນກ່າວຄາຖານີ້ຂຶ້ນພ້ອມກັບການສະເດັດດັບຂັນທະປະຣິນິບພານວ່າ

"ເມື່ອພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະອາການອັນລ້ຳເລີດທຸກຢ່າງ ປະຣິນິບພານໄປແລ້ວ
ໄດ້ເກີດເຫດອັດສະຈັນເປັນຕາຢ້ານຂົນຫົວລຸກຂຶ້ນນໍ"

[໔໔໔] ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດດັບຂັນທະປະຣິນິບພານແລ້ວ ບັນດາພິກຂຸເຫຼົ່ານັ້ນ ພວກທີ່ຍັງມີຣາຄະໄດ້ພາກັນຍໍແຂນຮ່ຳໄຮ ລົ້ມກິ້ງເກືອກລີເລືອໄປມາ ຄື ຄົນຂາຂາດຮ່ຳໄຮຈົ່ມວ່າ "ພຣະຜູ້ມີພຣະພາກເຈົ້າ ປະຣິນິບພານແລ້ວ ພຣະສຸຄົດເຈົ້າ ປະຣິນິບພານ ແລ້ວຈັກຂຸຂອງໂລກອັນຕະທານໄປແລ້ວ" ສ່ວນພິກຂຸຜູ້ບໍ່ມີຣາຄະ ມີສະຕິສຳປະຊັນຍະ ອົດກັ້ນໄດ້ເພາະຮູ້ວ່າ "ສັງຂານທັງຫຼາຍບໍ່ທ່ຽງນໍ ເຫຼົ່າສັດຈະຫາຄວາມຍັ້ງຍືນຈາກສັງຂານນີ້ແມ່ນຫາບໍ່ໄດ້ເລີຍ"

[໔໔໕] ຄັ້ງນັ້ນ ທ່ານພຣະອະນຸຣຸດທະເຕືອນພິກຂຸທັງຫຼາຍວ່າ "ຢ່າເລີຍ ຜູ້ມີອາຍຸທັງຫຼາຍທ່ານທັງຫຼາຍຢ່າເສົ້າໂສກ ຢ່າຮ່ຳໄຮເລີຍ ເລື້ອງນີ້ ພຣະຜູ້ມີພຣະພາກເຈົ້າ ເຄີຍຕັດສອນໄວ້ແລ້ວບໍ່ແມ່ນບໍວ່າ ຄວາມພັດພາກ ຄວາມປະຖິ້ມ ຄວາມປ່ຽນແປງໄປເປັນຢ່າງອື່ນຈາກຂອງຮັກ ຂອງພໍໃຈທຸກຢ່າງ ຈະຕ້ອງມີ ດັ່ງນັ້ນ ບໍ່ຄວນຍຶດໝັ້ນ ຖືໝັ້ນ ໃນສັງຂານນີ້ ສິ່ງທີ່ ເກີດຂຶ້ນ ມີຂຶ້ນຖືກປັດໄຈປຸງແຕ່ງແລ້ວ ລ້ວນຈະຕ້ອງແຕກສະຫຼາຍຫາຍໄປເປັນທຳມະດາ ເປັນໄປບໍ່ໄດ້ທີ່ຈະປາຖະໜາວ່າ "ຂໍສິ່ງນັ້ນຢ່າເສື່ອມສະຫຼາຍຫາຍໄປເລີຍ" ທ່ານຜູ້ມີອາຍຸທັງຫຼາຍ ພວກເທວະດາກຳລັງຕຳໜິພວກທ່ານຢູ່"

ທ່ານພຣະອານົນຖາມວ່າ "ທ່ານອະນຸຣຸດທະ ພວກເທວະດາເປັນແນວໃດ? ທຳໃຈໄດ້ຫຼືບໍ່?"

ທ່ານພຣະອະນຸຣຸດທະຕອບວ່າ "ທ່ານອານົນມີເທວະດາລາງພວກເປັນຜູ້ກຳນົດແຜ່ນດິນຂຶ້ນເທິງອາກາດ ຍ່ອງຜົມ ຍົກມື ຍົກແຂນ ຮ້ອງໄຫ້ ຮ່ຳໄຮ ລົ້ມກິ້ງເກືອກລີເລືອໄປມາ ຄື ຄົນຂາຂາດ ຮ່ຳໄຮຈົ່ມວ່າ "ພຣະຜູ້ມີພຣະພາກເຈົ້າ ປະຣິນິບພານແລ້ວ ພຣະສຸຄົດເຈົ້າປະຣິນິບພານແລ້ວນໍ ຈັກຂຸຂອງໂລກອັນຕະຣະທານຫາຍໄປແລ້ວ"

ມີເທວະດາລາງພວກເປັນຜູ້ກຳນົດແຜ່ນດິນຂຶ້ນເທິງແຜ່ນດິນ ຍ່ອງຜົມ ຍົກມື ຍົກແຂນ ຮ້ອງ ໄຫ້ຮ່ຳໄຮ ລົ້ມກິ້ງເກືອກລີເລືອໄປມາຄືຄົນຂາຂາດ ຯລຯ ”

ສ່ວນເທວະດາທີ່ບໍ່ມີຣາຄະ ມີສະຕິສຳປະຊັນຍະກໍອົດກັ້ນໄດ້ວ່າ “ສັງຂານທັງຫຼາຍ ບໍ່ທ່ຽງນໍ ເຫຼົ່າສັດບໍ່ສາມາດຫວັງອັນໃດຈາກສັງຂານນີ້ໄດ້ເລີຍ”

ທ່ານພຣະອະນຸຣຸດທະກັບທ່ານພຣະອານົນ ໄດ້ປ່ອຍໃຫ້ເວລາຜ່ານໄປດ້ວຍການສະ ແດງທຳມີກະຖາ ຕະຫຼອດຄືນຮອດຮຸ່ງແຈ້ງ

[໔໔ຜ] ຕໍ່ມາທ່ານພຣະອະນຸຣຸດທະສັ່ງທ່ານພຣະອານົນວ່າ “ໄປເທີ້ນ ອານົນ ຜູ້ມີອາຍຸ ທ່ານຈົ່ງເຂົ້າໄປສູ່ເມືອງກຸສິນາຣາແຈ້ງເລື້ອງນີ້ແກ່ເຈົ້າມັນລະທັງຫຼາຍ ຜູ້ຄອງເມືອງກຸສິນາຣາວ່າ “ວາເສດຖະທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ປະຣິນິບພານແລ້ວ ຂໍທ່ານທັງຫຼາຍ ຈົ່ງກຳນົດເວ ລາທີ່ສົມຄວນໃນບັດນີ້ເທີ້ນ” ທ່ານພຣະອານົນຮັບຄຳແລ້ວ ເວລາເຊົ້າມາຮອດຈຶ່ງຄອງອັນຕະຣະ ວາສົກ ຖືບາດ ແລະ ຈີວອນເຂົ້າໄປສູ່ເມືອງກຸສິນາຣາພຽງຜູ້ດຽວ

ໃນຂະນະນັ້ນ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ກຳລັງປະຊຸມກັນຢູ່ໃນສັນຖາຄານ ກ່ຽວກັບເລື້ອງການປະຣິນິບພານຂອງພຣະສາດສະດາ ທ່ານພຣະອານົນເຂົ້າໄປໃນສັນຖາຄານ ຂອງພວກເຈົ້າມັນລະແລ້ວຖວາຍພຣະພອນວ່າ “ວາເສດຖະທັງຫຼາຍ ພຣະຜູ້ມີພຣະພາກເຈົ້າປະ ຣິນິບພານແລ້ວ ຂໍທ່ານທັງຫຼາຍຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ”

ພວກເຈົ້າມັນລະ ໂອຣົດ ສຸນິສາ ແລະ ປະຊາບໍດີ ຂອງພວກເຈົ້າມັນລະ ພໍໄດ້ສະດັບ ຂ່າວ (ຈາກ) ທ່ານພຣະອານົນແນວນີ້ແລ້ວ ຊົງໂສກເສົ້າເສຍພຣະທະໄທປ່ຽນໄປດ້ວຍໂທມະນັດ ລາງພວກຍ່ອງຜົມ ຍົກມື ຍົກແຂນ ຮ້ອງໄຫ້ຮ່ຳໄຮ ລົ້ມກິ້ງເກືອກລີເລືອໄປມາ ຄືຄົນຂາຂາດ ຮ່ຳໄຮຈົ່ມວ່າ “ພຣະຜູ້ມີພຣະພາກເຈົ້າ ປະຣິນິບພານແລ້ວ ພຣະສຸຄົດເຈົ້າປະຣິນິບພານ ແລ້ວ ຈັກຂຸຂອງໂລກອັນຕະຣະທານຫາຍໄປແລ້ວ”

## ການບູຊາພຣະພຸດທະສະຣີຣະ

[໔໔ກ] ລຳດັບນັ້ນ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ຮັບສັ່ງໃຫ້ຂ້າຣາດຊະບໍຣິພານ ວ່າ “ທ່ານທັງຫຼາຍ ຖ້າແນວນັ້ນ ທ່ານທັງຫຼາຍຈົ່ງກຽມຂອງຫອມ ຮວດດອກໄມ້ ແລະ ເຄື່ອງ ດົນຕີທຸກຢ່າງຕ້ອງໃຫ້ຄືກັນກັບມີໃນເມືອງກຸສິນາຣາໄວ້ໃຫ້ພ້ອມ” ແລ້ວຊົງຖືເອົາຂອງຫອມຮວດ ດອກໄມ້ເຄື່ອງດົນຕີທຸກຢ່າງ ແລະ ຜ້າ ໕໐໐ ຄູ່ ສະເດັດເຂົ້າໄປສູ່ສາລະວັນຂອງພວກເຈົ້າ ມັນລະ ເຊິ່ງເປັນທາງເຂົ້າເມືອງກົງໄປຫາພຣະພຸດສະຣີຣະແລ້ວ ຊົງສັກກາຣະ ເຄົາຣົບ ນອບ ນ້ອມ ບູຊາພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍການຟ້ອນ ຂັບຮ້ອງ ເສບດົນຕີ

ດອກໄມ້ ແລະ ຂອງຫອມ ຊົງກັ້ງຜ້າເພດານ ຕົກແຕ່ງຮອບຜາມ ດ້ວຍມາລາດອກໄມ້ ເຮັດໃຫ້ວັນນັ້ນ ໝົດໄປດ້ວຍກິດຈະກຳແບບນີ້

ຕໍ່ມາພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາຊົງດຳຣິວ່າ "ມື້ນີ້ຄ່ຳໂພດແລ້ວ ທີ່ຈະຖວາຍພຣະເພີງພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ເອົາໄວ້ມື້ອື່ນເຮົາຈຶ່ງຄ່ອຍຖວາຍພຣະເພີງ" ຈາກນັ້ນ ກໍຊົງສັກກາຣະ ເຄົາຣົບ ນອບນ້ອມ ບູຊາ ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍການຟ້ອນ ຂັບຮ້ອງ ເສບດົນຕີ ດອກໄມ້ ແລະ ຂອງຫອມ ຊົງກັ້ງຜ້າເພດານ ຕົກແຕ່ງຮອບຜາມ ດ້ວຍມາລາດອກໄມ້ ຈົນເວລາຜ່ານໄປມື້ທີ ໒ ມື້ທີ ໓ ມື້ທີ ໔ ມື້ທີ ໕ ມື້ທີ ໖ ໝົດໄປ

ພໍຮອດມື້ຖ້ວນ ໗ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ຊົງດຳຣິວ່າ "ເຮົາສັກກາຣະເຄົາຣົບ ນອບນ້ອມ ບູຊາ ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍການຟ້ອນ ຂັບຮ້ອງເສບດົນຕີ ດອກໄມ້ ແລະ ຂອງຫອມ ຈະອັນເຊີນ (ພຣະສະຣີຣະ) ໄປທາງທິດໃຕ້ຂອງເມືອງສຳເລັດແລ້ວ ຈຶ່ງຖວາຍພຣະເພີງພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ຂ້າງນອກພຣະນະຄອນທາງທິດໃຕ້"

[໒໒໗] ໃນວັນນັ້ນ ປະມຸກເຈົ້າມັນລະ ໘ ອົງ ສົງນ້ຳພຣະສຽນແລ້ວຊົງພຣະພູສາໃໝ່ດ້ວຍຕັ້ງ ພຣະຫະໄທວ່າ "ພວກເຮົາຈະອັນເຊີນພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າຂຶ້ນ" ແຕ່ບໍ່ອາດຈະຍົກຂຶ້ນໄດ້ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ຈຶ່ງຕັດຖາມທ່ານພຣະອະນຸຣຸດທະວ່າ "ທ່ານພຣະອະນຸຣຸດທະ ເພາະມີເຫດອັນໃດ ເປັນປັດໄຈທີ່ເຮັດໃຫ້ປະມຸກເຈົ້າມັນລະ ໘ ອົງນີ້ ຊົງສົງພຣະສຽນແລ້ວ ຊົງພຣະພູສາໃໝ່ດ້ວຍຕັ້ງພຣະຫະໄທວ່າ "ພວກເຮົາຈະອັນເຊີນພຣະສະຣີຣະຂອງພຣະຜູ້ມີພຣະພາກຂຶ້ນ" ແຕ່ບໍ່ອາດຈະຍົກຂຶ້ນໄດ້" ທ່ານພຣະອະນຸຣຸດທະຖວາຍພຣະພອນວ່າ "ວາເສດຖະທັງຫຼາຍມະຫາບໍພິດມີພຣະປະສົງແນວໜຶ່ງ ພວກເທວະດາມີຄວາມປະສົງອີກແນວໜຶ່ງ"

ພວກເຈົ້າມັນລະຕັດຖາມວ່າ "ພວກເທວະດາມີຄວາມປະສົງແນວໃດ? ຂ້ານ້ອຍ"

ທ່ານພຣະອະນຸຣຸດທະຖວາຍພຣະພອນວ່າ "ມະຫາບໍພິດ ມີພຣະປະສົງວ່າເຮົາຈະສັກກາຣະ ເຄົາຣົບ ນອບນ້ອມ ບູຊາ ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍການຟ້ອນຂັບຮ້ອງ ເສບດົນຕີ ດອກໄມ້ ແລະ ຂອງຫອມ ແລ້ວຈຶ່ງຈະອັນເຊີນ (ພຣະສະຣີຣະ) ໄປທາງທິດໃຕ້ຂອງເມືອງ ແລ້ວຈຶ່ງຈະຖວາຍພຣະເພີງ ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ຢູ່ຂ້າງນອກພຣະນະຄອນທາງທິດໃຕ້ ແຕ່ພວກເທວະດາມີຄວາມປະສົງວ່າ "ພວກເຮົາຈະສັກກາຣະເຄົາຣົບ ນອບນ້ອມ ບູຊາພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍການຟ້ອນ ຂັບຮ້ອງເສບດົນຕີ ດອກໄມ້ ແລະ ຂອງຫອມ ອັນເປັນທິບ ຈະອັນເຊີນ (ພຣະສະຣີຣະ) ໄປທາງທິດເໜືອຂອງເມືອງແລ້ວ ອັນເຊີນເຂົ້າສູ່ເມືອງທາງປະຕູດ້ານທິດເໜືອ ອັນເຊີນຜ່ານໃຈກາງເມືອງ

ແລ້ວ ອອກທາງປະຕູດ້ານທິດຕາເວັນອອກ ແລ້ວຈຶ່ງຖວາຍພຣະເພີງພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ທີ່ມະກຸດພັນທະນະເຈດີ ຂອງພວກເຈົ້າມັນລະ ທາງທິດຕາເວັນອອກຂອງເມືອງ”

ພວກເຈົ້າມັນລະຕັດວ່າ “ຂໍໃຫ້ເປັນໄປຕາມຄວາມປະສົງຂອງພວກເທວະດາເທີ້ນຂ້ານ້ອຍ”

[໔໔໙] ກໍໃນເວລານັ້ນ ທົ່ວທັງເມືອງກຸສິນາຣາ ບໍ່ວ່າຮ່ອມເຮືອນ ທໍ່ນ້ຳຖິ້ມ ແລະ ກອງຂີ້ເຫຍື້ອ ເດຍຣະດາດໄປດ້ວຍດອກມົນທາ ຢ່າງຕ່ຳ ສູງພຽງຫົວເຂົ່າ ພວກເທວະດາ ແລະ ພວກເຈົ້າມັນລະພາກັນສັກກາຣະ ເຄົາຣົບ ນອບນ້ອມ ບູຊາ ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍການຟ້ອນ ຂັບຮ້ອງ ເສບດົນຕີ ດອກໄມ້ ແລະ ຂອງຫອມ ທັງທີ່ເປັນຂອງທິບ ແລະທີ່ເປັນຂອງມະນຸດ ອັນເຊີນ (ພຣະສະຣີຣະ) ໄປທາງທິດເໜືອຂອງເມືອງແລ້ວ ເຂົ້າສູ່ເມືອງທາງປະຕູດ້ານທິດເໜືອ ອັນເຊີນຜ່ານໃຈກາງເມືອງໄປອອກທາງປະຕູດ້ານທິດຕາເວັນອອກສຳເລັດແລ້ວ ຈຶ່ງປະດິດສະຖານພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ໃນມະກຸດພັນທະນະເຈດີຂອງພວກເຈົ້າມັນລະ ທາງທິດຕາເວັນອອກຂອງເມືອງ

[໔໕໐] ຈາກນັ້ນ ພວກເຈົ້າມັນລະໄດ້ຕັດຖາມທ່ານພຣະອານົນແນວນີ້ວ່າ “ພວກຂ້າພະເຈົ້າຈະເພິ່ງປະຕິບັດຕໍ່ພຣະສະຣີຣະຂອງພຣະຕະຖາຄົດແນວໃດນໍ? ຂ້ານອຍ”

ທ່ານພຣະອານົນຖວາຍພຣະພອນວ່າ “ມະຫາບໍພິດ ເພິ່ງປະຕິບັດຕໍ່ພຣະສະຣີຣະຂອງພຣະຕະຖາຄົດເຈົ້າ ຢ່າງດຽວກັນກັບທີ່ພວກເຂົາປະຕິບັດ ຕໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດນັ້ນແລ”

ພວກເຈົ້າມັນລະຕັດຖາມວ່າ “ພວກເຂົາປະຕິບັດຕໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດແນວໃດນໍ? ຂ້ານ້ອຍ”

ທ່ານພຣະອານົນຖວາຍພຣະພອນວ່າ “ພວກເຂົາໃຊ້ຜ້າໃໝ່ຫໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດ ແລ້ວ ຈຶ່ງຫໍ່ດ້ວຍສຳລີບໍລິສຸດ ແລ້ວຈຶ່ງຫໍ່ດ້ວຍຜ້າໃໝ່ອີກຊັ້ນໜຶ່ງ ເຮັດໂດຍວິທີນີ້ຈົນແລ້ວ ແລ້ວຫໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດດ້ວຍຜ້າ ແລະ ສຳລີໄດ້ ໑,໐໐໐ ຊັ້ນແລ້ວອັນເຊີນພຣະບໍຣົມມະສົບລົງໃນຮາງເຫຼັກເຕັມດ້ວຍນ້ຳມັນ ໃຊ້ຮາງເຫຼັກອີກອັນໜຶ່ງກວມແລ້ວທຳຈິຕະກາທານດ້ວຍໄມ້ຫອມລ້ວນ ແລ້ວຖວາຍພຣະເພີງພຣະບໍຣົມມະສົບພຣະເຈົ້າຈັກກະພັດ ສ້າງພຣະສະຖູບຂອງພຣະເຈົ້າຈັກກະພັດໄວ້ທີ່ທາງໃຫຍ່ສີ່ແຍກ ພວກທ່ານເພິ່ງປະຕິບັດ ຕໍ່ພຣະສະຣີຣະຂອງພຣະຕະຖາຄົດເຈົ້າ ຄືກັນກັບທີ່ພວກເຂົາປະຕິບັດຕໍ່ພຣະບໍຣົມມະສົບຂອງພຣະເຈົ້າຈັກກະພັດ ເພິ່ງສ້າງພຣະສະຖູບຂອງພຣະຕະຖາຄົດເຈົ້າໄວ້ທີ່ທາງໃຫຍ່ສີ່ແຍກຊົນເຫຼົ່າໃດ ຈັກຍໍຮວດດອກໄມ້ ຂອງຫອມ ຫຼື ແປ້ງຫອມ ຈັກຖວາຍອະພິວາດ ຫຼື ຈັກທຳຈິດໃຫ້

ເຫຼື້ອມໃສ ໃນພຣະສະຖູບນັ້ນ ການກະທຳນັ້ນ ຈັກເປັນໄປເພື່ອເກື້ອກູນ ເພື່ອຄວາມສຸກແກ່ຊົນເຫຼົ່ານັ້ນ ຕະຫຼອດກາລະນານ"

ລຳດັບນັ້ນ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ຮັບສັ່ງຂ້າຣາດຊະບໍຣິພານວ່າ "ທ່ານທັງຫຼາຍ ຖ້າເປັນແນວນັ້ນ ພວກທ່ານຈົ່ງກຽມສຳລີບໍລິສຸດໄວ້ໃຫ້ພ້ອມ" ຈາກນັ້ນ ຊົງໃຊ້ຜ້າໃໝ່ຫໍ່ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງຫໍ່ດ້ວຍສຳລີບໍລິສຸດແລ້ວຈຶ່ງຫໍ່ດ້ວຍຜ້າໃໝ່ອີກຊັ້ນໜຶ່ງເຮັດໂດຍວິທີດັ່ງນີ້ຈົນແລ້ວ ແລ້ວຫໍ່ພຣະສະຣີຣະຂອງພຣະຜູ້ມີພຣະພາກດ້ວຍຜ້າ ແລະ ສຳລີໃຫ້ໄດ້ ໑,໐໐໐ ຊັ້ນ ແລ້ວອັນເຊີນພຣະສະຣີຣະລົງໃນຮາງເຫຼັກອັນເຕັມດ້ວຍນ້ຳມັນ ໃຊ້ຮາງເຫຼັກອີກອັນໜຶ່ງກວມເອົາໄວ້ ແລ້ວທຳຈິຈະກາທານດ້ວຍໄມ້ຫອມລ້ວນ ແລ້ວອັນເຊີນພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າຂຶ້ນສູ່ຈິຕະກາທານ

## ເລື້ອງພຣະມະຫາກັດສະປະເຖຣະ

[໔໓໑] ສະໄໝນັ້ນ ທ່ານພຣະມະຫາກັດສະປະພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີປະມານ ໕໐໐ ອົງ ເດີນທາງໄກຈາກເມືອງປາວາໄປສູ່ເມືອງກຸສິນາຣາ ໃນຂະນະທີ່ທ່ານພຣະມະຫາກັດສະປະແວ່ລົງຂ້າງທາງນັ່ງຢູ່ເຫງົ້າໄມ້ຕົ້ນໜຶ່ງ ພໍດີມີອາຊີວົກຕົນໜຶ່ງຖືດອກມົນທາ ຈາກເມືອງກຸສິນາຣາຍ່າງສວນທາງຈະໄປເມືອງປາວາ ທ່ານພຣະມະຫາກັດສະປະເຫັນອາຊີວົກນັ້ນກຳລັງຍ່າງມາແຕ່ໄກຈຶ່ງຖາມວ່າ "ທ່ານຜູ້ມີອາຍຸ ທ່ານຮູ້ຂ່າວພຣະສາດສະດາຂອງພວກເຮົາແດ່ບໍ?"

ເຂົາຕອບວ່າ "ເຮົາຮູ້ຂ່າວທ່ານພຣະສະມະນະໂຄດົມ ປະຣິນິບພານໄດ້ ໗ ມື້ແລ້ວ ມື້ນີ້ເຮົາຖືດອກມົນທາ ດອກນີ້ມາຈາກບ່ອນປະຣິນິບພານນັ້ນ"

ບັນດາພິກຂຸເຫຼົ່ານັ້ນ ຜູ້ທີ່ຍັງມີຣາຄະ ຍົກມື ຍົກແຂນ ຮ້ອງໄຫ້ຮ່ຳໄຮ ລົ້ມກິ້ງເກືອກລີເລືອໄປມາຄືຄົນຂາຂາດ ຮ່ຳໄຮຈົ່ມວ່າ "ພຣະຜູ້ມີພຣະພາກເຈົ້າປະຣິນິບພານແລ້ວ ພຣະສຸຄົດເຈົ້າປະຣິນິບພານແລ້ວ ຈັກຂຸຂອງໂລກອັນຕະຣະທານຫາຍໄປແລ້ວ" ສ່ວນພິກຂຸຜູ້ບໍ່ມີຣາຄະ ມີສະຕິສຳປະຊັນຍະກໍອົດກັ້ນໄດ້ວ່າ "ສັງຂານທັງຫຼາຍບໍ່ທ່ຽງ ເຫຼົ່າສັດຈະເພິ່ງຫາຄວາມແນ່ນອນຈາກສັງຂານນີ້ແມ່ນຫາບໍ່ໄດ້ເລີຍ"

[໔໓໔] ສະໄໝນັ້ນ ມີພິກຂຸຜູ້ບວດຕອນແກ່ຊື່ ສຸພັດທະ ນັ່ງຢູ່ໃນທີ່ປະຊຸມນັ້ນໄດ້ກ່າວກັບພິກຂຸເຫຼົ່ານັ້ນແນວນີ້ວ່າ "ຢ່າເລີຍ ທ່ານຜູ້ມີອາຍຸ ຢ່າເສົ້າໂສກ ຢ່າຮ່ຳໄຮເລີຍ ພວກເຮົາລອດພົ້ນແລ້ວຈາກພຣະມະຫາສະມະນະອົງນີ້ ທີ່ເອົາແຕ່ບັງຄັບພວກເຮົາ ບອກສອນຢູ່ວ່າ "ສິ່ງນີ້ຄວນແກ່ພວກທ່ານ ສິ່ງນີ້ບໍ່ຄວນແກ່ພວກທ່ານ" ບັດນີ້ເຮົາປາຖະໜາສິ່ງໃດ ກໍຈັກໄດ້ທຳສິ່ງນັ້ນ ພວກເຮົາບໍ່ປາຖະໜາສິ່ງໃດກໍຈັກບໍ່ຕ້ອງທຳສິ່ງນັ້ນ"

ລຳດັບນັ້ນ ທ່ານພຣະມະຫາກັດສະປະຮຽກພິກຂຸທັງຫຼາຍມາຕັກເຕືອນວ່າ "ຢ່າເລີຍທ່ານຜູ້ມີອາຍຸ ຢ່າເສົ້າໂສກ ຢ່າຮ່ຳໄຮເລີຍ ພຣະຜູ້ມີພຣະພາກເຈົ້າຕັດສອນໄວ້ກ່ອນແລ້ວແນວນີ້ວ່າ "ຄວາມພັດພາກ ຄວາມຕ້ອງປະຖິ້ມ ຄວາມປ່ຽນແປງເປັນຢ່າງອື່ນ ຈາກຂອງຮັກຂອງພໍໃຈ ທຸກຢ່າງຈະຕ້ອງມີຂຶ້ນກັບທຸກຄົນ ສະນັ້ນ ຈະເພິ່ງຫາຄວາມແນ່ນອນຫຍັງໄດ້ຈາກສັງຂານນີ້ ສິ່ງທີ່ເກີດຂຶ້ນ ມີຂຶ້ນ ຖືກປັດໄຈປຸງແຕ່ງແລ້ວ ລ້ວນຈະແຕກສະຫຼາຍຫາຍໄປເປັນທຳມະດາ ເປັນໄປບໍ່ໄດ້ທີ່ຈະປາຖະໜາວ່າ "ຂໍສິ່ງນີ້ຢ່າເສື່ອມສະຫຼາຍຫາຍໄປຈາກເຮົາເລີຍ"

## ການຖວາຍພຣະເພີງພຣະພຸດທະສະຣີຣະ

[໔໓໓] ສະໄໝນັ້ນ ປະມຸກເຈົ້າມັນລະ ໔ ອົງ ຊົງສະນານພຣະສຽນແລ້ວຊົງພຣະພູສາໃໝ່ດ້ວຍຕັ້ງພຣະທະໄທວ່າ "ພວກເຮົາຈະຈຸດໄຟທີ່ຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້າ" ແຕ່ບໍ່ອາດຈະຈຸດໄຟໃຫ້ຕິດໄດ້

ລຳດັບນັ້ນ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ຕັດຖາມທ່ານພຣະອະນຸຣຸດທະວ່າ "ທ່ານອະນຸຣຸດທະ ມີຫຍັງນໍ? ເປັນເຫດ ມີຫຍັງນໍ? ເປັນປັດໄຈ ທີ່ເຮັດໃຫ້ປະມຸກເຈົ້າມັນລະ ໔ ອົງນີ້ ຜູ້ຊົງສະນານພຣະສຽນແລ້ວຊົງພຣະພູສາໃໝ່ ດ້ວຍຕັ້ງພຣະທະໄທວ່າ "ພວກເຮົາຈະຈຸດໄຟທີ່ຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້າ" ແຕ່ບໍ່ອາດຈະຈຸດໄຟໃຫ້ຕິດໄດ້"

ທ່ານພຣະອະນຸຣຸດທະ ຖວາຍພຣະພອນວ່າ "ວາເສດຖະທັງຫຼາຍ ພວກເທວະດາມີຄວາມປະສົງອີກແນວໜຶ່ງ"

ພວກເຈົ້າມັນລະຕັດຖາມວ່າ "ພວກເທວະດາມີຄວາມປະສົງແນວໃດ? ຂ້ານ້ອຍ"

ທ່ານພຣະອະນຸຣຸດທະຖວາຍພຣະພອນວ່າ "ພວກເທວະດາມີຄວາມປະສົງວ່າ "ທ່ານພຣະມະຫາກັດສະປະພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ກຳລັງເດີນທາງໄກຈາກເມືອງປາວາມາສູ່ເມືອງກຸສິນາຣາ ເພື່ອມາຮ່ວມຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້ານີ້ ໄຟນັ້ນຈະຍັງບໍ່ລຸກຈົນກວ່າທ່ານພຣະມະຫາກັດສະປະ ຍັງບໍ່ໄດ້ຖວາຍອະພິວາດພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ"

ພວກເຈົ້າມັນລະຕັດວ່າ "ຂໍໃຫ້ເປັນໄປຕາມຄວາມປະສົງຂອງພວກເທວະດາເທີ້ນ ຂ້ານ້ອຍ"

[໔໓໔] ຕໍ່ມາທ່ານພຣະມະຫາກັດສະປະ ເຂົ້າໄປສູ່ມະກຸດພັນທະນະເຈດີຂອງພວກເຈົ້າມັນລະໃນເມືອງກຸສິນາຣາເຖິງທີ່ຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້າ ຄຸມຈີວອນບ່ຽງບ່າ ປະນົມມືກະທຳປະທັກຂິນຈິຕະກາທານ ໓ ຮອບເປີດຜ້າຄຸມທາງພຣະບາດ ຖວາຍອະພິວາດພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແມ່ນພິກຂຸ ໕໐໐ ອົງ ເຫຼົ່ານັ້ນກໍຄຸມຈີວອນ

ບ່ຽງບ່າປະນົມມືທຳປະທັກຂິນຈິຕະກາທານ ໓ ຮອບ ຖວາຍອະພິວາດພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ເມື່ອທ່ານພຣະມະຫາກັດສະປະ ແລະ ພິກຂຸ ໕໐໐ ອົງຖວາຍອະພິວາດແລ້ວ ຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້າໄດ້ຕິດໄຟລຸກຂຶ້ນເອງ

[໔໓໕] ເມື່ອພຣະເພີງໄໝ້ ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ພຣະອະໄວຍະວະ ຄືພຣະສະຫວີວັນ (ຜິວນອກ) ພຣະຈັມມະ (ໜັງ) ພຣະມັງສາ (ເນື້ອ) ພຣະນະຫາຣູ (ເອັນ) ຫຼື ພຣະລະສິກາ (ໄຂຂໍ້ຫຼືໄຂກະດູກ) ບໍ່ຜາກົດຂີ້ເຖົ່າ ບໍ່ຜາກົດຊີ່ຄວັນໄຟເລີຍ ຄົງເຫຼືອຢູ່ແຕ່ພຣະສະຣີຣະທໍ່ນັ້ນ ປຽບຄື ເມື່ອໄຟໄໝ້ເນີຍໃສ ແລະ ນ້ຳມັນກໍບໍ່ຜາກົດຂີ້ເຖົ່າບໍ່ຜາກົດຊີ່ຄວັນໄຟສັນໃດ ເມື່ອພຣະເພີງໄໝ້ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ພຣະອະໄວຍະວະ ຄື ພຣະສະຫວີວັນ ພຣະຈັມມະ ພຣະມັງສາ ພຣະນະຫາຣູ ຫຼື ພຣະລະສິກາ ບໍ່ຜາ ກົດຂີ້ເຖົ່າບໍ່ຜາກົດຊີ່ຄວັນໄຟ ຄົງເຫຼືອຢູ່ແຕ່ພຣະສະຣີຣະທໍ່ນັ້ນ ສັນນັ້ນຄືກັນ ແລະ ບັນດາຜ້າ ໕໐໐ ຄູ່ນັ້ນ ມີພຽງ ໔ ຜືນທໍ່ນັ້ນທີ່ຖືກໄຟໄໝ້ ຄື ຜືນໃນສຸດກັບຜືນນອກສຸດ ກໍເມື່ອພຣະເພີງໄໝ້ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າແລ້ວ ມີນ້ຳໄຫຼຫຼັ່ງມາຈາກອາກາດດັບຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້າ ນ້ຳພຸ່ງຂຶ້ນຈາກໄມ້ສາລະດັບຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້າ ພວກເຈົ້າມັນລະ ຜູ້ຄອງເມືອງກຸສິນາຣາ ດັບຈິຕະກາທານຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍນ້ຳຫອມລ້ວນ ໆ ຕໍ່ຈາກນັ້ນເຈົ້າມັນລະ ຜູ້ຄອງເມືອງກຸສິນາຣາ ໄດ້ຈັດກຳລັງພົນຫອກໄວ້ອ້ອມສັນຖາຄານ ລ້ອມດ້ວຍກຳແພງທະນູ໌ (ປ້ອງກັນພຣະບໍຣົມສາຣີຣິກະທາດຂອງພຣະຜູ້ມີພຣະພາກເຈົ້າ) ແລ້ວສັກກາຣະເຄົາຣົບ ນອບນ້ອມ ບູຊາ ພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍການຟ້ອນ ຂັບຮ້ອງ ເສບດົນຕີ ດອກໄມ້ ແລະ ຂອງຫອມ ຕະຫຼອດ ໗ ມື້

## ການແຈກພຣະບໍຣົມສາຣີຣິກະທາດຂອງພຣະພຸດທະເຈົ້າ

[໔໓໖] ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດໄດ້ຊົງສະດັບວ່າ "ພຣະຜູ້ມີພຣະພາກເຈົ້າປະຣິນິບພານໃນເມືອງກຸສິນາຣາ" ຈຶ່ງຊົງສົ່ງທູດໄປເຖິງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາວ່າ "ພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ແມ່ນເຮົາກໍເປັນກະສັດ ຈຶ່ງຄວນໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດໃສ່ ແລະ ທຳການສະຫຼອງ"

ພວກເຈົ້າ ລິດສະຫວີ ຜູ້ຄອງເມືອງເວສາລີໄດ້ຊົງສະດັບວ່າ "ພຣະຜູ້ມີພຣະພາກເຈົ້າປະຣິນິບພານໃນເມືອງກຸສິນາຣາ" ຈຶ່ງຊົງສົ່ງທູດໄປເຖິງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາວ່າ "ພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ແມ່ນພວກເຮົາກໍເປັນກະສັດ ຈຶ່ງສົມຄວນໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດໃສ່ ແລະ ທຳການສະຫຼອງ"

ພວກເຈົ້າ ສາກະຍະຊາວກະບິນລະພັດ ໄດ້ຊົງສະດັບວ່າ “ພຣະຜູ້ພຣະພາກເຈົ້າປະຣິນິບພານໃນເມືອງກຸສິນາຣາ ”ຈຶ່ງຊົງສົ່ງທູດໄປເຖິງພວກເຈົ້າມັນລະ ຜູ້ຄອງເມືອງກຸສິນາຣາວ່າ “ພຣະຜູ້ມີພຣະພາກເຈົ້າຊົງເປັນພຣະຍາດ ຜູ້ປະເສີດທີ່ສຸດຂອງພວກເຮົາ ພວກເຮົາຄວນຈະໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີລິທາດໃສ່ ແລະທຳການສະຫຼອງ”

ພວກເຈົ້າ ຖູລີ ຜູ້ຄອງເມືອງອັນລະກັບປະໄດ້ຊົງສະດັບວ່າ “ພຣະຜູ້ມີພຣະພາກປະຣິນິບພານໃນເມືອງກຸສິນາຣາ” ຈຶ່ງຊົງສົ່ງທູດໄປເຖິງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາວ່າ “ພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ແມ່ນພວກເຮົາກໍເປັນກະສັດ ຈຶ່ງຄວນຈະໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດໃສ່ ແລະທຳການສະຫຼອງ”

ພວກເຈົ້າ ໂກລິຍະ ຜູ້ຄອງເມືອງຣາມມະຄາມໄດ້ຊົງສະດັບວ່າ “ພຣະຜູ້ມີພຣະພາກເຈົ້າປະຣິນິບພານໃນເມືອງກຸສິນາຣາ” ຈຶ່ງຊົງສົ່ງທູດໄປເຖິງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາວ່າ “ພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ແມ່ນພວກເຮົາກໍເປັນກະສັດ ຈຶ່ງຄວນຈະໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດໃສ່ ແລະທຳການສະຫຼອງ”

ພາມຜູ້ຄອງເມືອງ ເວດທະທີປະກະ ໄດ້ສະດັບວ່າ “ພຣະຜູ້ມີພຣະພາກເຈົ້າປະຣິນິບພານໃນເມືອງກຸສິນາຣາ” ຈຶ່ງສົ່ງທູດໄປເຖິງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາວ່າ “ແມ່ນພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ເຮົາເປັນພາມເຮົາກໍຄວນຈະໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງ”

ພວກເຈົ້າມັນລະຜູ້ຄອງເມືອງ ປາວາ ໄດ້ຊົງສະດັບວ່າ ພຣະຜູ້ມີພຣະພາກເຈົ້າປະຣິນິບພານໃນເມືອງກຸສິນາຣາ ຈຶ່ງຊົງສົ່ງທູດໄປເຖິງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາວ່າ “ແມ່ນພຣະຜູ້ມີພຣະພາກເຈົ້າເປັນກະສັດ ພວກເຮົາກໍເປັນກະສັດ ຈຶ່ງຄວນຈະໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງ”

ເມື່ອທູດຈາກເມືອງຕ່າງ ໆ ຂາບທູນແນວນີ້ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາໄດ້ຕັດຕອບກັບໝູ່ຄະນະທູດເຫຼົ່ານັ້ນແນວນີ້ວ່າ “ພຣະຜູ້ມີພຣະພາກເຈົ້າປະຣິນິບພານໃນເຂດບ້ານເມືອງຂອງເຮົາ ພວກເຮົາຈະບໍ່ໃຫ້ສ່ວນແບ່ງພຣະບໍຣົມສາຣີຣິກະທາດໃຫ້ຜູ້ອື່ນ”

[໔໖໗] ເມື່ອພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາໄດ້ຕັດແນວນີ້ ໂທນະພາມໄດ້ກ່າວກັບໝູ່ຄະ ນະທູດເຫຼົ່ານັ້ນແນວນີ້ວ່າ

"ທ່ານຜູ້ຈະເລີນທັງຫຼາຍ
ໂຜດຟັງຄຳຊີ້ແຈ່ງຂອງຂ້າພະເຈົ້າໜ້ອຍໜຶ່ງກ່ອນເທີ້ນ
ພຣະພຸດທະເຈົ້າຂອງພວກເຮົາຊົງຖືຫຼັກຂັນຕິທຳ
ບໍ່ຄວນທີ່ຈະປະທັດປະຫານກັນ
ເພາະສ່ວນແບ່ງພຣະບໍຣົມສາຣີຣິກະທາດ
ຂອງພຣະພຸດທະເຈົ້າຜູ້ເປັນອຸດົມບຸກຄົນ
ຂໍໃຫ້ທຸກຝ່າຍພ້ອມໃຈກັນ
ແບ່ງພຣະບໍຣົມສາຣີຣິກະທາດອອກເປັນ ໘ ສ່ວນ
ພຣະສະຖູບຈະໄດ້ແຜ່ຊ່າລືສູ່ທິດຕ່າງ ໆ
ເພື່ອໃຫ້ປະຊາຊົນຈຳນວນຫຼາຍ
ຜູ້ເຫຼື້ອມໃສໃນພຣະພຸດທະເຈົ້າ ຜູ້ມີພຣະຈັກຂຸເຄົາລົບບູຊາຂາບໄຫວ້"

[໔໖໘] ໝູ່ຄະນະທູດເຫຼົ່ານັ້ນຕອບວ່າ "ທ່ານພາມ ຖ້າເປັນແນວນັ້ນ ທ່ານນັ້ນແລຈົ່ງແບ່ງພຣະບໍຣົມສາຣີຣິກະທາດອອກເປັນ ໘ ສ່ວນທໍ່ ໆ ກັນໃຫ້ຮຽບຮ້ອຍ"

ໂທນະນະພາມຮັບຄຳແລ້ວ ແບ່ງພຣະບໍຣົມສາຣີຣິກະທາດອອກເປັນ ໘ ສ່ວນທໍ່ ໆ ກັນ ແລ້ວຈຶ່ງໄດ້ກ່າວກັບໝູ່ຄະນະທູດເຫຼົ່ານັ້ນແນວນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ໂຜດໃຫ້ທະນານນີ້ແກ່ຂ້າພະເຈົ້າ ຂ້າພະເຈົ້າຈະສ້າງພຣະສະຖູບບັນຈຸທະນານ (ຕຸມພະ) ໃສ່ແລະທຳການສະຫຼອງ" ພວກເຂົາຈຶ່ງໄດ້ມອບທະນານໃຫ້ໂທນະນະພາມ

ພວກເຈົ້າໂມລິຍະຜູ້ຄອງເມືອງປິບຜະລິວັນໄດ້ຊົງສະດັບວ່າ "ພຣະຜູ້ມີພຣະພາກປະຣິນິບພານໃນເມືອງກຸສິນາຣາ" ຈຶ່ງຊົງສົ່ງທູດໄປເຖິງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາວ່າ"ພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ແມ່ນພວກເຮົາກໍເປັນກະສັດ ຈຶ່ງສົມຄວນຈະໄດ້ຮັບສ່ວນແບ່ງພຣະບໍຣົມສາຣີຣິກະທາດແດ່ ຈະໄດ້ສ້າງພຣະສະຖູບບັນບັນຈຸພຣະບໍຣົມສາຣີຣິກະທາດໃສ່ແລະທຳການສະຫຼອງ"

ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາຕອບວ່າ " ບັດນີ້ ບໍ່ມີສ່ວນແບ່ງພຣະບໍຣົມສາຣີຣິກະທາດເຫຼືອແລ້ວ ພຣະບໍຣົມສາຣີຣິກະທາດໄດ້ແບ່ງກັນໝົດແລ້ວ ພວກທ່ານຈົ່ງນຳເອົາພຣະອັງຄານ (ຂີ້ເຖົ່າ) ໄປຈາກບ່ອນນີ້ເທີ້ນ" ພວກທູດເຫຼົ່ານັ້ນ ຈຶ່ງນຳເອົາພຣະອັງຄານໄປຈາກບ່ອນນັ້ນ

## ການບູຊາພຣະບໍຣົມສາຣີຣິກະທາດແລະສ້າງພຣະສະຖູບ

[໔໓໙] ເວລານັ້ນ ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດ ຊົງສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງໃນເມືອງຣາດຊະຄຶ ພວກເຈົ້າລິດສະຫວີຜູ້ຄອງເມືອງເວສາລີ ຊົງສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງໃນເມືອງເວສາລີ ພວກເຈົ້າສາກະຍະຊາວກະບິນລະພັດ ຊົງສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງ ໃນເມືອງກະບິນລະພັດພວກເຈົ້າຖູລີຜູ້ຄອງເມືອງອັນລະກັບປະ ຊົງສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງໃນເມືອງອັນລະກັບປະ ພວກເຈົ້າໂກລິຍະຜູ້ຄອງເມືອງຣາມມະຄາມຊົງສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງ ໃນເມືອງຣາມມະຄາມພາມຜູ້ຄອງເມືອງເວດທະທີປະກະ ສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງໃນເມືອງເວດທະທີປະກະ ພວກເຈົ້າມັນລະຜູ້ຄອງເມືອງປາວາ ຊົງສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະຫຼອງໃນເມືອງປາວາ ພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ຊົງສ້າງພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ແລະ ທຳການສະ ຫຼອງໃນເມືອງກຸສິນາຣາ ແມ່ນໂທນະພາມກໍສ້າງພຣະສະຖູບບັນຈຸທະນານ ແລະ ທຳການສະຫຼອງ ພວກເຈົ້າໂມລິຍະຜູ້ຄອງເມືອງປິບຜະລິວັນ ຊົງສ້າງພຣະສະຖູບບັນຈຸພຣະອັງຄານ ແລະ ທຳການສະຫຼອງໃນເມືອງປິບຜະລິວັນ

ຣວມເປັນພຣະສະຖູບທີ່ບັນຈຸພຣະບໍຣົມສາຣີຣິກະທາດ ໘ ແຫ່ງ ພຣະສະຖູບທີ່ບັນຈຸທະນານເປັນແຫ່ງທີ ໙ ແລະ ພຣະສະຖູບທີ່ບັນຈຸພຣະອັງຄານເປັນແຫ່ງທີ ໑໐ ການແບ່ງພຣະບໍຣົມສາຣີຣິກະທາດ ແລະ ການສ້າງພຣະສະຖູບເຄີຍມີມາແລ້ວແບບນີ້

[໔໔໐] ພຣະບໍຣົມສາຣີຣິກະທາດຂອງພຣະຜູ້ມີພຣະຈັກຂຸ
ເຊິ່ງເປັນບຸກຄົນປະເສີດສຸດມີ ໘ ທະນານ
ປະຊາຊົນບູຊາກັນຢູ່ໃນຊົມພູທະວີບ ໗ ທະນານ
ພຣະຣາຊາເຜົ່ານາກ ບູຊາຢູ່ໃນຣາມມະຄາມ ໑ ທະນານ
ເທບຊັ້ນຕາວະຕິງສາບູຊາພຣະຂ້ຽວແກ້ວອົງໜຶ່ງ
ສ່ວນພຣະຂ້ຽວແກ້ວອີກອົງໜຶ່ງບູຊາກັນຢູ່ໃນຄັນທາຣະບຸຣີ
ອີກອົງໜຶ່ງບູຊາກັນຢູ່ໃນແຄວ້ນຂອງພຣະເຈົ້າກາລິງຄະ
ອີກອົງໜຶ່ງພຣະຣາຊາເຜົ່ານາກບູຊາຢູ່
ດ້ວຍພຣະເດດແຫ່ງພຣະບໍຣົມສາຣີຣິກະທາດນັ້ນ
ແຜ່ນດິນໃຫຍ່ນີ້ປະດັບດ້ວຍນັກພິດຜູ້ປະເສີດ
ພຣະບໍຣົມສາຣີຣິກະທາດຂອງພຣະຜູ້ມີພຣະຈັກຂຸນີ້

ຊື່ວ່າອັນສາທຸຊົນສັກກາຣະກັນດີແລ້ວ
ພຣະພຸດທະເຈົ້າພຣະອົງໃດ
ອັນຈອມເທບຈອມນາກ ແລະ ຈອມຄົນບູຊາແລ້ວ
ອັນຈອມມະນຸດຜູ້ປະເສີດສຸດບູຊາແລ້ວຄືກັນ
ທ່ານທັງຫຼາຍຈົ່ງປະນົມມືໄຫວ້ພຣະບໍຣົມສາຣີຣິກະທາດອົງນັ້ນ ໆ
ພຣະພຸດທະເຈົ້າທັງຫຼາຍເປັນບຸກຄົນຫາໄດ້ຍາກ
ໂດຍໃຊ້ເວລາເຖິງ ໑໐໐ ກັບ
ພຣະທັນຕະ ໔໐ ອົງ ພຣະເກສາ ແລະ ພຣະໂລມາທັງໝົດ
ເຫຼົ່າເທບນຳໄປອົງລະອົງ (ບູຊາ) ສືບ ໆ ກັນໄປໃນຈັກກະວານ

**ມະຫາປະຣິນິບພານສູດທີ ໓ ຈົບ**

# ໔. ມະຫາສຸທັດສະນະສູດ

## ວ່າດ້ວຍພຣະເຈົ້າຈັກກະພັດພຣະນາມວ່າມະຫາສຸທັດສະນະ

[໔໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ

ໃນສະໄໝໜຶ່ງ ເມື່ອໃກ້ຈະປະຣິນິບພານ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ລະຫວ່າງໄມ້ສາລະທັງຄູ່ ໃນສາລະວັນຂອງພວກເຈົ້າມັນລະຜູ້ຄອງເມືອງກຸສິນາຣາ ເຊິ່ງເປັນທາງເຂົ້າເມືອງກຸສິນາຣາ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຢ່າໄດ້ປະຣິນິບພານໃນເມືອງນ້ອຍ ເມືອງໂຄກ ກິ່ງເມືອງເລີຍ ຍັງມີເມືອງໃຫຍ່ເຊັ່ນເມືອງຈຳປາ ເມືອງຣາດຊະຄຶ ເມືອງສາວັດຖີ ເມືອງສາເກດ ເມືອງໂກສັມພີ ເມືອງພາຣານະສີ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນເມືອງເຫຼົ່ານີ້ເທີ້ນ ຂັດຕິຍະມະຫາສານ ພາມມະຫາສານ ຄະຫະບໍດີມະຫາສານ ຜູ້ເຫຼື້ອມໃສຢ່າງຍິ່ງໃນພຣະຕະຖາຄົດເຈົ້າມີຢູ່ຫຼາຍໃນເມືອງເຫຼົ່ານັ້ນ ທ່ານເຫຼົ່ານີ້ຈະທຳການບູຊາພຣະສະຣີຣະຂອງພຣະຕະຖາຄົດເຈົ້າຢ່າງດີ"

[໔໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ອານົນ ທ່ານຢ່າກ່າວແນວນັ້ນ ຢ່າເວົ້າແນວນັ້ນວ່າ "ກຸສິນາຣາເປັນເມືອງນ້ອຍ ເມືອງໂຄກ ກິ່ງເມືອງ"

## ກຸສາວະດີຣາດຊະທານີ

ດູຣາ ອານົນ ເລື້ອງເຄີຍມີມາແລ້ວ ໄດ້ມີກະສັດຣາຊາທິຣາດພຣະນາມວ່າ ມະຫາສຸທັດສະນະ ຜູ້ໄດ້ຮັບມຸດທາພິເສກແລ້ວ ຊຶ່ງເປັນໃຫຍ່ໃນແຜ່ນດິນ ມີມະຫາສະໝຸດທັງສີ່ເປັນຂອບເຂດ ຊຶ່ງໄດ້ຮັບໄຊຊະນະ ມີພຣະຣາດອານາຈັກໝັ້ນຄົງ ເມືອງກຸສິນາຣານີ້ມີນາມວ່າ ກຸສາວະດີໄດ້ເປັນຣາດຊະທານີຂອງພຣະເຈົ້າມະຫາສຸທັດສະນະ ດ້ານທິດຕາເວັນອອກ ແລະທິດຕາເວັນຕົກຍາວ ໑໒ ໂຍດ ດ້ານທິດເໜືອ ແລະ ທິດໃຕ້ກວ້າງ ໗ ໂຍດ ເມືອງກຸສາວະດີເປັນຣາດຊະທານີທີ່ຈະເລີນຮຸ່ງເຮືອງມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ ມີເສດຖະກິດດີ ຄືກັບເມືອງອາລະກະມັນທາ ເຊິ່ງເປັນຣາດຊະທານີຂອງທວຍເທບທີ່ຈະເລີນຮຸ່ງເຮືອງມີປະຊາກອນຫຼາຍ ມີຍັກໜາແໜ້ນ ມີເສດຖະກິດດີ ດູຣາ ອານົນ ເມືອງກຸສາວະດີ ເປັນຣາດຊະທານີທີ່ນອງນັນໄປດ້ວຍສຽງ ໑໐ ຊະນິດ ທັງກາງວັນ ແລະ ກາງຄືນໄດ້ແກ່ ສຽງຊ້າງ ສຽງມ້າ ສຽງລົດ ສຽງກອງ ສຽງຕະໂພນ ສຽງພິນ ສຽງຂັບຮ້ອງ ສຽງກັງສະດານ ສຽງເສບດົນຕີ ແລະ ສຽງໂອ້ລົມກັນ ຂອງຜູ້ຄົນວ່າ “ທ່ານທັງຫຼາຍໂຜດບໍລິໂພກ ດື່ມ ກິນ” ເມືອງກຸສາວະດີຣາດຊະທານີມີກຳແພງລ້ອມ ໗ ຊັ້ນ ໄດ້ແກ່ (໑) ກຳແພງຄຳ (໒) ກຳແພງເງິນ (໓) ກຳແພງແກ້ວໄພທູນ (໔) ກຳແພງແກ້ວຜະລຶກ (໕) ກຳແພງແກ້ວໂກເມນ (໖) ກຳແພງແກ້ວບຸດຊະຣາຄັມ (໗) ກຳແພງເຮັດດ້ວຍຣັດຕະນະທຸກຢ່າງ ມີປະຕູ ໔ ຊະນິດໄດ້ແກ່ (໑) ປະຕູຄຳ (໒) ປະຕູເງິນ (໓) ປະຕູແກ້ວໄພທູນ (໔) ປະຕູແກ້ວຜະລຶກ ແຕ່ລະປະຕູມີເສົາຣະນຽດປັກໄວ້ ປະຕູລະ ໗ ຕົ້ນ ໄດ້ແກ່ (໑) ເສົາຄຳ (໒) ເສົາເງິນ (໓) ເສົາແກ້ວໄພທູນ (໔) ເສົາແກ້ວຜະລຶກ (໕) ເສົາແກ້ວໂກເມນ (໖) ເສົາແກ້ວບຸດຊະຣາຄຳ (໗) ເສົາເຮັດດ້ວຍຣັດຕະນະທຸກຢ່າງ ແຕ່ລະເສົາແທກໂດຍຮອບໄດ້ເທົ່າກັບຄວາມສູງຂອງບຸຣຸດ ໓ ຄົນ (ສາມຄົນອູ້ມ) ຝັງເລິກ ໓ ຄົນ ສູງ ໑໒ ຄົນ

ເມືອງກຸສາວະດີຣາດຊະທານີມີກົກຕານອ້ອມ ໗ ແຖວ ໄດ້ແກ່ກົກຕານຄຳ ໑ ແຖວກົກຕານເງິນ ໑ ແຖວ ກົກຕານແກ້ວໄພທູນ ໑ ແຖວ ກົກຕານແກ້ວຜະລຶກ ໑ ແຖວ ກົກຕານແກ້ວໂກເມນ ໑ ແຖວ ກົກຕານແກ້ວບຸດຊະຣາຄັມ ໑ ແຖວ ກົກຕານເຮັດດ້ວຍຣັດຕະນະທຸກຊະນິດ ໑ ແຖວ ກົກຕານຄຳມີລຳຕົ້ນເປັນຄຳໃບ ແລະ ໝາກ ເປັນເງິນ ກົກຕານເງິນມີລຳຕົ້ນເປັນເງິນໃບ ແລະ ໝາກ ເປັນຄຳ ກົກຕານແກ້ວໄພທູນມີລຳຕົ້ນເປັນແກ້ວໄພທູນໃບ ແລະ ໝາກ ເປັນແກ້ວຜະລຶກ ກົກຕານແກ້ວຜະລຶກມີລຳຕົ້ນເປັນແກ້ວຜະລຶກໃບ ແລະ ໝາກເປັນແກ້ວໄພທູນ ກົກຕານແກ້ວໂກເມນມີລຳຕົ້ນເປັນແກ້ວໂກເມນ ໃບ ແລະ ໝາກ ເປັນແກ້ວບຸດຊະຣາຄຳ ກົກຕານແກ້ວບຸດຊະຣາຄຳ ມີລຳຕົ້ນເປັນແກ້ວບຸດຊະຣາຄຳໃບ ແລະ ໝາກ ເປັນແກ້ວໂກເມນ ກົກຕານເຮັດດ້ວຍຣັດຕະນະທຸກຢ່າງ ມີລຳຕົ້ນເຮັດດ້ວຍຣັດຕະນະທຸກຊະນິດໃບແລະໝາກເຮັດດ້ວຍຣັດຕະນະທຸກຊະນິດ ແຖວຂອງກົກຕານເຫຼົ່ານັ້ນ ຍາມເມື່ອລົມພັດຕ້ອງ ເກີດສຽງມ່ວນເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ດູຣາ ອານົນ ເຄື່ອງດົນຕີ ໕ ຊະນິດນີ້ທີ່ບຸກຄົນ

ປັບສຽງດີ ເສບດີແລ້ວ ເສບໂດຍຜູ້ຊ່ຽວຊານ ຍ່ອມເກີດສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ສັນໃດ ແຖວກິກຕານເຫຼົ່ານັ້ນ ຍາມເມື່ອລົມພັດຕ້ອງ ເກີດສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ສັນນັ້ນ ໃນສະໄໝນັ້ນ ໃນເມືອງກຸສາວະດີຣາດຊະທານີໄດ້ເກີດມີນັກເລງ ນັກຫຼິ້ນ ແລະ ນັກດື່ມ ພາກັນຂັບຮ້ອງ ຕາມຈັງຫວະຂອງສຽງກິກຕານເຫຼົ່ານັ້ນ ຍາມເມື່ອລົມພັດຕ້ອງ

## ເລື້ອງພຣະເຈົ້າມະຫາສຸທັດສະນະ

### ຊົງສົມບູນດ້ວຍແກ້ວ ໗ ປະການ

### ຈັກແກ້ວ

[໔໕໓] ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະຊົງສົມບູນດ້ວຍແກ້ວ ໗ ປະການ ແລະລິດ (ຄວາມສຳເລັດ) ໔ ປະການ

ແກ້ວ ໗ ປະການນັ້ນມີຫຍັງແດ່ ຄື

໑. ເມື່ອພຣະເຈົ້າມະຫາສຸທັດສະນະ ຊົງສະນານພຣະສຽນໃນວັນອຸໂປສົດ ໑໕ ຄ່ຳຖືຮັກສາອຸໂປສົດ ສະເດັດຂຶ້ນສູ່ຜາສາດຫຼັງງາມ ຜາກົດຈັກແກ້ວອັນເປັນທິບເຊິ່ງມີດິ້ວ ໑,໐໐໐ ດິ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ ເມື່ອພຣະເຈົ້າມະຫາສຸທັດສະນະທອດພຣະເນດແລ້ວຊົງດຳຣິວ່າ "ເຮົາໄດ້ຟັງເລື້ອງນີ້ວ່າ "ກະສັດຣາຊາທິຣາດພຣະອົງໃດ ຜູ້ໄດ້ຮັບມຸດທາພິເສກແລ້ວ ຊົງສະນານພຣະສຽນໃນວັນອຸໂປສົດ ໑໕ ຄ່ຳ ຖືຮັກສາອຸໂປສົດສະເດັດຂຶ້ນສູ່ຜາສາດຫຼັງງາມ ຈະຜາກົດຈັກແກ້ວອັນເປັນທິບເຊິ່ງມີດິ້ວ ໑,໐໐໐ ດິ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ ກະສັດຣາຊາທິຣາດພຣະອົງນັ້ນ ຍ່ອມເປັນພຣະເຈົ້າຈັກກະພັດ" ເຮົາເປັນພຣະເຈົ້າຈັກກະພັດຢ່າງສົມບູນແລ້ວ"

[໔໕໔] ລຳດັບນັ້ນ ພຣະເຈົ້າມະຫາສຸທັດສະນະຊົງລຸກຈາກບ່ອນປະທັບ ຊົງພຣະພູສາບ່ຽງບ່າ ພຣະຫັດຊ້າຍຊົງຈັບນ້ຳເຕົ້າຄຳ ພຣະຫັດຂວາຊົງຊູກົງຈັກແກ້ວຂຶ້ນຕັດວ່າ "ກົງຈັກແກ້ວອັນປະເສີດຈົ່ງປິ່ນໄປ ຈົ່ງໄດ້ໄຊຊະນະອັນຍິ່ງໃຫຍ່" ທັນໃດນັ້ນ ກົງຈັກແກ້ວປິ່ນໄປທາງທິດຕາເວັນອອກ ພຣະອົງພ້ອມດ້ວຍເສນາສີ່ເຫຼົ່າໄດ້ສະເດັດຕາມໄປ ສະເດັດເຂົ້າພັກແຮມພ້ອມດ້ວຍເສນາສີ່ເຫຼົ່າໃນປະເທດທີ່ກົງຈັກແກ້ວຢຸດຢູ່ ພຣະຣາຊາທັງຫຼາຍທີ່ເປັນປໍລະປັກໃນທິດຕາເວັນອອກພາກັນສະເດັດມາເຝົ້າ ແລ້ວຂາບທູນແນວນີ້ວ່າ "ຂໍເດຊະມະຫາຣາດເຈົ້າ ພຣະອົງໂຜດສະເດັດມາເທີ້ນ ຂ້ານ້ອຍຂໍຖວາຍຣາດຊະສົມບັດຂອງຂ້ານ້ອຍ ໃຫ້ເປັນຂອງພຣະອົງ ໂຜດປະທານພຣະບໍຣົມຣາໂຊວາດເທີ້ນ ຂ້ານ້ອຍ"

ພຣະອົງຕັດຕອບແນວນີ້ວ່າ "ພວກທ່ານບໍ່ຄວນຂ້າສັດ ບໍ່ຄວນຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ບໍ່ຄວນປະພຶດຜິດໃນກາມ ບໍ່ຄວນເວົ້າຕົວະ ບໍ່ຄວນດື່ມນໍ້າເມົາ ແລະ ຈົ່ງຄອບຄອງຣາດຊະສົມບັດໄປຄືເກົ່າເທີ້ນ"

ພຣະຣາຊາທັງຫຼາຍ ທີ່ເປັນປໍລະປັກໃນທິດຕາເວັນອອກເຫຼົ່ານັ້ນ ອ່ອນນ້ອມຕໍ່ພຣະອົງ ຈາກນັ້ນ ກົງຈັກແກ້ວປິ່ນໄປສູ່ມະຫາສະໝຸດ ທິດຕາເວັນອອກແລ້ວ ກັບວຽນໄປທາງທິດໃຕ້ ໆລໆ ປິ່ນໄປສູ່ມະຫາສະໝຸດທິດໃຕ້ແລ້ວ ກັບວຽນໄປທາງທິດຕາເວັນຕົກ ໆລໆ ປິ່ນໄປສູ່ມະຫາສະໝຸດທິດຕາເວັນຕົກແລ້ວ ກັບວຽນໄປທາງທິດເໜືອ ພຣະອົງພ້ອມດ້ວຍເສນາສີ່ເຫຼົ່າໄດ້ສະເດັດຕາມໄປ ສະເດັດເຂົ້າພັກແຮມພ້ອມດ້ວຍເສນາສີ່ເຫຼົ່າ ໃນປະເທດທີ່ກົງຈັກແກ້ວຢຸດຢູ່ ພຣະຣາຊາທັງຫຼາຍທີ່ເປັນປໍລະປັກໃນທິດເໜືອ ພາກັນສະເດັດມາເຝົ້າ ແລ້ວຂາບທູນແນວນີ້ວ່າ "ຂໍເດຊະມະຫາຣາດເຈົ້າ ພຣະອົງໂຜດສະເດັດມາເທີ້ນ ຂ້ານ້ອຍ ຂໍຖວາຍຣາດຊະສົມບັດຂອງຂ້ານ້ອຍໃຫ້ເປັນຂອງພຣະອົງ ໂຜດປະທານພຣະບໍຣົມຣາໂຊວາດເທີ້ນ ຂ້ານ້ອຍ"

ພຣະອົງຕັດຕອບແນວນີ້ວ່າ "ພວກທ່ານບໍ່ຄວນຂ້າສັດ ບໍ່ຄວນຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ບໍ່ຄວນປະພຶດຜິດໃນກາມ ບໍ່ຄວນເວົ້າຕົວະ ບໍ່ຄວນດື່ມນໍ້າເມົາ ແລະ ຈົ່ງຄອບຄອງຣາດຊະສົມບັດໄປຄືເກົ່າເທີ້ນ" ພຣະຣາຊາທັງຫຼາຍທີ່ເປັນປໍລະປັກໃນທິດເໜືອເຫຼົ່ານັ້ນກັບອ່ອນນ້ອມຈົງຮັກພັກດີຕໍ່ພຣະອົງ

[໔໘໕] ດັ່ງນັ້ນ ຖືວ່າກົງຈັກແກ້ວໄດ້ແຜ່ລັດສະໝີປົກຄອງໄປທົ່ວແຜ່ນດິນ ອັນມີມະຫາສະໝຸດເປັນຂອບເຂດຈົບໝົດ ແລ້ວປິ່ນກັບມາຫາຍັງເມືອງກຸສາວະດີຣາດຊະທານີ ມາຜາກົດແກ່ພຣະເຈົ້າມະຫາສຸທັດສະນະທີ່ປະຕູໃນພຣະຣາດຊະວັງໜ້າມຸກ ທີ່ຊົງວິນິດໄສຣາດຊະກິດທຳພາຍໃນພຣະຣາດຊະວັງຂອງພຣະອົງໃຫ້ສະຫວ່າງສະໄຫວ ກົງຈັກແກ້ວທີ່ຊົງຄຸນວິເສດເຫັນປານນີ້ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະແນວນີ້ແລ

## ຊ້າງແກ້ວ

[໔໘໖] ໔. ຊ້າງແກ້ວ ເຊິ່ງເປັນຊ້າງເຜືອກ ເປັນທີ່ເພິ່ງຂອງເຫຼົ່າສັດ ມີລິດ ເຫາະໄປໃນອາກາດໄດ້ ເປັນພະຍາຊ້າງຕະກູນອຸໂປສົດ ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະ ພຣະອົງທອດພຣະເນດແລ້ວຊົງພໍພຣະທະໄທດ້ວຍພຣະດຳຣິວ່າ "ທ່ານຜູ້ຈະເລີນ ພາຫະນະ ຄືຊ້າງຖ້າໄດ້ນຳໄປເຝິກຈະເປັນສັດທີ່ເປັນມຸງຄຸນຢ່າງສູງແນ່ນອນ" ທັນໃດນັ້ນ ຊ້າງແກ້ວເຊືອກນັ້ນໄດ້ຮັບການເຝິກທັດ ຄື ຊ້າງອາຊາໄນພັນດີ ຕະກູນຄັນທະຫັດຖີ ເຊິ່ງໄດ້ຮັບການເຝິກທັດດີແລ້ວຕະຫຼອດກາລະນານ ດູຣາ ອານົນ ເລື້ອງມີມາວ່າພຣະອົງເຄີຍຊົງທົດສອບຊ້າງແກ້ວເຊືອກນັ້ນໂດຍສະເດັດຂຶ້ນຊົງເວລາເຊົ້າ ແລ້ວສະເດັດລຽບໄປຕະຫຼອດແຜ່ນດິນອັນມີມະຫາສະໝຸດເປັນ

ຂອບເຂດ ແລ້ວສະເດັດກັບເມືອງກຸສາວະດີຣາດຊະທານີ ທັນສະເຫວີຍພຣະກະຍາຫານເຊົ້າ ຊ້າງແກ້ວທີ່ຊົງຄຸນວິເສດເຫັນປານນີ້ ໄດ້ຜາກົດມີແກ່ພຣະເຈົ້າມະຫາສຸທັດສະນະແນວນີ້ແລ

## ມ້າແກ້ວ

[໘໕໗] ໓. ດູຣາ ອານົນ ມ້າແກ້ວ ເຊິ່ງເປັນມ້າຂາວຫົວດຳ ມີຂົນປີກຄືຫຍ້າປ້ອງມີລິດເຫາະໄປໃນອາກາດໄດ້ ຊື່ພະຍາມ້າວະລາຫົກ ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະ ພຣະອົງທອດພຣະເນດແລ້ວ ຊົງພໍພຣະທະໄທ ດ້ວຍພຣະດຳຣິວ່າ "ທ່ານຜູ້ຈະເລີນ ພາຫະນະຄືມ້າຖ້າໄດ້ນຳໄປເຝິກຈະເປັນສັດທີ່ເປັນມຸງຄຸນຢ່າງສູງແນ່ນອນ" ຕໍ່ມາມ້າແກ້ວໂຕນັ້ນໄດ້ຮັບການເຝິກຫັດຄືມ້າອາຊາໄນພັນດີ ເຊິ່ງໄດ້ຮັບການເຝິກຫັດດີແລ້ວ ຕະຫຼອດການະນານ ດູຣາອານົນເລື້ອງມີມາວ່າພຣະອົງເຄີຍຊົງທົດສອບມ້ານັ້ນ ໂດຍສະເດັດຂຶ້ນຊົງເວລາເຊົ້າແລ້ວສະເດັດລຽບໄປຕະຫຼອດແຜ່ນດິນ ອັນມີມະຫາສະໝຸດເປັນຂອບເຂດ ສະເດັດກັບເມືອງກຸສາວະດີຣາດຊະທານີ ທັນສະເຫວີຍພຣະກະຍາຫານເຊົ້າ ມ້າແກ້ວທີ່ຊົງຄຸນວິເສດເຫັນປານນີ້ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະແນວນີ້ແລ

## ມະນີແກ້ວ

[໘໕໘] ໔. ດູຣາ ອານົນ ມະນີແກ້ວ ເຊິ່ງເປັນແກ້ວໄພທູນ ງາມບໍລິສຸດຕາມທຳມະຊາດມີແປດຫຼ່ຽມທີ່ເຈຍຣະໄນດີແລ້ວ ສົດໃສເຫຼື້ອມຍິບຍັບ ໄດ້ສັດສ່ວນ ແສງສະຫວ່າງຂອງມະນີແກ້ວດວງນັ້ນ ມີຣັດສະໝີແຜ່ຊ່ານອອກໄປທົ່ວໂດຍຮອບປະມານ ໑ ໂຍດ ດູຣາ ອານົນ ເລື້ອງມີມາວ່າ ພຣະອົງເຄີຍຊົງທົດສອບມະນີແກ້ວດວງນັ້ນ ຊົງໃຫ້ໝູ່ເສນາສີ່ເຫຼົ່າຜູກມັດເສື້ອເກາະແລ້ວຊົງຍົກມະນີແກ້ວນັ້ນຂຶ້ນເປັນຍອດທົງ ສະເດັດໄປປະທັບຢືນຢູ່ໃນບ່ອນມືດຍາມຣາຕີຊາວບ້ານທີ່ອາໄສຢູ່ໂດຍຮອບສຳຄັນວ່າ ເປັນເວລາກາງເວັນ ຈຶ່ງທຳການງານດ້ວຍແສງສະຫວ່າງແຫ່ງມະນີແກ້ວນີ້ ມະນີແກ້ວທີ່ຊົງຄຸນວິເສດເຫັນປານນັ້ນ ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະ

## ນາງແກ້ວ

[໘໕໙] ໕. ດູຣາ ອານົນ ນາງແກ້ວ ເຊິ່ງເປັນສະຕີຮູບງາມ ເປັນຕາເບິ່ງ ເປັນຕາແຍງມີຜິວພັນສົດໃສ ງາມຫຼາຍ ບໍ່ສູງຫຼາຍ ບໍ່ເຕ້ຍຫຼາຍ ບໍ່ຈ່ອຍຫຼາຍ ບໍ່ຕຸ້ຍຫຼາຍ ບໍ່ດຳຫຼາຍ ບໍ່ຂາວຫຼາຍ ງົດງາມເກີນຜິວພັນຂອງແມ່ຍິງມະນຸດທົ່ວໄປ ແຕ່ບໍ່ເຖິງກັບເປັນຜິວພັນທິບ ດູຣາ ອານົນກາຍຂອງນາງແກ້ວນັ້ນ ສຳຜັດອ່ອນນຸ່ມ ເໝືອນນຸ່ນງິ້ວ ຫຼື ຍອງຝ້າຍ ມີຮ່າງກາຍອົບອຸ່ນໃນລະດູໜາວ ເຢັນໃນລະດູຮ້ອນ ດູຣາ ອານົນ ມີກິ່ນຈັນທອມ ຫອມຟຸ້ງອອກຈາກກາຍນາງມີກິ່ນອຸບົນ ຫອມຟຸ້ງອອກຈາກປາກຂອງນາງ ນາງຕື່ນກ່ອນນອນພາຍຫລັງ ຄອຍຖ້າຟັງວ່າຈະຮັບສັ່ງໃຫ້ເຮັດຫຍັງ ຄອຍປະພຶດ ໃຫ້ຖືກພຣະທະໄທ ທູນແຕ່ຄຳອັນຊວນໃຫ້ຮັກ ນາງບໍ່ເຄີຍ

ປະພຶດນອກພຣະຫະໄທຂອງພຣະອົງ ແມ່ນທາງໃຈນາງບໍ່ເຄີຍປະພຶດນອກພຣະຫະໄທ ເຫດໃດນາງຈະປະພຶດນອກພຣະຫະໄທທາງກາຍ ນາງແກ້ວຜູ້ຊົງຄຸນວິເສດເຫັນປານນີ້ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະແນວນີ້ແລ

## ຄະຫະບໍດີແກ້ວ

[໔໕໐] ຜ. ຄະຫະບໍດີແກ້ວ ເຊິ່ງເປັນຜູ້ມີຕາທິບອັນເກີດຈາກຜົນກຳ ສາມາດເຫັນຂຸມຊັບທັງທີ່ມີເຈົ້າຂອງ ແລະ ບໍ່ມີເຈົ້າຂອງ ເຂົາເຂົ້າໄປເຝົ້າພຣະເຈົ້າ ມະຫາສຸທັດສະນະແລ້ວຂາບທູນແນວນີ້ວ່າ "ຂໍເດຊະພຣະອົງ ໂຜດຢ່າກັງວົນພຣະຫະໄທເລີຍ ຂ້າພຣະບາດຈະຈັດການເລື້ອງຂຸມຊັບໃຫ້ສຳເລັດ ເປັນພຣະຣາດຊະຊັບຂອງພຣະອົງ" ດູຣາ ອານົນ ເລື້ອງມີມາວ່າພຣະອົງຊົງເຄີຍທົດສອບຄະຫະບໍດີແກ້ວມາແລ້ວ ໂດຍສະເດັດລົງເຮືອລັດກະແສນ້ຳໄປກາງແມ່ນ້ຳຄົງຄາ ຕັດກັບຄະຫະບໍດີແກ້ວແນວນີ້ວ່າ "ຄະຫະບໍດີ ເຮົາຕ້ອງການເງິນແລະຄຳ" ເຂົາຂາບທູນວ່າ" ມະຫາຣາດເຈົ້າ ຖ້າເປັນແນວນັ້ນ ໂຜດຈອດເຮືອທີ່ແຄມຕະຫຼິ່ງດ້ານໜຶ່ງ" ພຣະອົງຕັດວ່າ "ຄະຫະບໍດີເຮົາຕ້ອງການເງິນ ແລະ ຄຳ ຢູ່ບ່ອນນີ້" ທັນໃດນັ້ນ ຄະຫະບໍດີແກ້ວ ຈຶ່ງເອົາມືທັງສອງຈຸ່ມລົງໄປໃນນ້ຳ ແລ້ວຍົກໝໍ້ທີ່ເຕັມໄປດ້ວຍເງິນ ແລະ ຄຳ ຂຶ້ນມາ ຂາບທູນພຣະອົງແນວນີ້ວ່າ "ມະຫາຣາດເຈົ້າທໍ່ນີ້ກໍພຽງພໍ ທໍ່ນີ້ເປັນອັນເຮັດແລ້ວ ທໍ່ນີ້ເປັນອັນບູຊາແລ້ວ" ພຣະອົງຕັດແນວນີ້ວ່າ "ທໍ່ນີ້ກໍພຽງພໍ ທໍ່ນີ້ເປັນອັນເຮັດແລ້ວ ທໍ່ນີ້ເປັນອັນບູຊາແລ້ວ" ຄະຫະບໍດີແກ້ວ ຜູ້ຊົງຄຸນວິເສດເຫັນປານນີ້ ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະແລ້ວແລ

## ປະຣິນາຍົກແກ້ວ

[໔໕໑] ກ. ປະຣິນາຍົກແກ້ວ ເຊິ່ງເປັນຜູ້ສະຫຼາດຫຼັກແຫຼມ ມີປັນຍາສາມາດຈັດໃຫ້ພຣະເຈົ້າມະຫາສຸທັດສະນະ ສະເດັດເຂົ້າໄປໃນທີ່ຄວນສະເດັດ ຈັດໃຫ້ສະເດັດຫຼີກໜີຈາກທີ່ບໍ່ຄວນສະເດັດ ຫ້າມໃນສະຖານທີ່ມີອັນຕະລາຍບໍ່ໃຫ້ສະເດັດໄປ ປະຣິນາຍົກແນວນີ້ໄດ້ຜາກົດແກ່ພຣະອົງເຂົາເຂົ້າເຝົ້າພຣະເຈົ້າມະຫາສຸທັດສະນະແລ້ວ ຂາບທູນແນວນີ້ວ່າ "ຂໍເດຊະພຣະອົງໂຜດຢ່າກັງວົນພຣະຫະໄທເລີຍ ຂ້າພຣະບາດ ຈະຖວາຍໃຫ້ຄຳເປິກສາແກ່ພຣະອົງເປັນຢ່າງດີ" ປະຣິນາຍົກແກ້ວຜູ້ຊົງຄຸນວິເສດເຫັນປານນີ້ ໄດ້ຜາກົດແກ່ພຣະເຈົ້າມະຫາສຸທັດສະນະ

ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະ ຊົງສົມບູນດ້ວຍແກ້ວ ໗ ປະການດັ່ງນີ້ແລ

## ຊົງສົມບູນດ້ວຍລິດ ໔ ປະການ

[໔໕໔] ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະ ຊົງສົມບູນດ້ວຍລິດ (ຄວາມສຳເລັດ) ໔ ປະການ ລິດ ໔ ປະການນັ້ນມີຫຍັງແດ່ ຄື

໑. ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະ ມີພຣະຮູບງົດງາມ ເປັນຕາເບິ່ງ ໜ້າເຫຼື້ອມໃສ ມີພຣະສະຫວີວັນສົດໃສ ງາມເກີນກວ່າຄົນອື່ນ ພຣະອົງຊົງສົມບູນດ້ວຍລິດປະການທີ່ ໑ ນີ້

໒. ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະ ມີພຣະຊົນມາຍຸຍືນຍາວເກີນກວ່າຄົນອື່ນພຣະອົງຊົງສົມບູນດ້ວຍລິດປະການທີ ໒ ນີ້

໓. ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະມີພຣະໂຣຄາພາດໜ້ອຍ ມີຄວາມທຸກໜ້ອຍ ຊົງມີໄຟທາດໄຫຼວຽນ ສະໝ່ຳສະເໝີດີກວ່າຄົນອື່ນ ຄື ບໍ່ເຢັນຫຼາຍ ແລະ ບໍ່ຮ້ອນຫຼາຍພຣະອົງຊົງສົມບູນດ້ວຍລິດປະການທີ ໓ ນີ້

໔. ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະ ຊົງເປັນທີ່ຮັກເປັນທີ່ພໍໃຈຂອງພາມ ແລະ ຄະຫະບໍດີທັງຫຼາຍ ດູຣາ ອານົນ ບິດາເປັນທີ່ຮັກເປັນທີ່ພໍໃຈຂອງບຸດທັງຫຼາຍສັນໃດ ພຣະອົງຊົງເປັນທີ່ຮັກເປັນທີ່ພໍໃຈຂອງພາມ ແລະ ຄະຫະບໍດີທັງຫຼາຍສັນນັ້ນ ອັນໜຶ່ງພາມ ແລະ ຄະຫະບໍດີທັງຫຼາຍ ເປັນທີ່ຮັກເປັນທີ່ມັກໃຈຂອງພຣະອົງສັນໃດ ດູຣາ ອານົນ ບຸດທັງ ຫຼາຍເປັນທີ່ຮັກເປັນທີ່ພໍໃຈຂອງບິດາສັນໃດ ພາມ ແລະ ຄະຫະບໍດີທັງຫຼາຍກໍເປັນທີ່ຮັກເປັນທີ່ພໍໃຈຂອງພຣະອົງສັນນັ້ນ ດູຣາ ອານົນ ເລື້ອງເຄີຍມີມາວ່າ ພຣະອົງສະເດັດທ່ຽວຊົມພຣະຣາດຊະອຸດທະຍານພ້ອມດ້ວຍໝູ່ເສນາສີ່ເຫຼົ່າ ພວກພາມ ແລະ ຄະຫະບໍດີເຂົ້າເຝົ້າພຣະເຈົ້າມະຫາສຸທັດສະນະ ຂາບທູນວ່າ “ຂໍເດຊະມະຫາຣາດເຈົ້າ ພຣະອົງຢ່າຟ້າວສະເດັດໄປ ພວກຂ້າພຣະບາດຈະໄດ້ເຂົ້າເຝົ້າດົນ ໆ” ພຣະອົງຕັດກັບສາຣະຖີວ່າ “ທ່ານຢ່າຟ້າວຂັບລົດໄປ ເຮົາຈະໄດ້ເຫັນພວກພາມ ແລະ ຄະຫະບໍດີດົນ ໆ” ພຣະອົງຊົງສົມບູນດ້ວຍລິດປະການທີ ໔ ນີ້

ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະຊົງສົມບູນດ້ວຍລິດ ໔ ປະການແນວນີ້ແລ

## ທຳມະຜາສາດແລະສະໂບກຂະຣະນີ

[໔໕໓] ດູຣາອານົນ ຄັ້ງນັ້ນ ພຣະເຈົ້າມະຫາສຸທັດສະນະຊົງດຳຣິແນວນີ້ວ່າ “ທາງທີ່ດີເຮົາຄວນຈະຂຸດສະໂບກຂະຣະນີ ມີໄລຍະຫ່າງກັນ ສະລະ ໑໐໐ ຂັນທະນູ ລະຫວ່າງກົກຕານເຫຼົ່ານີ້” ແລ້ວຮັບສັ່ງໃຫ້ຂຸດສະໂບກຂະຣະນີ ມີໄລຍະຫ່າງກັນ ສະລະ ໑໐໐ ຂັນທະນູລະ ຫວ່າງກົກຕານເຫຼົ່ານັ້ນ ສະໂບກຂະຣະນີເຫຼົ່ານັ້ນ ກໍ່ດ້ວຍດິນຈີ່ ໔ ຊະນິດ ໄດ້ແກ່ (໑) ດິນຈີ່ຄຳ (໒) ດິນຈີ່ເງິນ (໓) ດິນຈີ່ແກ້ວໄພທູນ (໔) ດິນຈີ່ແກ້ວຜະລຶກ ສະໂບກຂະຣະນີເຫຼົ່ານັ້ນ ແຕ່ລະສະມີຂັ້ນໄດ ໔ ຂັ້ນໄດ ແບ່ງເປັນ ໔ ຊະນິດຄື (໑) ຂັ້ນໄດຄຳ (໒) ຂັ້ນໄດເງິນ (໓) ຂັ້ນ ໄດແກ້ວໄພທູນ (໔) ຂັ້ນໄດແກ້ວຜະລຶກ ຂັ້ນໄດຄຳມີລູກຕັ້ງເຮັດດ້ວຍຄຳ ຮາວ ແລະ ຫົວເສົາ ເຮັດດ້ວຍເງິນ ຂັ້ນໄດເງິນມີລູກຕັ້ງເຮັດດ້ວຍເງິນ ຮາວ ແລະ ຫົວເສົາເຮັດດ້ວຍຄຳ ຂັ້ນໄດແກ້ວໄພທູນມີລູກຕັ້ງເຮັດ

ດ້ວຍແກ້ວໄພທູນ ຮາວ ແລະ ຫົວເສົາເຮັດດ້ວຍແກ້ວຜະລຶກ ຂັ້ນໄດແກ້ວຜະລຶກມີລູກຕັ້ງເຮັດດ້ວຍແກ້ວຜະລຶກ ຮາວ ແລະ ຫົວເສົາເຮັດດ້ວຍແກ້ວໄພທູນສະໂບກ ຂະຣະນີເຫຼົ່ານັ້ນມີຮົ້ວອ້ອມ ໘ ຊັ້ນ ຄື (໑) ຮົ້ວຄຳ (໘) ຮົ້ວເງິນ ຮົ້ວຄຳມີເສົາເຮັດດ້ວຍຄຳ ຮາວ ແລະ ຫົວເສົາເຮັດດ້ວຍເງິນ ຮົ້ວເງິນມີເສົາເຮັດດ້ວຍເງິນ ຮາວ ແລະ ຫົວເສົາເຮັດດ້ວຍຄຳ ດູຣາ ອານົນ ພຣະເຈົ້າມະຫາ ສຸທັດສະນະຊົງດຳຣິແບບນີ້ວ່າ "ໃນສະໂບກຂະຣະນີເຫຼົ່ານີ້ ເຮົາ ຄວນຈະໃຫ້ປູກໄມ້ດອກເຊັ່ນດອກອຸບົນ ປະທຸມ ໂກມຸດ ບຸນທະຣິກ ອັນປັ່ງດອກໄດ້ທຸກລະດູການໄວ້ເພື່ອມອບໃຫ້ແກ່ທຸກ ໆ ຄົນ ບໍ່ໃຫ້ຕ້ອງກັບມືເປົ່າ" ຈຶ່ງຮັບສັ່ງໃຫ້ປູກໄມ້ດອກອຸບົນ ປະທຸມ ໂກມຸດ ບຸນທະຣິກອັນປັ່ງດອກໄດ້ທຸກລະດູການໄວ້ເພື່ອມອບໃຫ້ແກ່ທຸກ ໆ ຄົນບໍ່ໃຫ້ກັບໄປມືເປົ່າ

[໔໕໔] ດູຣາ ອານົນ ຕໍ່ມາ ພຣະເຈົ້າມະຫາສຸທັດສະນະ ຊົງດຳຣິແບບນີ້ວ່າ "ຕາມຂອບສະໂບກຂະຣະນີເຫຼົ່ານີ້ ເຮົາຄວນຈະແຕ່ງຕັ້ງເຈົ້າໜ້າທີ່ມະຫາປະກະປະຈຳໄວ້ ໃຫ້ເຮັດໜ້າທີ່ເຊື້ອເຊີນຜູ້ມາແລ້ວໃຫ້ອາບນ້ຳ" ຈຶ່ງຊົງຕັ້ງເຈົ້າໜ້າທີ່ເຊີນຄົນອາບນ້ຳປະຈຳໄວ້ຕາມຂອບສະໂບກຂະຣະນີເຫຼົ່ານັ້ນ ໃຫ້ເຮັດໜ້າທີ່ເຊື້ອເຊີນຜູ້ມາແລ້ວໃຫ້ອາບນ້ຳ ຈາກນັ້ນພຣະອົງຊົງດຳຣິແບບນີ້ວ່າ "ທີ່ຂອບສະໂບກຂະຣະນີເຫຼົ່ານີ້ ເຮົາຄວນຈະຈັດສິ່ງຂອງໃຫ້ທານເຊັ່ນເຂົ້າສຳລັບຜູ້ຕ້ອງການເຂົ້າ ນ້ຳສຳລັບຜູ້ຕ້ອງການນ້ຳ ຜ້າສຳລັບຜູ້ຕ້ອງການຜ້າ ຍານພາຫານະສຳລັບຜູ້ຕ້ອງການຍານ ບ່ອນນອນສຳລັບຜູ້ຕ້ອງການບ່ອນນອນ ສະຕີສຳລັບຜູ້ຕ້ອງການສະຕີ ເງິນສຳລັບຜູ້ຕ້ອງການເງິນ ຄຳສຳລັບຜູ້ຕ້ອງການຄຳ" ຈຶ່ງຊົງຈັດສິ່ງຂອງໃຫ້ທານມີເຂົ້າສຳລັບຜູ້ຕ້ອງການເຂົ້າ ນ້ຳສຳລັບຜູ້ຕ້ອງການນ້ຳ ຜ້າສຳລັບຜູ້ຕ້ອງການຜ້າ ຍານສຳລັບຜູ້ຕ້ອງການຍານ ບ່ອນນອນສຳລັບຜູ້ຕ້ອງການບ່ອນນອນ ສະຕີສຳລັບຜູ້ຕ້ອງການສະຕີ ເງິນສຳລັບຜູ້ຕ້ອງການເງິນ ຄຳສຳລັບຜູ້ຕ້ອງການຄຳໄວ້ທີ່ຂອບສະໂບກຂະຣະນີເຫຼົ່ານັ້ນ

[໔໕໕] ດູຣາ ອານົນ ຄັ້ງນັ້ນພວກພາມ ແລະ ຄະຫະບໍດີຖືເອົາຊັບສົມບັດເປັນຈຳນວນຫຼາຍເຂົ້າໄປເຝົ້າພຣະເຈົ້າມະຫາສຸທັດສະນະ ໄດ້ຂາບທູນແບບນີ້ວ່າ "ຂໍເດຊະມະຫາຣາດເຈົ້າຊັບສົມບັດຫຼວງຫຼາຍເຫຼົ່ານີ້ ພວກຂ້າພຣະບາດນຳມາຖວາຍໃຫ້ສະເພາະພຣະອົງທີ່ນັ້ນ ຂໍພຣະອົງຊົງຮັບໄວ້ດ້ວຍເທີ້ນ"

ພຣະອົງຕັດຕອບວ່າ "ຢ່າເລີຍ ທ່ານທັງຫຼາຍ ພວກທ່ານນຳຊັບສົມບັດຫຼວງຫຼາຍນີ້ມາເພື່ອເຮົາ ດ້ວຍພະລີກຳ ອັນຊອບທຳແລ້ວ ແຕ່ຊັບສົມບັດທັງຫຼາຍເຫຼົ່ານີ້ ຈົ່ງເປັນຂອງພວກທ່ານຕໍ່ໄປຄືເກົ່າເທີ້ນ ແລະ ຈົ່ງນຳກັບໄປໃຫ້ຫຼາຍກວ່ານີ້ອີກ"

ເມື່ອພຣະອົງຊົງປະຕິເສດພວກເຂົາແບບນັ້ນ ພວກເຂົາຈຶ່ງຫຼີກໄປຢູ່ໃນບ່ອນສົມຄວນແລ້ວເປີກສາຫາຣືກັນແບບນີ້ວ່າ "ການທີ່ພວກເຮົາຈະນຳຊັບສົມບັດເຫຼົ່ານີ້ກັບຄືນໄປສູ່ເຮືອນຂອງຕົນອີກນັ້ນບໍ່ສົມຄວນ ທາງທີ່ດີພວກເຮົາຄວນຊ່ອຍກັນສ້າງພຣະຣາດຊະນິເວດຖວາຍພຣະເຈົ້າມະຫາ

ສຸທັດສະນະ” ເມື່ອໄດ້ເປີກສາກັນແນວນີ້ແລ້ວໄດ້ພາກັນເຂົ້າເຝົ້າພຣະເຈົ້າມະຫາສຸທັດສະນະ ແລ້ວຂາບທູນແນວນີ້ວ່າ “ຂໍເດຊະມະຫາຣາດເຈົ້າ ພວກຂ້າພຣະບາດຈະຊ່ອຍກັນສ້າງພຣະຣາດຊະນິເວດຖວາຍພຣະອົງ ຂ້ານ້ອຍ”

## ພຣະອົງຊົງຮັບດ້ວຍພຣະອາການດຸດສະດີ

[໔໕໖] ດູຣາ ອານົນ ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບຊົງຮູ້ພຣະຣາດຊະດຳຣິຂອງພຣະເຈົ້າມະຫາສຸທັດສະນະ ຈຶ່ງມີເທວະບັນຊາຮຽກວິດສຸກຳເທບພະບຸດມາຕັດວ່າ “ມາເທີ້ນສະຫາຍວິດສຸກຳ ທ່ານຈົ່ງໄປຊ່ອຍສ້າງພຣະນິເວດຊື່ ທຳມະຜາສາດ ຖວາຍພຣະເຈົ້າມະຫາສຸທັດສະນະເທີ້ນ”

ວິດສຸກຳເທບພະບຸດທູນຮັບເທວະບັນຊາແລ້ວ ໄດ້ອັນຕະຣະທານຈາກພິບຕາວະຕິງສາໄປຜາກົດໂຕຢູ່ເບື້ອງພຣະພັກຂອງພຣະເຈົ້າມະຫາສຸທັດສະນະ ຄື ບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າແນວນັ້ນ ແລ້ວໄດ້ຂາບທູນພຣະເຈົ້າມະຫາສຸທັດສະນະແນວນີ້ວ່າ “ຂໍເດຊະຂ້າພຣະບາດ ຈະນິມິດພຣະຣາດຊະນິເວດຊື່ທຳມະຜາສາດຖວາຍພຣະອົງ”

ພຣະອົງຊົງຮັບດ້ວຍພຣະອາການດຸດສະດີ

ວິດສຸກຳເທບພະບຸດໄດ້ນິມິດພຣະຣາດຊະນິເວດຊື່ ທຳມະຜາສາດ ຖວາຍພຣະເຈົ້າມະຫາສຸທັດສະນະໃນດ້ານທິດຕາເວັນອອກ ແລະ ທິດຕາເວັນຕົກຍາວ ໑ ໂຍດ ດ້ານທິດເໜືອ ແລະ ທິດໃຕ້ກວ້າງເຄິ່ງໂຍດ ມີຖານສູງກວ່າ ໓ ບຸຣຸດຢືນກົງ ກໍ່ດ້ວຍດິນຈີ່ ໔ ຊະນິດ ຄື (໑) ດິນຈີ່ຄຳ (໒) ດິນຈີ່ເງິນ (໓) ດິນຈີ່ແກ້ວໄພທູນ (໔) ດິນຈີ່ແກ້ວຜະລຶກ ທຳມະຜາສາດມີເສົາ ໘໔,໐໐໐ ຕົ້ນ ແບ່ງເປັນ ໔ ຊະນິດ ຄື (໑) ເສົາຄຳ (໒) ເສົາເງິນ (໓) ເສົາແກ້ວໄພທູນ (໔) ເສົາແກ້ວຜະລຶກ ປູດ້ວຍແຜ່ນແປ້ນ ໔ ຊະນິດ ຄື (໑) ແຜ່ນແປ້ນຄຳ (໒) ແຜ່ນແປ້ນເງິນ (໓) ແຜ່ນແປ້ນແກ້ວໄພທູນ (໔) ແຜ່ນແປ້ນແກ້ວຜະລຶກ ທຳມະຜາສາດມີຂັ້ນໄດ ໒໔ ຂັ້ນໄດ ແບ່ງເປັນ ໔ ຊະນິດຄື (໑) ຂັ້ນໄດຄຳ (໒) ຂັ້ນໄດເງິນ (໓) ຂັ້ນໄດແກ້ວໄພທູນ (໔) ຂັ້ນໄດແກ້ວຜະລຶກ ຂັ້ນໄດຄຳມີລູກຕົ່ງເຮັດດ້ວຍຄຳ ຣາວຈັບ ແລະ ຫົວເສົາເຮັດດ້ວຍເງິນ ຂັ້ນໄດເງິນມີລູກຕົ່ງເຮັດດ້ວຍເງິນ ຣາວຈັບ ແລະ ຫົວເສົາເຮັດດ້ວຍຄຳ ຂັ້ນໄດແກ້ວໄພທູນມີລູກຕົ່ງເຮັດດ້ວຍແກ້ວໄພທູນ ຣາວຈັບ ແລະ ຫົວເສົາເຮັດດ້ວຍແກ້ວຜະລຶກ ຂັ້ນໄດແກ້ວຜະ ລຶກມີລູກຕົ່ງເຮັດດ້ວຍແກ້ວຜະລຶກ ຣາວຈັບ ແລະ ຫົວເສົາເຮັດດ້ວຍແກ້ວໄພທູນ ທຳມະຜາສາດມີຫໍຍອດ ໘໔,໐໐໐ ຍອດ ແບ່ງເປັນ ໔ ຊະນິດຄື (໑) ຫໍຍອດຄຳ (໒) ຫໍຍອດເງິນ (໓) ຫໍຍອດແກ້ວໄພທູນ (໔) ຫໍຍອດແກ້ວຜະລຶກ ໃນຫໍຍອດຄຳຕັ້ງບັນລັງເງິນໄວ້ໃນຫໍຍອດເງິນຕັ້ງ ບັນລັງຄຳໄວ້ໃນຫໍຍອດແກ້ວໄພທູນຕັ້ງບັນລັງງາໄວ້ ໃນຫໍຍອດແກ້ວຜະລຶກຕັ້ງບັນລັງແກ້ວບຸດຊະຣາຄຳໄວ້

ໃນທີ່ໃກ້ປະຕູຫໍຍອດຄໍາ ຕັ້ງກົກຕານ ເງິນ ເຊິ່ງມີລໍາຕົ້ນເປັນເງິນໃບ ແລະ ໝາກເປັນຄໍາ ໃນທີ່ໃກ້ປະຕູຫໍຍອດເງິນຕັ້ງກົກຕານຄໍາເຊິ່ງມີລໍາຕົ້ນເປັນຄໍາໃບ ແລະ ໝາກເປັນເງິນ ໃນທີ່ໃກ້ປະຕູຫໍຍອດແກ້ວໄພທູນຕັ້ງກົກຕານແກ້ວຜະລຶກເຊິ່ງມີລໍາຕົ້ນເປັນແກ້ວຜະລຶກໃບ ແລະ ໝາກເປັນແກ້ວໄພທູນ ໃນທີ່ປະຕູຫໍຍອດແກ້ວຜະລຶກຕັ້ງກົກຕານແກ້ວໄພທູນເຊິ່ງມີລໍາຕົ້ນເປັນແກ້ວໄພທູນໃບ ແລະໝາກເປັນແກ້ວຜະລຶກ

## ສວນຕານ

[໔໕໗] ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະຊົງດໍາຣິແນວນີ້ວ່າ "ເຮົາຄວນຈະໃຫ້ສ້າງສວນຕົ້ນຕານຄໍາໄວ້ ໃນທີ່ໃກ້ປະຕູຫໍຍອດມະຫາວິຍູຫະ ສໍາລັບນັ່ງພັກຜ່ອນກາງເວັນ" ຈຶ່ງຮັບສັ່ງໃຫ້ສ້າງສວນຕົ້ນຕານຄໍາໄວ້ທີ່ໃກ້ປະຕູຫໍຍອດ ມະຫາວິຍູຫະສໍາລັບຊົງນັ່ງພັກຜ່ອນກາງເວັນທໍາມະຜາສາດມີຮົ້ວອ້ອມ ໒ ຊັ້ນ ຄື (໑) ຮົ້ວຄໍາ (໒) ຮົ້ວເງິນ ຮົ້ວຄໍາມີເສົາເຮັດດ້ວຍຄໍາຮາວຈັບ ແລະ ຫົວເສົາເຮັດດ້ວຍເງິນ ຮົ້ວເງິນມີເສົາເຮັດດ້ວຍເງິນ ຮາວຈັບ ແລະ ຫົວເສົາເຮັດດ້ວຍຄໍາ

[໔໕໘] ດູຣາ ອານົນ ທໍາມະຜາສາດມີຕາໜ່າງກະດິງອ້ອມ ໒ ຊັ້ນ ຕາໜ່າງຄໍາຊັ້ນໜຶ່ງຕາໜ່າງເງິນຊັ້ນໜຶ່ງ ຕາໜ່າງຄໍາມີກະດິງເງິນ ຕາໜ່າງເງິນມີກະດິງຄໍາ ຕາໜ່າງກະດິງເຫຼົ່ານັ້ນຍາມເມື່ອລົມພັດຕ້ອງ ເກີດສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ດູຣາອານົນ ເຄື່ອງດົນຕີ ໕ ຊະນິດນີ້ ທີ່ບຸກຄົນປັບສຽງດີ ເສບດີແລ້ວ ເສບໂດຍຜູ້ຊ່ຽວຊານ ຍ່ອມມີສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ສັນໃດ ຕາໜ່າງກະດິງເຫຼົ່ານັ້ນຍາມເມື່ອລົມພັດຕ້ອງ ເກີດສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ສັນນັ້ນ

ດູຣາ ອານົນ ສະໄໝນັ້ນ ໃນເມືອງກຸສາວະດີຣາດຊະທານີ ໄດ້ເກີດມີນັກເລງ ນັກຫຼິ້ນ ແລະ ນັກດື່ມ ຂັບຮ້ອງ ຕາມສຽງຈັງຫວະຂອງກະດິງຍາມເມື່ອລົມພັດຕ້ອງ ທໍາມະຜາສາດທີ່ສ້າງສໍາເລັດແລ້ວແນມເບິ່ງໄດ້ຍາກ ເພາະມີແສງສະທ້ອນເຫຼື້ອມຕາ ດູຣາ ອານົນ ໃນສາຣະທະການຄືເດືອນທ້າຍລະດູຝົນ ເມື່ອອາກາດແຈ່ມໃສປາສະຈາກເມກໝອກ ດວງອາທິດສ່ອງທ້ອງຟ້າ ແນມເບິ່ງໄດ້ຍາກເພາະມີແສງສະທ້ອນເຫຼື້ອມຕາສັນໃດ ທໍາມະຜາສາດທີ່ສ້າງສໍາເລັດແລ້ວກໍເບິ່ງໄດ້ຍາກເພາະມີແສງສະທ້ອນເຫຼື້ອມຕາສັນນັ້ນ

## ສະທໍາມະໂບກຂະຣະນີ

[໔໕໙] ດູຣາ ອານົນ ລໍາດັບນັ້ນ ພຣະເຈົ້າມະຫາສຸທັດສະນະຊົງດໍາຣິແນວນີ້ວ່າ "ເຮົາຄວນຈະໃຫ້ສ້າງສະ ຊື່ທໍາມະໂບກຂະຣະນີໄວ້ເບື້ອງໜ້າທໍາມະຜາສາດ" ຈຶ່ງຮັບສັ່ງໃຫ້ສ້າງສະທໍາມະໂບກຂະຣະນີໄວ້ເບື້ອງໜ້າທໍາມະຜາສາດ ດ້ານທິດຕາເວັນອອກ ແລະ ທິດຕາເວັນຕົກຍາວ

໑ ໂຍດ ດ້ານທິດເໜືອ ແລະ ທິດໃຕ້ກວ້າງເຄິ່ງໂຍດ ສະທຳມະໂບກຂະຣະນີກໍ່ດ້ວຍດິນຈີ່ ໔ ຊະນິດຄື (໑) ດິນຈີ່ຄຳ (໒) ດິນຈີ່ເງິນ (໓) ດິນຈີ່ແກ້ວໄພທູນ (໔) ດິນຈີ່ແກ້ວຜະລຶກ ສະທຳມະໂບກຂະຣະນີມີຂັ້ນໄດ ໒໔ ຂັ້ນ ແບ່ງເປັນ ໔ ຊະນິດຄື (໑) ຂັ້ນໄດຄຳ (໒) ຂັ້ນໄດເງິນ (໓) ຂັ້ນໄດແກ້ວໄພທູນ (໔) ຂັ້ນໄດແກ້ວຜະລຶກ ຂັ້ນໄດຄຳມີລູກຕັ້ງເຮັດດ້ວຍຄຳ ຮາວຈັບ ແລະ ຫົວເສົາເຮັດດ້ວຍເງິນ ຂັ້ນໄດເງິນມີລູກຕັ້ງເຮັດດ້ວຍເງິນ ຮາວຈັບ ແລະ ຫົວເສົາເຮັດດ້ວຍຄຳ ຂັ້ນໄດແກ້ວໄພທູນມີລູກຕັ້ງເຮັດດ້ວຍແກ້ວໄພທູນ ຮາວຈັບ ແລະ ຫົວເສົາເຮັດດ້ວຍແກ້ວຜະລຶກ ຂັ້ນໄດແກ້ວຜະລຶກມີລູກຕັ້ງເຮັດດ້ວຍແກ້ວຜະລຶກ ຮາວຈັບ ແລະ ຫົວເສົາເຮັດດ້ວຍແກ້ວໄພທູນ

ດູຣາ ອານົນ ສະທຳມະໂບກຂະຣະນີມີຮົ້ວອ້ອມ ໒ ຊັ້ນຄື (໑) ຮົ້ວຄຳ (໒) ຮົ້ວເງິນ ຮົ້ວຄຳມີເສົາເຮັດດ້ວຍຄຳຮາວຈັບ ແລະ ຫົວເສົາເຮັດດ້ວຍເງິນ ຮົ້ວເງິນມີເສົາເຮັດດ້ວຍເງິນ ຮາວຈັບ ແລະ ຫົວເສົາເຮັດດ້ວຍຄຳ ສະທຳມະໂບກຂະຣະນີມີກົກຕານອ້ອມ ໗ ແຖວ ຄື ກົກຕານຄຳ ໑ ແຖວ ກົກຕານເງິນ ໑ ແຖວ ກົກຕານແກ້ວໄພທູນ ໑ ແຖວ ກົກຕານແກ້ວຜະລຶກ ໑ ແຖວ ກົກຕານແກ້ວໂກເມນ ໑ ແຖວ ກົກຕານແກ້ວບຸດສະຣາຄຳ ໑ ແຖວ ກົກຕານເຮັດດ້ວຍຣັດຕະນະທຸກຢ່າງ ໑ ແຖວ ກົກຕານຄຳມີລຳຕົ້ນເປັນຄຳ ໃບ ແລະ ໝາກເປັນເງິນ ກົກຕານເງິນມີລຳຕົ້ນເປັນເງິນ ໃບ ແລະ ໝາກເປັນຄຳ ກົກຕານແກ້ວໄພທູນມີລຳຕົ້ນເປັນແກ້ວໄພທູນ ໃບ ແລະ ໝາກເປັນແກ້ວຜະລຶກ ກົກຕານແກ້ວຜະລຶກມີລຳຕົ້ນເປັນແກ້ວຜະລຶກ ໃບ ແລະ ໝາກເປັນແກ້ວໄພທູນ ກົກຕານແກ້ວໂກເມນມີລຳຕົ້ນເປັນແກ້ວໂກເມນ ໃບ ແລະໝາກ ເປັນແກ້ວບຸດສະຣາຄຳ ກົກຕານແກ້ວບຸດສະຣາຄຳມີລຳຕົ້ນເປັນແກ້ວບຸດສະຣາຄຳ ໃບ ແລະ ໝາກ ເປັນແກ້ວໂກເມນ ກົກຕານເຮັດດ້ວຍຣັດຕະນະທຸກຢ່າງ ມີລຳຕົ້ນເຮັດດ້ວຍຣັດຕະນະທຸກຢ່າງ ໃບ ແລະ ໝາກ ເຮັດດ້ວຍຣັດຕະນະທຸກຢ່າງ ແຖວກົກຕານເຫຼົ່ານັ້ນ ຍາມເມື່ອລົມພັດຕ້ອງ ເກີດສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ດູຣາ ອານົນ ເຄື່ອງດົນຕີ ໕ ຊະນິດນີ້ ທີ່ບຸກຄົນປັບສຽງດີ ເສບດີແລ້ວ ເສບໂດຍຜູ້ຊ່ຽວຊານ ຍ່ອມມີສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ສັນໃດ ແຖວກົກຕານເຫຼົ່ານັ້ນຍາມເມື່ອລົມພັດຕ້ອງ ກໍມີສຽງມ່ວນ ເປັນຕາສະອອນ ເປັນຕາຟັງ ເຮັດໃຫ້ອອນຊອນ ສັນນັ້ນ ສະໄໝນັ້ນ ໃນເມືອງກຸສາວະດີຣາດຊະທານີ ມີນັກເລງ ນັກຫຼິ້ນ ແລະ ນັກດື່ມ ຂັບຮ້ອງ ຕາມຈັງຫວະ ສຽງກົກຕານຍາມລົມພັດຕ້ອງເຫຼົ່ານັ້ນ

ເມື່ອທຳມະຜາສາດ ແລະ ສະທຳມະໂບກຂະຣະນີສ້າງສຳເລັດແລ້ວ ພຣະເຈົ້າມະຫາສຸທັດສະນະ ໄດ້ຊົງບົວຣະບັດສະມະນະພາມທັງຫຼາຍໃຫ້ພຽງພໍ ດ້ວຍສະມະນະບໍຣິຂານ ແລະ ພາມມະນະບໍຣິຂານ ຕາມທີ່ຕ້ອງການທຸກຢ່າງ ແລ້ວສະເດັດຂຶ້ນສູ່ທຳມະຜາສາດ

## ຊົງຈະເລີນຊານສະມາບັດ

[໒໓໐] ດູຣາ ອານົນ ຄັ້ງນັ້ນ ພຣະເຈົ້າມະຫາສຸທັດສະນະ ຊົງດໍາຣິແບບນີ້ວ່າ "ເຫດທີ່ເຮົາມີລິດຫຼາຍແບບນີ້ ມີອານຸພາບຫຼາຍແບບນີ້ ໃນເວລານີ້ເປັນເພາະຜົນວິບາກແຫ່ງກໍາຫຍັງນໍ" ຊົງດໍາຣິແບບນີ້ວ່າເຫດທີ່ເຮົາມີລິດຫຼາຍແບບນີ້ ມີອານຸພາບຫຼາຍແບບນີ້ ໃນເວລານີ້ເປັນຜົນ ເປັນວິບາກແຫ່ງກໍາ ໓ ຢ່າງ ຄື (໑) ການໃຫ້ (໒) ການຂົ່ມໃຈ (໓) ການສັງລວມ ແລ້ວຈຶ່ງສະເດັດເຂົ້າໄປສູ່ຫໍຍອດ ມະຫາວິຍູຫະ ປະທັບຢືນຢູ່ປະຕູ ຊົງເປັ່ງພຣະອຸທານວ່າ

"ການວິຕົກເອີຍ ເຈົ້າຈົ່ງຢຸດ ຈົ່ງກັບພຽງທໍ່ນີ້ເທີ້ນ
ພະຍາບາດວິຕົກເອີຍ ເຈົ້າຈົ່ງຢຸດ ຈົ່ງກັບພຽງທໍ່ນີ້ເທີ້ນ
ວິຫິງສາເອີຍ ເຈົ້າຈົ່ງຢຸດ ຈົ່ງກັບພຽງເທົ່ານີ້ເທີ້ນ"

[໒໓໑] ດູຣາ ອານົນ ຈາກນັ້ນ ພຣະເຈົ້າມະຫາສຸທັດສະນະສະເດັດເຂົ້າໄປໃນຫໍຍອດມະຫາວິຍູຫະ ປະທັບນັ່ງເທິງບັນລັງຄໍາ ຊົງສະຫງັດຈາກການ ແລະອະກຸສົນທໍາທັງຫຼາຍແລ້ວຊົງບັນລຸປະຖົມມະຊານ ທີ່ມີວິຕົກ[໑] ວິຈານ ປີຕິ ແລະ ສຸກ ອັນເກີດຈາກວິເວກຢູ່ ເພາະວິຕົກແລະວິຈານສະຫງົບລະງັບດັບໄປ ຊົງບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກວິຈານ ມີແຕ່ປີຕິ ແລະ ສຸກ ອັນເກີດຈາກສະມາທິຢູ່ ເພາະປີຕິຈາງຄາຍໄປ ມີອຸເປກຂາມີສະຕິສໍາປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ຊົງບັນລຸຕະຕິຍະຊານທີ່ພຣະອະຣິຍະສັນລະເສີນວ່າ "ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ" ເພາະລະສຸກ ແລະທຸກໄດ້ ເພາະໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວ ຊົງບັນລຸຈະຕຸດຖະຊານບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່

[໒໓໒] ດູຣາ ອານົນ ຈາກນັ້ນ ພຣະເຈົ້າມະຫາສຸທັດສະນະ ຊົງອອກຈາກຫໍຍອດມະຫາວິຍູຫະ ສະເດັດເຂົ້າໄປສູ່ຫໍຍອດຄໍາປະທັບນັ່ງເທິງບັນລັງເງິນ ຊົງມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າສັດ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນໄພບູນເປັນມະຫັກຄະຕະບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ຊົງມີກະລຸນາຈິດ ຯລຯ

ຊົງມີມຸທິຕາຈິດ ຯລຯ

ຊົງມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດຊ່ຽງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະບໍ່ມີຂອບເຂດ ບໍ່ມີເວນບໍ່ມີຄວາມບຽດບຽນຢູ່

## ເມືອງຂຶ້ນ ໘໔,໐໐໐ ເມືອງ

[໔໗໓] ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະ ຊົງມີເມືອງຂຶ້ນ ໘໔,໐໐໐ ເມືອງມີເມືອງກຸສາວະດີຣາດຊະທານີເປັນເມືອງຫຼວງ ຊົງມີຜາສາດ ໘໔,໐໐໐ ຫຼັງ ມີທຳມະຜາສາດເປັນບ່ອນປະທັບ ຊົງມີຫໍຍອດ ໘໔,໐໐໐ ຫຼັງ ມີຫໍຍອດມະຫາວິຍູຫະ ເປັນບ່ອນປະທັບ ຊົງມີບັນລັງ ໘໔,໐໐໐ ບັນລັງ ເປັນບັນລັງຄຳ ບັນລັງເງິນ ບັນລັງງາ ບັນລັງແກ້ວບຸດສະຣາຄຳ ປູລາດດ້ວຍພົມຂົນສັດຍອຍຍາວ ປູລາດດ້ວຍຜ້າສັກກະຫຼາດ ປູລາດດ້ວຍຜ້າຖັກລວດລາຍ ປູລາດດ້ວຍໜັງກວາງຢ່າງດີ ມີພະນັກອິງສູງຫຸ້ມນວມສີແດງທັງ ໔ ຂ້າງ ຊົງມີຊ້າງ ໘໔,໐໐໐ ໂຕ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕານ່າງຄຳ ມີພະຍາຊ້າງຕະກູນອຸໂປສົດເປັນຊ້າງຊົງ ມີມ້າ ໘໔,໐໐໐ ໂຕ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕານ່າງຄຳ ມີພະຍາມ້າວະລາຫົກເປັນມ້າຊົງ ມີຣາດຊະລົດ ໘໔,໐໐໐ ຄັນ ຫຸ້ມດ້ວຍໜັງຣາດຊະສີ ຫຸ້ມດ້ວຍໜັງເສືອໂຄ່ງ ຫຸ້ມດ້ວຍໜັງເສືອເຫຼືອງ ຫຸ້ມດ້ວຍຜ້າກຳພົນເຫຼືອງ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕານ່າງຄຳ ມີເວດຊະຍັນຣາດຊະລົດເປັນລົດພຣະທີ່ນັ່ງ ຊົງມີແກ້ວ ໘໔,໐໐໐ ດວງ ມີມະນີແກ້ວເປັນຊັ້ນຍອດ ຊົງມີສະຕີ ໘໔,໐໐໐ ນາງ ມີພຣະນາງສຸພັດທາເທວີເປັນອັກຄະຣະມະເຫສີ ຊົງມີຄະຫະບໍດີ ໘໔,໐໐໐ ຄົນ ມີຄະຫະບໍດີແກ້ວເປັນຫົວໜ້າ ຊົງມີກະສັດຜູ້ສະວາມິພັກ ໘໔,໐໐໐ ອົງມີປະຣິນາຍົກແກ້ວເປັນຫົວໜ້າ ຊົງມີງົວນົມ ໘໔,໐໐໐ ໂຕ ທີ່ພ້ອມຈະໃຫ້ນ້ຳນົມຈົນສາມາດເອົາພາຊະນະຮອງຮັບໄດ້ ຊົງມີຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະ ຜ້າກຳພົນເນື້ອດີ ລວມ ໘໔,໐໐໐ ໂກດ ຊົງມີພາເຂົ້າພຣະກະຍາຫານທີ່ມີຄົນນຳມາຖວາຍທັງເຊົ້າ ແລະແລງ ໘໔,໐໐໐ ພາ

[໔໗໔] ດູຣາ ອານົນ ສະໄໝນັ້ນ ຊ້າງ ໘໔,໐໐໐ ໂຕ ມາສູ່ທີ່ເຝົ້າພຣະເຈົ້າມະຫາສຸທັດສະນະທັງເຊົ້າແລະແລງ ພຣະອົງຊົງດຳຣິແນວນີ້ວ່າ "ຊ້າງຂອງເຮົາທັງ ໘໔,໐໐໐ ໂຕນີ້ມາຫາເຮົາທັງເຊົ້າແລະແລງ ທາງທີ່ດີຄວນໃຫ້ຊ້າງຂອງເຮົາ ໔໔,໐໐໐ ເຊືອກ ມາຫາເຮົາ ໑໐໐ ປີຕໍ່ເທື່ອໜຶ່ງຈະດີກວ່າ" ຈຶ່ງຮັບສັ່ງຮຽກປະຣິນາຍົກແກ້ວມາຕັດວ່າ "ສະຫາຍປະຣິນາຍົກແກ້ວ ຊ້າງ ໘໔,໐໐໐ ເຊືອກນີ້ມາຫາເຮົາທັງເຊົ້າ ແລະ ແລງ ຕໍ່ໄປຢ່າໃຫ້ເປັນຈັ່ງຊັ້ນເລີຍ ຄວນໃຫ້ຊ້າງ ໔໔, ໐໐໐ ໂຕ ມາຫາເຮົາ ໑໐໐ ປີ ຕໍ່ເທື່ອໜຶ່ງເທີ້ນ" ປະຣິນາຍົກແກ້ວທູນຮັບສະໜອງພຣະບໍຣົມຣາດຊະໂອງການ ຕໍ່ມາຊ້າງ ໔໔,໐໐໐ ເຊືອກມາສູ່ທີ່ເຝົ້າຂອງພຣະເຈົ້າມະຫາສຸທັດສະນະ ໑໐໐ ປີຕໍ່ເທື່ອໜຶ່ງ

## ພຣະນາງສຸພັດທາເທວີເຂົ້າເຝົ້າ

[໔໗໕] ດູຣາ ອານົນ ເມື່ອລ່ວງໄປຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ພຣະນາງສຸພັດທາເທວີ ຊົງດຳຣິແນວນີ້ວ່າ "ເປັນເວລາດົນມາແລ້ວ ທີ່ເຮົາໄດ້ເຂົ້າເຝົ້າພຣະເຈົ້າມະຫາສຸທັດສະນະ ເຮົາຄວນເຂົ້າໄປເຝົ້າພຣະອົງອີກ" ຈຶ່ງຮັບສັ່ງຮຽກພຣະສະໜົມມາຕັດວ່າ "ມາເທີ້ນທ່ານ

ທັງຫຼາຍ ຈົ່ງອາບນ້ຳສະຜົມຫົ່ມຜ້າສີເຫຼືອງໃຫ້ແກ່ເຮົາ ດົນແລ້ວທີ່ເຮົາໄດ້ເຂົ້າເຝົ້າພຣະເຈົ້າມະຫາສຸທັດສະນະ ເຮົາຈະໄປເຂົ້າເຝົ້າພຣະອົງອີກ" ພວກພຣະສະໜົມທູນຮັບສະໜອງພຣະຣາດເສົາວະນີແລ້ວອາບນ້ຳ ສະຜົມ ຫົ່ມຜ້າສີເຫຼືອງໃຫ້ແກ່ນາງ ເຂົ້າໄປເຝົ້າພຣະນາງສຸພັດທາເທວີເຖິງບ່ອນປະທັບ ໃນທີ່ນັ້ນ ພຣະນາງສຸພັດທາເທວີຮັບສັ່ງຮຽກປະຣິນາຍົກແກ້ວມາຕັດວ່າ "ພໍ່ປະຣິນາຍົກແກ້ວ ທ່ານຈົ່ງຈັດໝູ່ເສນາສີ່ເຫຼົ່າໃຫ້ພ້ອມ ດົນແລ້ວທີ່ເຮົາບໍ່ໄດ້ເຂົ້າເຝົ້າພຣະເຈົ້າມະຫາສຸທັດສະນະ ເຮົາຈະໄປເຂົ້າເຝົ້າພຣະອົງອີກ" ປະຣິນາຍົກແກ້ວທູນຮັບສະໜອງພຣະຣາດເສົາວະນີ ແລ້ວຈັດໝູ່ເສນາສີ່ເຫຼົ່າໄວ້ໃຫ້ຮຽບຮ້ອຍ ຂາບທູນພຣະນາງສຸພັດທາເທວີແນວນີ້ວ່າ "ຂໍເດຊະພຣະເທວີ ຂ້າພຣະບາດຈັດໝູ່ເສນາສີ່ເຫຼົ່າພ້ອມແລ້ວ ຂໍພຣະອົງຈົ່ງຊົງກຳນົດເວລາທີ່ສົມຄວນເທີ້ນ ຂ້ານ້ອຍ"

ຈາກນັ້ນ ພຣະນາງສຸພັດທາເທວີ ພ້ອມດ້ວຍໝູ່ເສນາສີ່ເຫຼົ່າ ແລະ ພຣະສະໜົມໄດ້ສະເດັດເຂົ້າໄປສູ່ທຳມະຜາສາດ ຂຶ້ນສູ່ທຳມະຜາສາດເຂົ້າໄປສູ່ຫໍຍອດມະຫາວິຍູຫະ ປະທັບຢືນຈັບບານປະຕູຫໍຍອດມະຫາວິຍູຫະຢູ່

ດູຣາ ອານົນ ລຳດັບນັ້ນ ພຣະເຈົ້າມະຫາສຸທັດສະນະຊົງໄດ້ຍິນສຽງ ຈິ່ງຊົງດຳຣິແນວນີ້ວ່າ "ສຽງຫຍັງນໍ ຄື ສຽງຂອງໝູ່ມະຫາຊົນ" ຈິ່ງສະເດັດອອກຈາກຫໍຍອດມະຫາວິຍູຫະ ທອດພຣະເນດເຫັນພຣະນາງສຸພັດທາເທວີ ປະທັບຢືນຈັບບານປະຕູຢູ່ ຈິ່ງຕັດກັບພຣະນາງສຸພັດທາເທວີແນວນີ້ວ່າ "ດູຣາ ເທວີ ຈົ່ງຢຸດຢູ່ບ່ອນນັ້ນ ຢ່າເຂົ້າມາເລີຍ" ດູຣາ ອານົນ ລຳດັບນັ້ນ ພຣະອົງຮັບສັ່ງຮຽກຣາດຊະບຸຣຸດຄົນໜຶ່ງມາຕັດວ່າ "ທ້າວຜູ້ຈະເລີນ ມາທາງນີ້ ທ້າວຈົ່ງນຳບັນລັງຄຳຈາກຫໍຍອດມະຫາວິຍູຫະໄປຕັ້ງໃນສວນຕານຄຳ" ຣາດຊະບຸຣຸດນັ້ນທູນຮັບພຣະສະໜອງຕາມພຣະຣາດຊະດຳຣັດແລ້ວ ເຊີນບັນລັງຄຳຈາກຫໍຍອດມະຫາວິຍູຫະໄປຕັ້ງໄວ້ໃນສວນຕານຄຳ ຈາກນັ້ນ ພຣະເຈົ້າມະຫາສຸທັດສະນະຊົງສຳເລັດສີຫະໄສຍາໂດຍສະແຄງເບື້ອງຂວາຊ້ອນພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະຕັ້ງໝັ້ນຢູ່

[໔໖໖] ດູຣາ ອານົນ ລຳດັບນັ້ນ ພຣະນາງສຸພັດທາເທວີຊົງດຳຣິແນວນີ້ວ່າ "ພຣະອິນຊີຂອງພຣະເຈົ້າມະຫາສຸທັດສະນະຜ່ອງໃສແທ້ ພຣະສະຫວີວັນບໍລິສຸດສົດໃສ ຂໍໃຫ້ພຣະອົງຢ່າໄດ້ສະຫວັນນະຄົດເລີຍ" ຈິ່ງຂາບທູນແນວນີ້ວ່າ "ຂໍເດ ຊະພຣະອົງ ຊົງມີເມືອງຂຶ້ນ ໘໔,໐໐໐ ເມືອງ ມີເມືອງກຸສາວະດີຣາດຊະທານີເປັນເມືອງຫຼວງ ໂຜດຊົງພໍພຣະທະໄທເມືອງເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຜາສາດ ໘໔,໐໐໐ ຫຼັງ ມີທຳມະຜາສາດເປັນທີ່ປະທັບ ໂຜດ ຊົງພໍພຣະທະໄທຜາສາດເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຫໍຍອດ ໘໔,໐໐໐ ຫຼັງ ມີຫໍຍອດມະຫາວິຍູຫະເປັນທີ່ປະທັບ ໂຜດຊົງພໍພຣະທະໄທຫໍຍອດເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີບັນລັງ ໘໔,໐໐໐ ບັນລັງເປັນ ບັນລັງຄຳ ບັນລັງເງິນ ບັນລັງງາ ບັນລັງແກ້ວ ບຸດສະຣາຄຳ ປູລາດດ້ວຍພົມຂົນສັດຍອຍຍາວ ປູລາດດ້ວຍ

ຜ້າສັກກະຫຼາດ ປູລາດດ້ວຍຜ້າຖັກລວດລາຍ ປູລາດດ້ວຍໜັງກວາງຢ່າງດີ ມີພະນັກອີງສູງ ຫຸ້ມນວມສີແດງທັງ ໔ ຂ້າງ ໂຜດຊົງພໍພຣະທະໄທບັນລັງເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນຢູ່ຕໍ່ ຊົງມີຊ້າງ ໘໔,໐໐໐ ເຊືອກ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕາໜ່າງຄຳ ມີພະຍາຊ້າງຕະກູນອຸໂປສົດເປັນຊ້າງຊົງ ໂປດຊົງພໍພຣະທະໄທຊ້າງເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີມ້າ ໘໔,໐໐໐ ໂຕ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕາໜ່າງຄຳ ມີພະຍາມ້າວະລາຫົກເປັນມ້າຊົງ ໂປດຊົງພໍພຣະທະໄທມ້າເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຣາດຊະລົດ ໘໔,໐໐໐ ຄັນ ຫຸ້ມດ້ວຍໜັງຣາດຊະສີ ຫຸ້ມດ້ວຍໜັງເສືອໂຄ່ງ ຫຸ້ມດ້ວຍໜັງເສືອເຫຼືອງ ຫຸ້ມດ້ວຍຜ້າກຳພົນເຫຼືອງ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕາໜ່າງຄຳ ມີເວດຊະຍັນຣາດຊະລົດເປັນລົດພຣະທີ່ນັ່ງໂຜດຊົງພໍພຣະທະໄທຣາດຊະລົດເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີແກ້ວ ໘໔,໐໐໐ ດວງ ມີມະນີແກ້ວເປັນຊັ້ນຍອດ ໂຜດຊົງພໍພຣະທະໄທແກ້ວເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີສະຕີ ໘໔,໐໐໐ ນາງ ມີນາງແກ້ວເປັນຫົວໜ້າໂຜດຊົງພໍພຣະທະໄທສະຕີເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຄະຫະບໍດີ ໘໔,໐໐໐ ຄົນ ມີຄະຫະບໍດີແກ້ວເປັນຫົວໜ້າ ໂຜດຊົງພໍພຣະທະໄທຄະຫະບໍດີເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີກະສັດຜູ້ສະວາມິພັກ ໘໔,໐໐໐ ອົງ ມີປະຣິນາຍົກແກ້ວເປັນຫົວໜ້າ ໂຜດຊົງພໍພຣະທະໄທກະສັດເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີງົວນົມ ໘໔,໐໐໐ ໂຕ ທີ່ພ້ອມຈະໃຫ້ນ້ຳນົມຈົນສາມາດເອົາພາຊະນະຮອງຮັບໄດ້ ໂຜດຊົງພໍພຣະທະໄທງົວນົມເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະ ຜ້າກຳພົນເນື້ອດີລວມ ໘໔,໐໐໐ ໂກດ ໂຜດຊົງພໍພຣະທະໄທຜ້າເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີພາເຂົ້າພຣະກະຍາຫານ ທີ່ມີຄົນນຳມາຖວາຍທັງເຊົ້າ ແລະແລງ ໘໔,໐໐໐ ພາໂຜດຊົງພໍພຣະທະໄທພາເຂົ້າພຣະກະຍາຫານເຫຼົ່ານີ້ ໂຜດຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ"

## ພຣະເຈົ້າມະຫາສຸທັດສະນະຊົງເກີດຄວາມສັງເວດ

[໔໗] ດູຣາ ອານົນ ເມື່ອພຣະນາງສຸພັດທາເທວີຂາບທູນແນວນີ້ແລ້ວ ພຣະເຈົ້າມະຫາສຸທັດສະນະໄດ້ຕັດຕອບແນວນີ້ວ່າ "ດູຣາ ເທວີ ນາງເວົ້າທັກທາຍເຮົາ ດ້ວຍສິ່ງອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈມາດົນນານ ແຕ່ມາຮອດເທື່ອສຸດທ້າຍ ນາງທັກທາຍເຮົາດ້ວຍສິ່ງອັນບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈເລີຍ" ພຣະນາງສຸພັດທາເທວີທູນຖາມວ່າ "ຂ້ານ້ອຍຈະຂາບທູນແນວໃດນໍ? ຈຶ່ງຈະພໍພຣະທະໄທ"

ພຣະອົງຕັດວ່າ "ດູຣາ ເທວີ ນາງຈົ່ງທັກທາຍເຮົາແນວນີ້ວ່າ "ຂໍເດຊະຄວາມພັດພາກຄວາມປະຖິ້ມ ຄວາມປ່ຽນແປງເປັນຢ່າງອື່ນ ຈາກຂອງຮັກຂອງພໍໃຈທຸກຢ່າງຈະຕ້ອງມີ ພຣະອົງ

ຢ່າສະຫວັນນະຄິດທັງທີ່ຊົງມີຄວາມຫ່ວງໄຍຢູ່ເລີຍ ເພາະການສະຫວັນນະຄິດຂອງຜູ້ຍັງມີຄວາມຫ່ວງໄຍເປັນທຸກ ການສະຫວັນນະຄິດຂອງຜູ້ຍັງມີຄວາມຫ່ວງໄຍ ບັນດິດຕິຽນ ພຣະອົງຊົງມີເມືອງຂຶ້ນ ໘໔,໐໐໐ ເມືອງ ມີເມືອງກຸສາວະດີຣາດຊະທານີເປັນເມືອງຫຼວງ ໂຜດຊົງລະຄວາມພໍພຣະທະໄທເມືອງເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຜາສາດ ໘໔,໐໐໐ ຫຼັງ ມີທຳມະຜາສາດເປັນທີ່ປະທັບ ໂຜດຊົງລະຄວາມພໍພຣະທະໄທຜາສາດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຫໍຍອດ ໘໔,໐໐໐ ຫຼັງ ມີຫໍຍອດມະຫາວິຍູຫະເປັນທີ່ປະທັບ ໂຜດຊົງລະຄວາມພໍພຣະທະໄທຫໍຍອດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີບັນລັງ ໘໔,໐໐໐ ບັນລັງ ເປັນບັນລັງຄຳ ບັນລັງ ເງິນ ບັນລັງງາ ບັນລັງແກ້ວບຸດສະຣາຄຳ ປູລາດດ້ວຍພົມຂົນສັດຍອຍຍາວ ປູລາດດ້ວຍຜ້າສັກກະຫຼາດ ປູລາດດ້ວຍຜ້າຖັກລວດລາຍ ປູລາດດ້ວຍໜັງກວາງຢ່າງດີ ມີພະນັກອີງສູງຫຸ້ມນວມສີແດງທັງ ໔ ຂ້າງ ໂຜດຊົງລະຄວາມພໍພຣະທະໄທໃນບັນລັງເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຊ້າງ ໘໔,໐໐໐ ໂຕ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕານ່າງຄຳ ມີພະຍາຊ້າງຕະກູນອຸໂປສົດເປັນຊ້າງຊົງ ໂປດຊົງລະຄວາມພໍພຣະທະໄທຊ້າງເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີມ້າ ໘໔,໐໐໐ ໂຕ ມ້າມີເຄື່ອງປະດັບຄຳມີທຸງຄຳຄຸມດ້ວຍຕານ່າງຄຳມີພະຍາມ້າວະລາຫົກເປັນມ້າຊົງ ໂປດຊົງລະຄວາມພໍພຣະທະໄທມ້າເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຣາດຊະລົດ ໘໔,໐໐໐ ຄັນຫຸ້ມດ້ວຍໜັງຣາດຊະສີ ຫຸ້ມດ້ວຍໜັງເສືອໂຄ່ງ ຫຸ້ມດ້ວຍໜັງເສືອເຫຼືອງ ຫຸ້ມດ້ວຍຜ້າກຳພົນເຫຼືອງມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕານ່າງຄຳ ມີເວດຊະຍັນຣາດຊະລົດເປັນລົດພຣະທີ່ນັ່ງ ໂຜດຊົງລະຄວາມພໍພຣະທະໄທຣາດຊະລົດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີແກ້ວ ໘໔,໐໐໐ ດວງ ມີມະນີແກ້ວເປັນທີ່ໂຜດປານ ໂຜດຊົງລະຄວາມພໍພຣະທະໄທແກ້ວເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີສະຕີ ໘໔,໐໐໐ ນາງມີພຣະນາງສຸພັດທາເທວີເປັນອັກຄະຣະມະເຫສີ ໂຜດຊົງລະຄວາມພໍພຣະທະໄທສະຕີເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຄະຫະບໍດີ ໘໔,໐໐໐ ຄົນ ມີຄະຫະບໍດີແກ້ວເປັນຫົວໜ້າ ໂຜດຊົງລະຄວາມພໍພຣະທະໄທຄະຫະບໍດີເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີກະສັດຜູ້ສະວາມິພັກດິ໌ ໘໔,໐໐໐ ອົງ ມີປະຣິນາຍົກແກ້ວເປັນຫົວໜ້າ ໂຜດຊົງລະຄວາມພໍພຣະທະໄທກະສັດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີງົວນົມ ໘໔,໐໐໐ ໂຕທີ່ພ້ອມຈະໃຫ້ນ້ຳນົມຈົນສາມາດເອົາພາຊະນະຣອງຮັບໄດ້ໂຜດຊົງລະຄວາມພໍພຣະທະໄທງົວນົມເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະຜ້າກຳພົນເນື້ອດີ ຣວມ ໘໔,໐໐໐ໂກຕິ ໂຜດຊົງລະຄວາມພໍພຣະທະໄທຜ້າເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີພາເຂົ້າພຣະກະຍາຫານທີ່ມີຄົນນຳມາຖວາຍທັງເຊົ້າ ແລະ ເຢັນ ໘໔,໐໐໐ ສຳຣັບໂຜດຊົງລະຄວາມພໍພຣະທະໄທ

ຈາກພາເຂົ້າພຣະກະຍາຫານເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ"

[໔໗໘] ດູຣາ ອານົນ ເມື່ອພຣະເຈົ້າມະຫາສຸທັດສະນະຕັດແນວນີ້ ພຣະນາງສຸພັດທາເທວີຊົງພຣະກັນແສງ ຫຼັ່ງພຣະອັດສຸຊົນ ຊົງເຊັດພຣະອັດສຸຊົນແລ້ວໄດ້ຂາບທູນພຣະເຈົ້າມະຫາສຸທັດສະນະແນວນີ້ວ່າ "ຂໍເດຊະ ຄວາມພັດພາກ ຄວາມປະຖິ້ມ ຄວາມປ່ຽນແປງເປັນຢ່າງອື່ນຈາກຂອງຮັກ ຂອງພໍໃຈທຸກຢ່າງຈະຕ້ອງມີ ພຣະອົງຢ່າສະຫວັນນະຄົດທັງທີ່ຊົງຍັງມີຄວາມຫ່ວງໄຍຢູ່ເລີຍ ເພາະການສະຫວັນນະຄົດຂອງຜູ້ຍັງມີຄວາມຫ່ວງໄຍເປັນທຸກ ການສະຫວັນນະຄົດຂອງຜູ້ຍັງມີຄວາມຫ່ວງໄຍບັນດິດຕິຕຽນ ພຣະອົງຊົງມີເມືອງຂຶ້ນ ໘໔,໐໐໐ ເມືອງ ມີເມືອງກຸສາວະດີຣາດຊະທານີເປັນເມືອງຫຼວງ ໂຜດຊົງລະຄວາມພໍພຣະທະໄທເມືອງເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຜາສາດ ໘໔,໐໐໐ ຫຼັງ ທຳມະຜາສາດເປັນບ່ອນປະທັບ ໂຜດຊົງລະຄວາມພໍພຣະທະໄທຜາສາດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຫໍຍອດ ໘໔,໐໐໐ ຫຼັງ ມີຫໍຍອດມະຫາວິຍູຫະເປັນບ່ອນປະທັບ ໂຜດຊົງລະຄວາມພໍພຣະທະໄທຫໍຍອດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີບັນລັງ ໘໔,໐໐໐ ບັນລັງເປັນບັນລັງຄຳ ບັນລັງເງິນ ບັນລັງງາ ບັນລັງແກ້ວບຸດສະຣາຄຳ ປູລາດດ້ວຍພົມຂົນສັດຍອຍຍາວ ປູລາດດ້ວຍຜ້າສັກກະຫຼາດ ປູລາດດ້ວຍຜ້າຖັກລວດລາຍ ປູລາດດ້ວຍໜັງກວາງຢ່າງດີມີພະນັກອີງສູງ ຫຸ້ມນວມສີແດງທັງ ໔ ຂ້າງ ໂຜດຊົງລະຄວາມພໍພຣະທະໄທບັນລັງເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຊ້າງ ໘໔,໐໐໐ ຊ້າງ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕານ່າງຄຳ ມີພະຍາຊ້າງຕະກູນອຸໂປສົດເປັນຊ້າງຊົງ ໂຜດຊົງລະຄວາມພໍພຣະທະໄທຊ້າງເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີມ້າ ໘໔,໐໐໐ ໂຕ ມ້າມີເຄື່ອງປະດັບຄຳ ມີທຸງຄຳ ຄຸມດ້ວຍຕານ່າງຄຳ ມີພະຍາມ້າວະລາຫົກເປັນມ້າຊົງ ໂປດຊົງລະຄວາມພໍພຣະທະໄທມ້າເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຣາດຊະລົດ ໘໔,໐໐໐ ຄັນຫຸ້ມດ້ວຍໜັງຣາດຊະສີ ຫຸ້ມດ້ວຍໜັງເສືອໂຄ່ງ ຫຸ້ມດ້ວຍໜັງເສືອເຫຼືອງ ຫຸ້ມດ້ວຍຜ້າກຳພົນເຫຼືອງ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕານ່າງຄຳ ມີເວດຊະຍັນຣາດຊະລົດເປັນລົດພຣະທີ່ນັ່ງ ໂຜດຊົງລະຄວາມພໍພຣະທະໄທຣາດຊະລົດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີແກ້ວ ໘໔,໐໐໐ ດວງ ມີມະນີແກ້ວເປັນຊັ້ນຍອດ ໂຜດຊົງລະຄວາມພໍພຣະທະໄທແກ້ວເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີສະຕີ ໘໔,໐໐໐ ນາງ ມີນາງແກ້ວເປັນຫົວໜ້າ ໂຜດຊົງລະຄວາມພໍພຣະທະໄທສະຕີເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຄະຫະບໍດີ ໘໔,໐໐໐ ຄົນມີຄະຫະບໍດີແກ້ວເປັນຫົວໜ້າ ໂຜດຊົງລະຄວາມພໍພຣະທະໄທຄະຫະບໍດີເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີກະສັດຜູ້ສະວາມິພັກ ໘໔,໐໐໐ ອົງ ມີປະຣິນາຍົກແກ້ວເປັນຫົວໜ້າ ໂຜດຊົງລະຄວາມພໍພຣະທະໄທກະສັດເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີງົວນົມ ໘໔,໐໐໐ ໂຕ ທີ່ພ້ອມຈະໃຫ້ນ້ຳນົມ ຈົນສາມາດເອົາພາຊະນະຮອງຮັບໄດ້ ໂຜດຊົງລະ

ຄວາມພໍພຣະທະໄທງົວນົມເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະ ຜ້າກຳພົນເນື້ອດີ ລວມ ໘໔,໐໐໐ ໂກດ ໂຜດຊົງລະຄວາມພໍພຣະທະໄທຜ້າເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ ຊົງມີພາເຂົ້າພຣະກະຍາຫານທີ່ມີຄົນນຳມາຖວາຍທັງເຊົ້າ ແລະ ແລງ ໘໔,໐໐໐ ພາ ໂຜດຊົງລະຄວາມພໍພຣະທະໄທພາເຂົ້າພຣະກະຍາຫານເຫຼົ່ານີ້ ໂຜດຢ່າຊົງມີເຍື່ອໃຍໃນການດຳຣົງພະຊົນຢູ່ຕໍ່ເທີ້ນ"

## ພຣະເຈົ້າມະຫາສຸທັດສະນະສະເດັດສູ່ພົມມະໂລກ

[໔໙໙] ດູຣາ ອານົນ ຕໍ່ຈາກນັ້ນບໍ່ໂດນ ພຣະເຈົ້າມະຫາສຸທັດສະນະກໍໄດ້ສະຫວັນນະຄົດ ພຣະອົງຊົງມີຄວາມຮູ້ສຶກໃນຂະນະໃກ້ຈະສະຫວັນນະຄົດ ຄື ຄະຫະບໍດີ ຫຼື ບຸດຄະຫະບໍດີ ຜູ້ບໍລິໂພກໂພຊະນະທີ່ຖືກໃຈແລ້ວ ຍ່ອມເມົາໃນຣົດອາຫານ ສະນັ້ນ ພຣະເຈົ້າມະຫາສຸທັດສະນະເມື່ອສະຫວັນນະຄົດແລ້ວໄດ້ໄປເກີດໃນສຸກຄະຕິພົມມະໂລກ

ດູຣາ ອານົນ ພຣະເຈົ້າມະຫາສຸທັດສະນະ ຊົງຫຼິ້ນຄືເດັກນ້ອຍຢູ່ ໘໔,໐໐໐ ປີ ຊົງດຳຣົງຕຳແໜ່ງອຸປະຣາດ ໘໔,໐໐໐ ປີ ຊົງຄອງຣາດຢູ່ ໘໔,໐໐໐ ປີ ຊົງດຳຣົງເພດຄະຫັດປະພຶດພົມມະຈັນຢູ່ໃນທຳມະຜາສາດ ໘໔,໐໐໐ ປີ ເພາະຊົງຈະເລີນພົມວິຫານ ໔ ປະການ ຫຼັງຈາກສະຫວັນນະຄົດແລ້ວ ຈຶ່ງໄປເກີດໃນພົມມະໂລກ

## ພຣະຜູ້ມີພຣະພາກເຈົ້າຊົງສະຫຼຸບພຣະທຳມະເທສະນາ

[໔໗໐] ດູຣາ ອານົນ ທ່ານຄົງເຫັນແນວນີ້ວ່າ "ພຣະເຈົ້າມະຫາສຸທັດສະນະ ໃນສະໄໝນັ້ນຄົງຈະເປັນຄົນອື່ນແນ່ນອນ" ແຕ່ບໍ່ຄວນເຫັນແນວນັ້ນ ເຮົານີ້ເອງເປັນພຣະເຈົ້າມະຫາສຸທັດສະນະໃນສະໄໝນັ້ນ ເຮົາມີເມືອງຂຶ້ນ ໘໔,໐໐໐ ເມືອງ ມີເມືອງກຸສາວະດີຣາດຊະທານີເປັນເມືອງຫຼວງ ມີຜາສາດ ໘໔,໐໐໐ ຫຼັງ ມີທຳມະຜາສາດເປັນບ່ອນຢູ່ ມີຫໍຍອດ ໘໔,໐໐໐ ຫຼັງ ມີຫໍຍອດມະຫາວິຍູຫະ ເປັນບ່ອນຢູ່ ມີບັນລັງ ໘໔,໐໐໐ ບັນລັງ ເປັນບັນລັງຄຳ ບັນລັງເງິນ ບັນລັງງາ ບັນລັງແກ້ວບຸດສະຣາຄຳ ປູລາດດ້ວຍພົມຂົນສັດຍອຍຍາວ ປູລາດດ້ວຍຜ້າສັກກະຫຼາດ ປູລາດດ້ວຍຜ້າຖັກລວດລາຍ ປູລາດດ້ວຍໜັງກວາງຢ່າງດີ ມີພະນັກອີງສູງ ຫຸ້ມນວມສີແດງທັງ ໔ ຂ້າງ ມີຊ້າງ ໘໔,໐໐໐ ຊ້າງ ມີເຄື່ອງປະດັບຄຳ ມີທຸງຄຳຄຸມດ້ວຍຕາໜ່າງຄຳມີພະຍາ ຊ້າງຕະກູນອຸໂປສົດເປັນຊ້າງຊົງ ມີມ້າ ໘໔,໐໐໐ ໂຕ ມ້າມີເຄື່ອງປະດັບຄຳມີທຸງຄຳຄຸມດ້ວຍຕາໜ່າງຄຳມີພະຍາມ້າວະລາຫົກເປັນມ້າຊົງ ມີຣາດຊະລົດ ໘໔,໐໐໐ ຄັນ ຫຸ້ມດ້ວຍໜັງຣາດຊະສີຫຸ້ມດ້ວຍໜັງເສືອໂຄ່ງ ຫຸ້ມດ້ວຍໜັງເສືອເຫຼືອງ ຫຸ້ມດ້ວຍຜ້າກຳພົນເຫຼືອງ ມີເຄື່ອງປະດັບຄຳມີທຸງຄຳຄຸມດ້ວຍຕາໜ່າງຄຳ ມີເວດຊະຍັນຣາດຊະລົດເປັນລົດພຣະທີ່ນັ່ງ ມີແກ້ວ ໘໔,໐໐໐ ດວງມີມະນີແກ້ວ

ເປັນຊັ້ນຍອດ ມີສະຕີ ໘໔,໐໐໐ ນາງ ມີພຣະນາງສຸພັດທາເທວີເປັນອັກຄະຣະມະເຫສີ ມີຄະຫະບໍດີ ໘໔,໐໐໐ ຄົນ ມີຄະຫະບໍດີແກ້ວເປັນຫົວໜ້າ ມີກະສັດຜູ້ສະວາມິພັກ ໘໔,໐໐໐ ອົງ ມີປະຣິນາຍົກແກ້ວເປັນຫົວໜ້າ ມີງົວນົມ ໘໔,໐໐໐ ໂຕ ທີ່ພ້ອມຈະໃຫ້ນ້ຳນົມຈົນສາມາດເອົາພາຊະນະຮອງຮັບໄດ້ ມີຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະ ຜ້າກຳພົນເນື້ອດີ ລວມ ໘໔,໐໐໐ ໂກດ ມີພາເຂົ້າທີ່ມີຄົນນຳມາຖວາຍທັງເຊົ້າ ແລະ ແລງ ໘໔,໐໐໐ ພາ.

[໔໗໑] ບັນດາເມືອງ ໘໔,໐໐໐ ເມືອງ ໃນສະໄໝນັ້ນ ເຮົາຢູ່ຄອບຄອງເມືອງດຽວທີ່ນັ້ນຄື ເມືອງກຸສາວະດີຣາດຊະທານີ ອັນມີຜາສາດ ໘໔,໐໐໐ ຫຼັງ ແຕ່ເຮົາກໍຢູ່ໃນຜາສາດຫຼັງດຽວທີ່ນັ້ນ ຄື ທຳມະຜາສາດ ມີຫໍຍອດ ໘໔,໐໐໐ ຫຼັງ ແຕ່ເຮົາກໍຢູ່ໄດ້ໃນຫໍຍອດຫຼັງດຽວທີ່ນັ້ນ ຄື ຫໍຍອດມະຫາວິຍູຫະ ມີບັນລັງ ໘໔,໐໐໐ ບັນລັງ ບັນລັງທີ່ເຮົາໃຊ້ສອຍຄືບັນລັງຄຳ ບັນລັງເງິນບັນລັງງາ ຫຼື ບັນລັງແກ້ວບຸດສະຣາຄຳ ບັນລັງໃດບັນລັງໜຶ່ງທີ່ນັ້ນ ມີຊ້າງ ໘໔,໐໐໐ ເຊືອກ ແຕ່ຊ້າງທີ່ເຮົາຂີ່ໄດ້ແທ້ກໍມີຢູ່ເຊືອກດຽວທີ່ນັ້ນ ຄື ພະຍາຊ້າງຕະກູນອຸໂປສົດ ມີມ້າ ໘໔,໐໐໐ ໂຕ ແຕ່ມ້າທີ່ເຮົາຂີ່ແທ້ກໍມີໂຕດຽວທີ່ນັ້ນ ຄື ພະຍາມ້າວະລາຫົກ ມີຣາດຊະລົດ ໘໔,໐໐໐ ຄັນຣາດຊະລົດທີ່ເຮົາໃຊ້ກໍມີຄັນດຽວທີ່ນັ້ນຄື ເວດຊະຍັນຣາດຊະລົດ ມີສະຕີ ໘໔,໐໐໐ ນາງ ນາງກະສັດ ຫຼື ນາງແພດຄົນດຽວທີ່ນັ້ນທີ່ປົນນິບັດເຮົາ ມີຜ້າ ໘໔,໐໐໐ ໂກດ ຜ້າທີ່ເຮົານຸ່ງມີພຽງຄູ່ດຽວທີ່ນັ້ນ ຈະເປັນຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ຫຼື ຜ້າກຳພົນເນື້ອດີກໍຕາມ ມີພາເຂົ້າ ໘໔,໐໐໐ ພາກໍຕາມ ແຕ່ພາເຂົ້າທີ່ເຮົາໃຊ້ບໍລິໂພກກໍມີພຽງແຕ່ພາດຽວທີ່ນັ້ນ ຄື ພາເຂົ້າສຸກທະນານໜຶ່ງເປັນຢ່າງຫຼາຍ ພ້ອມດ້ວຍກັບເຂົ້າພໍສົມຄວນແກ່ເຂົ້າສຸກນັ້ນ

[໔໗໘] ເບິ່ງເຖີ້ນອານົນ ສັງຂານທັງຫຼາຍເຫຼົ່ານັ້ນ ລ້ວນແລ້ວແຕ່ຈະຕ້ອງລ່ວງລັບດັບໄປຜັນປ່ຽນໄປເປັນທຳມະດາ ສັງຂານທັງຫຼາຍບໍ່ທ່ຽງແນວນີ້ແລ ສັງຂານທັງຫຼາຍບໍ່ໝັ້ນຍືນແນວນີ້ແລ ສັງຂານທັງຫຼາຍບໍ່ໜ້າຍິນດີແນວນີ້ແລ ດູຣາ ອານົນ ຂໍ້ນີ້ຈຶ່ງຄວນເບື່ອໜ່າຍຄວນຄາຍກຳໜັດ ຄວນຈະຫຼຸດພົ້ນໄປຈາກສັງຂານທັງປວງໂດຍແທ້

ດູຣາ ອານົນ ເຮົາຮູ້ວ່າການທີ່ເຮົາເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ຄອງຣາດໂດຍທຳເປັນໃຫຍ່ໃນແຜ່ນດິນ ມີມະຫາສະໝຸດທັງສີ່ເປັນຂອບເຂດໄດ້ຮັບໄຊຊະນະ ມີຣາດຊະອານາຈັກໝັ້ນຄົງ ສົມບູນດ້ວຍຣັດຕະນະ ໗ ປະການ ໄດ້ເຄີຍປະຖິ້ມສະຣີຣະໄວ້ໃນສະຖານທີ່ນີ້ເຖິງ ໖ ຄັ້ງແລ້ວ ການປະຖິ້ມສະຣີຣະເທື່ອນີ້ເປັນເທື່ອທີ ໗ ຂອງເຮົາ ດູຣາ ອານົນ ເຮົາບໍ່ເຫັນສະຖານທີ່ອື່ນໃດໃນໂລກ ພ້ອມທັງເທວະໂລກ ມານຣະໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດ ສະຖານທີ່ອື່ນ ທີ່ຕະຖາຄົດຈະສົມຄວນປະຖິ້ມສະຣີຣະເປັນເທື່ອທີ ໘ ເລີຍ”

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດພຣະຄາຖາປະພັນຕໍ່ໄປອີກວ່າ

"ສັງຂານທັງຫຼາຍບໍ່ທ່ຽງນໍ
ມີຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປເປັນທຳມະດາ
ເກີດຂຶ້ນແລ້ວຍ່ອມດັບໄປ
ການເຂົ້າໄປສະຫງົບລະງັບສັງຂານເຫຼົ່ານັ້ນເປັນຄວາມສຸກ"

**ມະຫາສຸທັດສະນະສູດທີ ໔ ຈົບ**

# ໕. ຊະນະວະສະພະສູດ

## ວ່າດ້ວຍຊະນະວະສະພະຍັກ

## ຊົງພະຍາກອນຊາວບ້ານນາທິກະຄາມເປັນຕົ້ນ"

[໒໗໖] ຂ້າພະເຈົ້າໄດ້ຟັງມາແບບນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຕຳໜັກດິນຈີ່ ໃນນາທິກະຄາມ ໄດ້ຊົງພະຍາກອນເຫຼົ່າຊົນຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ (ອຸປາສົກ ອຸປາສິກາ) ທີ່ລ່ວງລັບສັ່ງງຊີວິດໄປແລ້ວໃນແຄວ້ນຢູ່ອ້ອມຮອບຕ່າງ ໆ ຄື ແຄວ້ນກາສີ ແຄວ້ນໂກສົນ ແຄວ້ນວັດຊີ ແຄວ້ນມັນລະ ແຄວ້ນເຈຕີ ແຄວ້ນວັງສະ ແຄວ້ນກຸຣຸ ແຄວ້ນປັນຈາລະ ແຄວ້ນມັດສະ ແລະ ແຄວ້ນສຸຣະເສນະ ໃນເລື້ອງການອຸບັດເກີດຂຶ້ນວ່າ "ຄົນນັ້ນເກີດໃນບ່ອນນັ້ນ ຊາວບ້ານນາທິກະຄາມຫຼາຍກວ່າ ໕໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັ່ງງຊີວິດໄປແລ້ວ ເກີດເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການໝົດສັ່ງງໄປ ປະຣິນິບພານໃນໂລກນັ້ນແລ້ວບໍ່ຕ່າວຄືນມາຈາກໂລກນັ້ນອີກ

ຊາວບ້ານນາທິກະຄາມຫຼາຍກວ່າ ໙໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັ່ງງຊີວິດໄປແລ້ວ ເປັນພຣະສະກະທາຄາມີເພາະສັງໂຍດ ໓ ປະການໝົດສັ່ງງໄປ ແລະເພາະຣາຄະ ໂທສະ ໂມຫະ ເບົາບາງລົງ ກັບມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະເຮັດທີ່ສຸດແຫ່ງຄວາມທຸກໄດ້

ຊາວບ້ານນາທິກະຄາມຫຼາຍກວ່າ ໕໐໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັ່ງງຊີວິດໄປແລ້ວ ເປັນພຣະໂສດາບັນ ເພາະສັງໂຍດ ໓ ປະການໝົດສັ່ງງໄປ ບໍ່ມີທາງຕ່ຳຕ້ອຍ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ"

[໔໗໔] ຊາວບ້ານນາທິກະຄາມ ຜູ້ເຄີຍບົວຣະບັດ ພຣະຣັດຕະນະໄຕຣ ໄດ້ຟັງຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າ ໄດ້ຊົງພະຍາກອນເຫຼົ່າຊົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັ່ງງຊີວິດໄປແລ້ວ ໃນແຄວ້ນທີ່ຢູ່ອ້ອມຮອບຕ່າງ ໆ ຄື ແຄວ້ນກາສີ ແຄວ້ນໂກສົນ ແຄວ້ນວັດຊີ ແຄວ້ນມັນລະ ແຄວ້ນເຈຕີ ແຄວ້ນວັງສະ ແຄວ້ນກຸຣຸ ແຄວ້ນປັນຈາລະ ແຄວ້ນມັດສະ ແລະ ແຄວ້ນສຸຣະເສນະ ໃນເລື້ອງການອຸບັດຈຸດຕິຂື້ນວ່າ "ຄົນນັ້ນເກີດໃນບ່ອນນັ້ນ ໆ ຊາວບ້ານນາທິກະຄາມຫຼາຍກວ່າ ໕໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ເມື່ອລ່ວງລັບສັ່ງງຊີວິດໄປແລ້ວເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສັ່ງງໄປ ປະຣິນິບພານໃນໂລກນັ້ນບໍ່ຕ່າວຄືນມາຈາກໂລກນັ້ນອີກ

ຊາວບ້ານນາທິກະຄາມຫຼາຍກວ່າ ໙໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັ່ງງຊີວິດໄປແລ້ວ ເປັນພຣະສະກະທາຄາມີ ເພາະສັງໂຍດ ໓ ປະການໝົດສັ່ງງໄປ ແລະ ເພາະຣາຄະໂທສະໂມຫະເບົາບາງລົງ ກັບມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະເຮັດທີ່ສຸດແຫ່ງຄວາມທຸກໃຫ້ໝົດໄດ້

ຊາວບ້ານນາທິກະຄາມຫຼາຍກວ່າ ໕໐໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັ່ງງຊີວິດໄປແລ້ວ ເປັນພຣະໂສດາບັນເພາະສັງໂຍດ ໓ ປະການສັ່ງງໄປ ບໍ່ມີທາງຕ່ຳຕ້ອຍມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ"

ເພາະເຫດນັ້ນແລ ຊາວບ້ານນາທິກະຄາມ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣຈຶ່ງມີໃຈຍິນດີເບີກບານໃຈ ເກີດປີຕິ ແລະ ໂສມະນັດເພາະໄດ້ຟັງຄຳພະຍາກອນບັນຫາຂອງພຣະຜູ້ມີພຣະພາກເຈົ້າ

[໔໗໕] ທ່ານພຣະອານົນໄດ້ຟັງຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນເຫຼົ່າຊົນຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັ່ງງຊີວິດໄປແລ້ວ ໃນແຄວ້ນທີ່ຢູ່ອ້ອມຮອບ ຄື ແຄວ້ນກາສີ ແຄວ້ນໂກສົນ ແຄວ້ນວັດຊີ ແຄວ້ນມັນລະ ແຄວ້ນເຈຕີ ແຄວ້ນວັງສະ ແຄວ້ນກຸຣຸ ແຄວ້ນປັນຈາລະ ແຄວ້ນມັດສະ ແລະ ແຄວ້ນສຸຣະເສນະ ໃນເລື້ອງການອຸບັດວ່າ "ຄົນນັ້ນເກີດໃນບ່ອນນັ້ນ ຊາວບ້ານນາທິກະຄາມຫຼາຍກວ່າ ໕໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັ່ງງຊີວິດໄປແລ້ວ ເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການໝົດສັ່ງງໄປ ປະຣິນິບພານໃນໂລກນັ້ນບໍ່ຕ່າວຄືນມາຈາກໂລກນັ້ນອີກ"

ຊາວບ້ານນາທິກະຄາມຫຼາຍກວ່າ ໙໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັ່ງງຊີວິດໄປແລ້ວ ເປັນພຣະສະກະທາຄາມີ ເພາະສັງໂຍດ ໓ ປະການໝົດສັ່ງງໄປ ແລະ ເພາະຣາຄະໂທສະໂມຫະເບົາບາງລົງ ມາສູ່ໂລກນີ້ອີກພຽງເທື່ອດຽວກໍຈະທຳທີ່ສຸດແຫ່ງຄວາມທຸກໝົດໄປໄດ້

ຊາວບ້ານນາທິກະຄາມຫຼາຍກວ່າ ໕໐໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັງງຊີວິດໄປແລ້ວ ເປັນພຣະໂສດາບັນ ເພາະສັງໂຍດ ໓ ປະການໝົດສັງງໄປບໍ່ມີທາງຕ່ຳຕ້ອຍ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ"

ເພາະເຫດນັ້ນແລ ຊາວບ້ານນາທິກະຄາມ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ຈຶ່ງມີໃຈຍິນດີເບີກບານໃຈເກີດປີຕິ ແລະ ໂສມະນັດ ເພາະໄດ້ຟັງຄຳພະຍາກອນບັນຫາຂອງພຣະຜູ້ມີພຣະພາກເຈົ້າ"

## ຄຳຂາບທູນທຽບຄຽງຂອງພຣະອານົນ

[໔໘໙] ຄັ້ງນັ້ນ ທ່ານພຣະອານົນມີຄວາມຄິດແນວນີ້ວ່າ "ມີຊາວມະຄົດເຫຼົ່ານີ້ຈຳນວນຫຼາຍເປັນຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ແລະ ເປັນຣັດຕັນຍູ ເຊິ່ງລ່ວງລັບສັງງຊີວິດໄປແລ້ວ ແຕ່ເພາະພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນຊາວອັງຄະ ແລະ ຊາວມະຄົດຜູ້ເຫຼື້ອມໃສໃນພຣະພຸດ ເຫຼື້ອມໃສໃນພຣະທຳ ເຫຼື້ອມໃສໃນພຣະສົງ ຜູ້ຖືຮັກສາສິນໃຫ້ບໍລິບູນທີ່ລ່ວງລັບສັງງຊີວິດໄປແລ້ວເຫຼົ່ານັ້ນ ໃນແຄວ້ນອັງຄະ ແລະ ແຄວ້ນມະຄົດ ຈຶ່ງເບິ່ງຄືກັບວ່າ ວ່າງຈາກຊາວອັງຄະ ແລະ ຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັງງຊີວິດໄປແລ້ວ ການພະຍາກອນຄົນເຫຼົ່ານັ້ນ ເພິ່ງໃຫ້ສຳເລັດປະໂຫຍດໄດ້ (ຄື) ຄົນຈຳນວນຫຼາຍເພິ່ງເຫຼື້ອມໃສຈາກນັ້ນຈະໄປສູ່ສຸກຄະຕິພູມ

ອັນໜຶ່ງ ພຣະເຈົ້າພິມພິສານຈອມທັບແຫ່ງແຄວ້ນມະຄົດ ຜູ້ຊົງທຳ ຄອງຣາດໂດຍທຳຊົງເກື້ອກູນພວກພາມ ແລະ ຄະຫະບໍດີຊາວນິຄົມ ແລະ ຊາວຊົນນະບົດຮູ້ວ່າ ຊາວບ້ານພາ ກັນສັນລະເສີນຢູ່ວ່າ "ພຣະເຈົ້າແຜ່ນດິນພຣະອົງນັ້ນ ຜູ້ຊົງທຳ ຄອງຣາດໂດຍທຳ ຊົງປົກຄອງໃຫ້ພວກເຮົາຢູ່ເປັນສຸກສະຫວັນນະຄົດແລ້ວ" ພວກເຮົາຢູ່ຢ່າງຜາສຸກໃນແວ່ນແຄວ້ນຂອງພຣະອົງຜູ້ຊົງທຳ ຄອງຣາດໂດຍທຳ ອັນໜຶ່ງ ພຣະເຈົ້າແຜ່ນດິນພຣະອົງນັ້ນ ຊົງເຫຼື້ອມໃສໃນພຣະພຸດເຫຼື້ອມໃສໃນພຣະທຳ ເຫຼື້ອມໃສໃນພຣະສົງ ແລະ ຊົງຖືຮັກສາສິນໃຫ້ບໍລິບູນ" ແລະຮູ້ວ່າຊາວບ້ານໄດ້ໂອ້ລົມກັນແນວນີ້ວ່າ "ແມ່ນຈົນວ່າໃນເວລາຈະສະຫວັນນະຄົດ ພຣະເຈົ້າພິມພິສານຈອມທັບແຫ່ງແຄວ້ນມະຄົດ ກໍຍັງຊົງສັນລະເສີນພຣະຜູ້ມີພຣະພາກຢູ່ເຈົ້າ ຈົນສະຫວັນນະຄົດ ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນພຣະອົງຜູ້ສະຫວັນນະຄົດໄປແລ້ວ ການພະຍາກອນພຣະອົງເພິ່ງໃຫ້ສຳເລັດປະໂຫຍດໄດ້ ຄື ຊົນຈຳນວນຫຼາຍ ເພິ່ງເຫຼື້ອມໃສຈາກນັ້ນຈະໄປສູ່ສຸກຄະຕິພູມພຣະຜູ້ມີພຣະພາກເຈົ້າຕັດສະຮູ້ໃນແຄວ້ນມະຄົດ ເປັນຫຍັງ ພຣະອົງຈຶ່ງບໍ່ຊົງພະຍາກອນຊາວມະຄົດ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັງງຊີວິດໄປແລ້ວ ໃນເລື້ອງການອຸບັດທີ່ພຣະອົງໄດ້ຕັດສະຮູ້ ຖ້າພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນຊາວມະຄົດຜູ້ເຄີຍບົວຣະ

ບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັງງຊີວິດໄປແລ້ວ ໃນການອຸບັດພວກຊາວມະຄົດ ຈະເພິ່ງນ້ອຍໃຈວ່າ "ເປັນຫຍັງ ພຣະຜູ້ມີພຣະພາກເຈົ້າ ຈຶ່ງບໍ່ຊົງພະຍາກອນຊາວມະຄົດເຫຼົ່ານັ້ນ"

[໔ກກ] ທ່ານພຣະອານົນ ຜາຣົບຊາວມະຄົດ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ພິຈາລະນາເຖິງເຫດນີ້ຢູ່ໃນບ່ອນສະຫງັດພຽງລຳພັງຜູ້ດຽວ ພໍໃກ້ສະຫວ່າງຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະບາດໄດ້ສະດັບມາວ່າ "ພຣະຜູ້ມີພຣະພາກເຈົ້າ ໄດ້ຊົງພະຍາກອນເຫຼົ່າຊົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັງງຊີວິດໄປແລ້ວ ໃນແຄວ້ນທີ່ຢູ່ອ້ອມຮອບ ມີແຄວ້ນກາສີ ແຄວ້ນໂກສົນ ແຄວ້ນວັດຊີ ແຄວ້ນມັນລະ ແຄວ້ນເຈຕີ ແຄວ້ນວັງສະ ແຄວ້ນກຸຣຸ ແຄວ້ນປັນຈາລະ ແຄວ້ນມັດສະ ແລະ ແຄວ້ນສຸຣະເສນະ ໃນເລື້ອງການອຸບັດວ່າ "ຄົນນັ້ນເກີດໃນບ່ອນນັ້ນ ຊາວບ້ານນາທິກະຄາມຫຼາຍກວ່າ ໕໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັງງຊີວິດໄປແລ້ວ ເປັນໂອປະປາຕິກະເພາະສັງໂຍດເບື້ອງຕ່ຳ ໕ ປະການໝົດສັງງໄປ ປະຣິນິບພານໃນໂລກນັ້ນບໍ່ຕ່າວຄືນມາຈາກໂລກນັ້ນອີກ

ຊາວບ້ານນາທິກະຄາມຫຼາຍກວ່າ ໗໐ ຄົນຜູ້ເຄີຍບົວຣະບັດ ພຣະຣັດຕະນະໄຕຣ ທີ່ລ່ວງລັບສັງງຊີວິດໄປແລ້ວ ເປັນພຣະສະກະທາຄາມີເພາະສັງໂຍດ ໓ ປະການໝົດສັງງໄປ ແລະເພາະ ຣາຄະໂທສະໂມຫະເບົາບາງ ມາສູ່ໂລກນີ້ອີກ ພຽງເທື່ອດຽວກໍເຮັດທີ່ສຸດແຫ່ງຄວາມທຸກໄດ້

ຊາວບ້ານນາທິກະຄາມຫຼາຍກວ່າ ໕໐໐ ຄົນ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣທີ່ລ່ວງລັບສັງງຊີວິດໄປແລ້ວ ເປັນພຣະໂສດາບັນເພາະສັງໂຍດ ໓ ປະການສັງງໄປບໍ່ມີທາງຕ່ຳຕ້ອຍມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ"

ເພາະເຫດນັ້ນແລ ຊາວບ້ານນາທິກະຄາມຜູ້ເຄີຍບົວຣະບັດ ພຣະຣັດຕະນະໄຕຣຈຶ່ງມີໃຈຍິນດີເບີກບານ ໃຈເກີດປີຕິ ແລະ ໂສມະນັດ ເພາະໄດ້ຟັງຄຳພະຍາກອນບັນຫາຂອງພຣະຜູ້ມີພຣະພາກເຈົ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ມີຊາວມະຄົດເຫຼົ່ານີ້ຈຳນວນຫຼາຍ ເປັນຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ແລະ ເປັນຣັດຕັນຍູ ເຊິ່ງລ່ວງລັບສັງງຊີວິດໄປແລ້ວ ແຕ່ເພາະພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນຊາວອັງຄະ ແລະ ຊາວມະຄົດ ຜູ້ເຫຼື້ອມໃສໃນພຣະພຸດ ເຫຼື້ອມໃສໃນພຣະທຳ ເຫຼື້ອມໃສໃນພຣະສົງ ຜູ້ຖືຮັກສາສີນໃຫ້ບໍລິບູນທີ່ໄດ້ລ່ວງລັບສັງງຊີວິດໄປແລ້ວເຫຼົ່ານັ້ນແຄວ້ນອັງຄະ ແລະ ແຄວ້ນມະຄົດ ຈຶ່ງເບິ່ງຄືກັບວ່າວ່າງຈາກຊາວອັງຄະ ແລະ ຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັງງຊີວິດໄປແລ້ວ ການພະຍາກອນຄົນເຫຼົ່ານັ້ນເພິ່ງໃຫ້ສຳເລັດປະໂຫຍດໄດ້ (ຄື) ຄົນຈຳນວນຫຼາຍ ເພິ່ງເຫຼື້ອມໃສຈາກນັ້ນຈະໄປສູ່ສຸກຄະຕິພູມ

ອັນໜຶ່ງ ພຣະເຈົ້າພິມພິສານຈອມທັບແຫ່ງແຄວ້ນມະຄົດຜູ້ຊົງທຳ ຄອງຣາດໂດຍທຳຊົງເກື້ອກູນພວກພາມ ແລະ ຄະຫະບໍດີຊາວນິຄົມ ແລະ ຊາວຊົນນະບົດຮູ້ວ່າຊາວບ້ານພາກັນສັນລະເສີນຢູ່ວ່າ "ພຣະເຈົ້າແຜ່ນດິນພຣະອົງນັ້ນ ຜູ້ຊົງທຳ ຄອງຣາດໂດຍທຳ ຊົງປົກຄອງໃຫ້ພວກເຮົາຢູ່ເປັນສຸກສະຫວັນນະຄົດແລ້ວ ພວກເຮົາຢູ່ຢ່າງຜາສຸກໃນແວ່ນແຄວ້ນຂອງພຣະອົງຜູ້ຊົງທຳ ຄອງຣາດໂດຍທຳ ອັນໜຶ່ງ ພຣະເຈົ້າແຜ່ນດິນພຣະອົງນັ້ນຊົງເຫຼື້ອມໃສໃນພຣະພຸດເຫຼື້ອມໃສໃນພຣະທຳ ເຫຼື້ອມໃສໃນພຣະສົງ ແລະ ຊົງຖືຮັກສາສີນໃຫ້ບໍລິບູນ" ແລະ ຮູ້ວ່າຊາວ ບ້ານເວົ້າກັນແບບນີ້ວ່າ "ແມ່ນຈິນວ່າໃນເວລາຈະສະຫວັນນະຄົດ ພຣະເຈົ້າພິມພິສານຈອມທັບແຫ່ງແຄວ້ນມະຄົດ ກໍຍັງຊົງສັນລະເສີນພຣະຜູ້ມີພຣະພາກເຈົ້າຢູ່ຈົນສະຫວັນນະຄົດໄປ" ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນພຣະອົງຜູ້ສະຫວັນນະຄົດໄປແລ້ວ ການພະຍາກອນພຣະອົງເພື່ອໃຫ້ສຳເລັດປະໂຫຍດໄດ້ ຄື ຄົນຈຳນວນຫຼາຍເພິ່ງເຫຼື້ອມໃສ ຈາກນັ້ນ ຈະໄປສູ່ສຸກ ຄະຕິພູມພຣະຜູ້ມີພຣະພາກເຈົ້າຕັດສະຮູ້ໃນແຄວ້ນມະຄົດ ເປັນຫຍັງ ພຣະອົງຈຶ່ງບໍ່ຊົງພະ ຍາກອນ ຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັ່ງງຊີວິດໄປແລ້ວໃນເລື້ອງການອຸບັດທີ່ພຣະອົງໄດ້ຕັດສະຮູ້ ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນຊາວມະຄົດ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ທີ່ລ່ວງລັບສັ່ງງຊີວິດໄປແລ້ວ ໃນເລື້ອງການອຸບັດ ພວກຊາວມະຄົດຈະເພິ່ງນ້ອຍໃຈວ່າ "ເປັນຫຍັງ ພຣະຜູ້ມີພຣະພາກເຈົ້າ ຈຶ່ງບໍ່ຊົງພະຍາກອນຊາວມະຄົດເຫຼົ່ານັ້ນ"

ທ່ານພຣະອານົນ ຊາບທູນທຸບຄຸງງຜາຣົບຊາວມະຄົດ ຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ຕໍ່ເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າ ແລ້ວລຸກຈາກອາສະນະຖວາຍອະພິວາດກະທຳປະທັກຂິນແລ້ວຈາກໄປ

[໔໗໙] ເມື່ອທ່ານພຣະອານົນຈາກໄປບໍ່ດົນ ເວລາເຊົ້າພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນສະເດັດເຂົ້າໄປສູ່ນາທິກະຄາມເພື່ອບິນທະບາດ ເມື່ອສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຊົງລ້າງພຣະບາດສະເດັດເຂົ້າໄປໃນຕຳໜັກດິນຈີ່ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຊົງຕັ້ງພຣະທະໄທເພ່ງພິຈາລະນາເຫດການທຸກຢ່າງ ຜາຣົບຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ດ້ວຍພຣະດຳຣິວ່າ "ເຮົາຈະຮູ້ຄະຕິ ແລະ ອະພິສຳປະຣາຍະພົບຂອງຊາວມະຄົດເຫຼົ່ານັ້ນວ່າ "ຜູ້ຈະເລີນເຫຼົ່ານັ້ນ ມີຄະຕິເປັນແບບໃດ ແລະ ມີອະພິສຳປະຣາຍະພົບເປັນແບບໃດ" ແລ້ວໄດ້ຊົງເຫັນຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣວ່າ "ຜູ້ຈະເລີນເຫຼົ່ານັ້ນ ມີຄະ ຕິເປັນແບບໃດ? ແລະ ມີອະພິສຳປະຣາຍະພົບເປັນແບບໃດ?" ເມື່ອເວລາຄ່ຳມາຮອດໄດ້ສະ ເດັດອອກຈາກການຫຼີບຫຼີກ ອອກຈາກຕຳໜັກດິນຈີ່ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ແລ້ວໃນຫົ່ມເງົາພຣະວິຫານ

[໔໘໙] ລຳດັບນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຊົງມີພຣະອາການອັນສະຫງົບ ສີພຣະພັກສົດໃສຫຼາຍ ເພາະພຣະອິນຊີຜ່ອງໃສ ມື້ນີ້ ພຣະອົງຄົງປະທັບຢູ່ດ້ວຍທຳເປັນເຄື່ອງຢູ່ອັນສະຫງົບແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາອານົນ ເພາະເຫດທີ່ທ່ານຜາຣົບຊາວມະຄົດຜູ້ເຄີຍ ບົວຣະບັດພຣະຣັດຕະນະໄຕຣ ເວົ້າທຽບຄຽງສະເພາະໜ້າເຮົາແລ້ວ ລຸກຈາກອາສະນະຈາກໄປ ເມື່ອເວລາເຊົ້າເຮົານຸ່ງວໄປສູ່ນາທິກະຄາມເພື່ອບິນທະບາດ ກັບຈາກບິນທະບາດພາຍຫຼັງສັນພັດ ຕາຫານສຳເລັດແລ້ວ ລ້າງຕີນເຂົ້າໄປສູ່ຕຳໜັກດິນຈີ່ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວຕັ້ງຈິດ ເພ່ງພິຈາລະນາເຫດການທຸກຢ່າງ ຜາຣົບຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣດ້ວຍ ຄິດວ່າ "ເຮົາຈະຮູ້ຄະຕິ ແລະ ອະພິສຳປະຣາຍະພົບຂອງຊາວມະຄົດເຫຼົ່ານັ້ນວ່າ "ຜູ້ຈະ ເລີນ ເຫຼົ່ານັ້ນ ມີຄະຕິເປັນແນວໃດ? ແລະ ມີອະພິສຳປະຣາຍະພົບເປັນແນວໃດ?" ດູຣາ ອານົນ ຕະ ຖາຄົດໄດ້ເຫັນຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣແລ້ວວ່າ "ຜູ້ຈະເລີນເຫຼົ່ານັ້ນມີຄະ ຕິເປັນແນວໃດ? ແລະ ມີອະພິສຳປະຣາຍະພົບເປັນແນວໃດ?"

## ຊະນະວະສະພະຍັກ

[໔໙໐] ດູຣາ ອານົນ ທັນໃດນັ້ນ ຍັກທີ່ບໍ່ຜາກົດໂຕເປັ່ງສຽງໃຫ້ໄດ້ຍິນວ່າ "ຂ້າແດ່ ພຣະ ຜູ້ມີພຣະພາກເຈົ້າ ຂ້າພຣະອົງຊື່ ຊະນະວະສະພະ ຂ້າແດ່ ພຣະສຸຄົດເຈົ້າ ຂ້າພຣະອົງຊື່ຊະນະ ວະສະພະ" ດູຣາ ອານົນ ຊື່ ຊະນະວະສະພະ ນີ້ທ່ານຮູ້ຈັກ (ຫຼື) ເຄີຍໄດ້ຍິນມາກ່ອນຫຼືບໍ່?"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຊື່ຊະນະວະສະພະນີ້ ຂ້າພຣະ ອົງ ບໍ່ຮູ້ຈັກ ແລະ ບໍ່ເຄີຍໄດ້ຍິນມາກ່ອນ ແຕ່ພໍຂ້າພຣະອົງໄດ້ຍິນຊື່ ຊະນະວະສະພະທໍ່ນັ້ນຂົນກໍ ລຸກຕັ້ງຂຶ້ນມາ ຈຶ່ງຄິດວ່າ "ຜູ້ທີ່ໄດ້ນາມວ່າ "ຊະນະວະສະພະ" ນີ້ຄົງບໍ່ແມ່ນຍັກຊັ້ນຕ່ຳແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາ ອານົນ ໃນຂະນະທີ່ມີສຽງດັງຂຶ້ນ ຍັກມີຜິວພັນ ສົດໃສຫຼາຍ ຜາກົດຂຶ້ນຕໍ່ໜ້າເຮົາ ຍັກນັ້ນເປັ່ງສຽງໃຫ້ໄດ້ຍິນອີກເປັນເທື່ອທີ ໔ ວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງ ຄື ພິມພິສານ ຂ້າແດ່ ພຣະສຸຄົດເຈົ້າ ຂ້າພຣະອົງຄືພິມ ພິສານ ເທື່ອນີ້ເປັນເທື່ອທີ ໗ ທີ່ຂ້າພຣະອົງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບທ້າວເວດສະວັນມະ ຫາຣາດ ຈຸຕິຈາກສະຫວັນຊັ້ນຈາຕຸມະຫາຣາດນີ້ແລ້ວ ສາມາດໄປເກີດເປັນພຣະຣາຊາໃນໂລກ ມະນຸດ ຂ້າພຣະອົງຈຸຕິຈາກເທວະໂລກ ໗ ເທື່ອ ຈາກມະນຸດໂລກ ໗ ເທື່ອ ລວມເວລາທ່ອງທ່ຽວ ຢູ່ ໑໔ ເທື່ອ ຮູ້ຈັກພົບທີ່ເຄີຍຢູ່ອາໄສໃນການກ່ອນ

[໔໗໑] ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ມີທາງຕໍ່າຕ້ອຍ ຮູ້ດີເຖິງຄວາມບໍ່ຕໍ່າຕ້ອຍມາດົນນານ ຂ້າພຣະອົງ ຕັ້ງຄວາມປາຖະໜາໄວ້ເພື່ອເປັນພຣະສະກະທາຄາມີ"

ທ່ານພຣະອານົນທູນຖາມວ່າ "ການທີ່ຊະນະວະສະພະຍັກປະກາດວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ມີທາງຕໍ່າຕ້ອຍ ຮູ້ດີເຖິງຄວາມບໍ່ຕໍ່າຕ້ອຍມາດົນນານ" ແລະ ປະກາດວ່າ "ຕັ້ງຄວາມປາຖະໜາໄວ້ເພື່ອເປັນພຣະສະກະທາຄາມີແບບນີ້ ເປັນຕາງຶດແທ້ນໍ ບໍ່ເຄີຍຜາກົດມີຫຍັງທີ່ເປັນເຫດ ເຮັດໃຫ້ຊະນະວະສະພະຍັກຮູ້ດີວ່າ ຈະບັນລຸຄຸນວິເສດອັນຍິ່ງໃຫຍ່ ເຫັນປານນີ້ໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຊະນະວະສະພະຍັກປະກາດວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງບໍ່ໄດ້ເວັ້ນຈາກຄໍາສອນຂອງພຣະອົງເລີຍ ຂ້າແດ່ ພຣະສຸຄົດເຈົ້າ ຂ້າພຣະອົງບໍ່ໄດ້ເວັ້ນຈາກຄໍາສອນຂອງພຣະອົງເລີຍ ນັບຕັ້ງແຕ່ມື້ທີ່ຂ້າພຣະອົງເຫຼື້ອມໃສ ພຣະຜູ້ມີພຣະພາກເຈົ້າເປັນຕົ້ນມາ ຂ້າພຣະອົງບໍ່ມີທາງຕໍ່າຕ້ອຍ ຮູ້ດີເຖິງຄວາມບໍ່ຕໍ່າຕ້ອຍມາດົນນານ ແລະ ຕັ້ງຄວາມປາຖະໜາໄວ້ເພື່ອເປັນພຣະສະກະທາຄາມີ ດັ່ງຈະຂາບທູນໃຫ້ຊົງຮູ້ ຂ້າພຣະອົງໄດ້ຮັບບັນຊາຈາກທ້າວເວດສະວັນມະຫາຣາດ ໃຫ້ໄປເຝົ້າທ້າວວິຣຸນລະຫົກມະຫາຣາດ ດ້ວຍວຽກແບບໜຶ່ງ ລະຫວ່າງທາງໄດ້ພົບພຣະຜູ້ມີພຣະພາກເຈົ້າ ເຊິ່ງກໍາລັງສະເດັດເຂົ້າໄປສູ່ຕໍາໜັກດົນຈີ່ປະທັບຢູ່ ຊົງຕັ້ງພຣະຫະໄທເພ່ງພິຈາລະນາເຫດການທຸກຢ່າງ ຜາຣົບຊາວມະຄົດຜູ້ເຄີຍບົວຣະບັດພຣະຣັດຕະນະໄຕຣ ດ້ວຍຊົງພຣະດໍາຣິວ່າ "ເຮົາຈະຮູ້ຄະຕິ ແລະ ອະພິສໍາປະຣາຍະພົບຂອງຊາວມະຄົດເຫຼົ່ານັ້ນວ່າ "ຜູ້ຈະເລີນເຫຼົ່ານັ້ນ ມີຄະຕິເປັນແບບໃດ ແລະມີອະພິສໍາປະຣາຍະພົບເປັນແບບໃດ" ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຕາງຶດແທ້ນໍ ທີ່ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກທ້າວເວດສະວັນມະຫາຣາດ ຜູ້ກ່າວຢູ່ໃນບໍລິສັດນັ້ນວ່າ "ຊາວມະຄົດຜູ້ຈະເລີນເຫຼົ່ານັ້ນ ມີຄະຕິເປັນແບບໃດ? ແລະ ມີອະພິສໍາປະຣາຍະພົບເປັນແບບໃດ?" ຂ້າພຣະອົງຈຶ່ງມີຄວາມຄິດແບບນີ້ວ່າ "ເຮົາຈັກເຝົ້າພຣະຜູ້ມີພຣະພາກເຈົ້າ ແລະຈັກຂາບທູນເລື້ອງນີ້ໃຫ້ຊົງຮູ້" ເຫດ ໔ ປະການນີ້ແລ ທີ່ເຮັດໃຫ້ຂ້າພຣະອົງໄດ້ມາເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

## ເທວະສະພາ

[໔໗໔] ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຫຼາຍມື້ມາແລ້ວ ໃນຄືນເພັງວັນອຸໂປສົດ ໑໕ ຄໍ່າ ອັນເປັນວັນເຂົ້າພັນສາ ພວກເທບຊັ້ນຕາວະຕິງສາທັ້ງໝົດ ນັ່ງປະຊຸມກັນໃນສຸທໍາມາເທວະສະພາ ມີເທບບໍລິສັດເປັນຈໍານວນຫຼວງຫຼາຍນັ່ງຢູ່ໂດຍຮອບ ທ້າວຈາຕຸມະຫາຣາດປະທັບຢູ່ໃນທິດທັງ ໔ ຄື

໑. ທິດຕາເວັນອອກມີທ້າວ ທະຕະຣະຖະ ມະຫາຣາດ ປະທັບນັ່ງອວ່າຍພຣະພັກໄປທາງທິດຕາເວັນຕົກມີພວກເທບຢູ່ເບື້ອງໜ້າ

໒. ທິດໃຕ້ມີທ້າວ ວິຣຸນລະຫົກ ມະຫາຣາດ ປະທັບນັ່ງອວ່າຍພຣະພັກໄປທາງທິດເໜືອມີພວກເທບຢູ່ເບື້ອງໜ້າ

໓. ທິດຕາເວັນຕົກມີທ້າວ ວິຣູປັກຂະ ມະຫາຣາດ ປະທັບນັ່ງອວ່າຍພຣະພັກໄປທາງທິດຕາເວັນອອກມີພວກເທບຢູ່ເບື້ອງໜ້າ

໔. ທິດເໜືອມີທ້າວ ເວດສະວັນ ມະຫາຣາດ ປະທັບນັ່ງອວ່າຍພຣະພັກໄປທາງທິດໃຕ້ມີພວກເທບຢູ່ເບື້ອງໜ້າ

ເມື່ອເທື່ອທີ່ພວກເທບຊັ້ນຕາວະຕິງສາທັ້ງໝົດ ນັ່ງປະຊຸມກັນໃນສຸທຳມາເທວະສະພາມີເທບບໍລິສັດຫຼວງຫຼາຍນັ່ງຢູ່ໂດຍຮອບ ມີທ້າວຈາຕຸມະຫາຣາດປະທັບຢູ່ໃນທິດທັງ ໔ ນີ້ເປັນທຳນຽມໃນການນັ່ງຂອງທ້າວຈາຕຸມະຫາຣາດ ຂ້າງຫຼັງຕໍ່ອອກມາເປັນບ່ອນນັ່ງຂອງຂ້າພຣະອົງທັງຫຼາຍ ເທບເຫຼົ່ານັ້ນປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າແລ້ວ ດ່ຽວນີ້ໄດ້ເກີດໃນສະຫວັນຊັ້ນຕາວະຕິງສາ ຮຸ່ງເຮືອງເກີນເທບເຫຼົ່າອື່ນດ້ວຍວັນນະແລະຍົດ ໄດ້ຍິນວ່າ ດ້ວຍເຫດນັ້ນພວກເທບຊັ້ນຕາວະຕິງສາ ຈຶ່ງມີໃຈຍິນດີເບີກບານໃຈເກີດປີຕິ ແລະ ໂສມະນັດກ່າວວ່າ "ທ່ານທັງຫຼາຍ ໝູ່ເທບຈະເລີນເຖິງທີ່ສຸດ ແຕ່ໝູ່ອະສູນເສື່ອມຖອຍລົງ"

ລຳດັບນັ້ນທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງຮູ້ຄວາມເຫຼື້ອມໃສຂອງພວກເທບຊັ້ນຕາວະຕິງສາຊົງອະນຸໂມທະນາດ້ວຍຄາຖາເຫຼົ່ານີ້ວ່າ

"ທ່ານຜູ້ຈະເລີນທັງຫຼາຍພວກເທບຊັ້ນຕາວະຕິງສາ
ມີພຣະອິນເປັນປະທານ
ຖວາຍນະມັດສະການພຣະຕະຖາຄົດເຈົ້າ ແລະ ຄວາມດີຂອງພຣະທຳ
ເມື່ອເຫັນເທບເຫຼົ່າໃໝ່ຜູ້ມີວັນນະ ແລະ ຍົດ
ຜູ້ເຄີຍປະພຶດພົມມະຈັນໃນພຣະສຸຄົດເຈົ້າເຊິ່ງມາບ່ອນນີ້ (ນຳ)
ກໍພາກັນເບີກບານໃຈຢ່າງຍິ່ງ
ເທບເຫຼົ່ານັ້ນເປັນສາວົກ
ຂອງພຣະຜູ້ມີພຣະປັນຍາກວ້າງຂວາງຄືແຜ່ນດິນ
ທັງໝົດເປັນຜູ້ບັນລຸຄຸນວິເສດ
ຮຸ່ງເຮືອງເກີນເທບເຫຼົ່າອື່ນໃນບ່ອນນີ້
ດ້ວຍວັນນະຍົດ ແລະ ອາຍຸ
ພວກເທບຊັ້ນຕາວະຕິງສາມີພຣະອິນເປັນປະທານ

ເມື່ອເຫັນເຫດນີ້ແລ້ວພາກັນຊື່ນບານ

ຖວາຍນະມັດສະການພຣະຕະຖາຄົດເຈົ້າ ແລະ ຄວາມດີຂອງພຣະທຳ"

ຂ້າແດ່ ພຣະອົງຜູ້ຈະເລີນ ໄດ້ຍິນວ່າ ເພາະເຫດນັ້ນ ພວກເທບຊັ້ນຕາວະຕິງສາຈຶ່ງມີໃຈຍິນດີ ເບີກບານໃຈ ເກີດປີຕິ ແລະ ໂສມະນັດສຸດຈະປະມານໄດ້ກ່າວວ່າ "ທ່ານທັງຫຼາຍໝູ່ເທບຈະເລີນເຕັມທີ່ ໝູ່ອະສູນເສື່ອມຖອຍລົງ"

ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນແລ ແມ່ນທ້າວຈາຕຸມະຫາຣາດໄດ້ຮັບຄຳບອກເລົ່າເລື້ອງທີ່ເປັນເຫດໃຫ້ພວກເທບຊັ້ນຕາວະຕິງສາ ຕ້ອງມານັ່ງປະຊຸມຄິດພິຈາລະນາກັນໃນສຸທຳມາເທວະສະພາ ແລ້ວກໍຍັງດຳເນີນການໃນເລື້ອງນັ້ນຢູ່ ທັງໄດ້ຮັບຄຳແນະນຳ ທີ່ພວກເທບຊັ້ນຕາວະຕິງສາຕາມສັ່ງສອນສະເພາະ ແລ້ວກໍຊົງດຳເນີນການໃນເລື້ອງນັ້ນຢູ່ ແລະ ຕ່າງຍັງຄົງປະທັບຢືນຢູ່ທີ່ບ່ອນປະທັບຂອງຕົນບໍ່ຍອມຈາກໄປ

ທ້າວຈາຕຸມະຫາຣາດເຫຼົ່ານັ້ນ
ໄດ້ຮັບຄຳບອກແລ້ວທັງໄດ້ຮັບຄຳແນະນຳແລ້ວ
ຈຶ່ງມີພຣະຫະໄທຜ່ອງໃສປະທັບຢືນສະຫງົບຢູ່
ໃນທີ່ປະທັບຂອງຕົນ

[໔໗໓] ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນແລ ໄດ້ເກີດແສງສະຫວ່າງອັນຮຸ່ງເຮືອງຂຶ້ນທາງທິດເໜືອ ຜາກົດເປັນແສງສະຫວ່າງ ເກີນເທວານຸພາບຂອງເທບທັງຫຼາຍ ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຮັບສັ່ງຮຽກພວກເທບຊັ້ນຕາວະຕິງສາມາຕັດວ່າ "ທ່ານຜູ້ນິລະທຸກທັງຫຼາຍ ມີນິມິດທີ່ສັງເກດໄດ້ (ຄື) ແສງສະຫວ່າງເກີດຂຶ້ນ ແສງສະຫວ່າງຜາກົດຂຶ້ນ ພຣະພົມກໍຈະຜາກົດອົງຂຶ້ນ ເພາະການທີ່ແສງສະຫວ່າງເກີດຂຶ້ນ ແສງສະຫວ່າງຜາກົດຂຶ້ນນີ້ ຈັດເປັນບຸບພະນິມິດແຫ່ງການຜາກົດຂອງພຣະພົມ" ເມື່ອມີນິມິດທີ່ສັງເກດໄດ້ ພຣະພົມກໍຈະຜາກົດອົງຂຶ້ນເພາະແສງສະຫວ່າງອັນຮຸ່ງເຮືອງຍິ່ງ ເປັນນິມິດແຫ່ງພຣະພົມ

## ເລື້ອງສະນັງກຸມາຣະພົມ

[໔໗໔] ຂ້າແດ່ ພຣະອົງຜູ້ຈະເລີນ ລຳດັບນັ້ນ ພວກເທບຊັ້ນຕາວະຕິງສານັ່ງເທິງທີ່ນັ່ງຂອງຕົນກ່າວວ່າ "ພວກເຮົາຈັກຮູ້ແສງສະຫວ່າງນັ້ນ ເມື່ອຮູ້ຊັດແຈ້ງຜົນທີ່ຜາກົດແລ້ວຈຶ່ງຈະໄປ" ແມ່ນທ້າວຈາຕຸມະຫາຣາດປະທັບເທິງທີ່ປະທັບຂອງຕົນຢູ່ກໍກ່າວວ່າ "ພວກເຮົາຈັກຮູ້ແສງສະຫວ່າງນັ້ນ ເມື່ອຮູ້ຊັດແຈ້ງຜົນທີ່ຜາກົດແລ້ວຈຶ່ງຈະໄປ" ພວກເທບຊັ້ນຕາວະຕິງສາສະດັບເລື້ອງນີ້ແລ້ວນັ່ງສະຫງົບຢູ່ມີຄວາມຄິດກົງກັນວ່າ "ພວກເຮົາຈັກຮູ້ແສງສະຫວ່າງນັ້ນ ເມື່ອຮູ້ຊັດແຈ້ງຜົນທີ່ຜາກົດແລ້ວຈຶ່ງຈະໄປ"

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນຕາວະຕິງສາ ພຣະອົງຊົງນິມິດອັດຕະພາບໃຫ້ຫຍາບຜາກົດຂຶ້ນ ເພາະຮູບຮ່າງປົກກະຕິຂອງພົມບໍ່ອາດຜາກົດໃນຄອງຈັກຂຸຂອງພວກເທບຊັ້ນຕາວະຕິງສາໄດ້ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນຕາວະຕິງສາ ພຣະອົງກໍຮຸ່ງເຮືອງເກີນເທບເຫຼົ່າອື່ນ ດ້ວຍວັນນະ ແລະ ຍົດ ຮ່າງກາຍທີ່ເປັນຄໍາຍ່ອມງົດງາມເກີນຮ່າງກາຍມະນຸດສັນໃດ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນຕາວະຕິງສາ ພຣະອົງກໍຮຸ່ງເຮືອງເກີນເທບເຫຼົ່າອື່ນດ້ວຍວັນນະ ແລະ ຍົດສັນນັ້ນຄືກັນ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນຕາວະຕິງສາ ໃນເທບບໍລິສັດນັ້ນເທບບາງອົງບໍ່ໄຫວ້ບໍ່ຕ້ອນຮັບ ບໍ່ເຊີນດ້ວຍອາສະນະ ທັງໝົດພາກັນນັ່ງຂັດສະມາທິປະນົມມືນິ່ງຢູ່ ດ້ວຍດໍາຣິວ່າ "ບັດນີ້ ສະນັງກຸມາຣະພົມຈະປະທັບນັ່ງເທິງບັນລັງຂອງເທບທີ່ພຣະອົງປາຖະໜາ"

ສະນັງກຸມາຣະພົມ ປະທັບນັ່ງເທິງບັນລັງຂອງເທບອົງໃດ ເທບອົງນັ້ນ ໄດ້ຄວາມຍິນດີຢ່າງຍິ່ງ ໄດ້ໂສມະນັດຢ່າງຍິ່ງ ກະສັດຕຣາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ເພິ່ງຈະຄອງຣາດຊົງໄດ້ຄວາມຍິນດີຢ່າງຍິ່ງ ໄດ້ຄວາມໂສມະນັດຢ່າງຍິ່ງສັນໃດ ສະນັງກຸມາຣະພົມປະທັບນັ່ງເທິງບັນລັງຂອງເທບອົງໃດ ເທບອົງນັ້ນກໍໄດ້ຄວາມຍິນດີຢ່າງຍິ່ງ ໄດ້ຄວາມໂສມະນັດຢ່າງຍິ່ງສັນນັ້ນຄືກັນ ຈາກນັ້ນ ສະນັງກຸມາຣະພົມຊົງນິມິດອັດຕະພາບໃຫ້ຫຍາບ ເປັນຮູບຮ່າງກຸມານເຊັ່ນກັບປັນຈະສິຂະເທບພະບຸດ ຜາກົດແກ່ພວກເທບຊັ້ນຕາວະຕິງສາແລ້ວ ເຫາະຂຶ້ນອາກາດນັ່ງຂັດສະມາທິໃນອາກາດເທິງທີ່ວ່າງກາງອາກາດ ຄື ບຸຣຸດມີກໍາລັງນັ່ງຂັດສະມາທິເທິງບັນລັງທີ່ປູລາດໄວ້ດີແລ້ວ ຫຼື ເທິງພື້ນທີ່ງຣາບພຽງສະເໝີກັນສັນນັ້ນ ຊົງຮູ້ຄວາມເຫຼື້ອມໃສຂອງພວກເທບຊັ້ນຕາວະຕິງສາແລ້ວ ຈຶ່ງຊົງອະນຸໂມທະນາດ້ວຍຄາຖາເຫຼົ່ານີ້ວ່າ

"ທ່ານຜູ້ຈະເລີນທັງຫຼາຍພວກເທບຊັ້ນຕາວະຕິງສາ
ມີພຣະອິນເປັນປະທານ
ຖວາຍນະມັດສະການພຣະຕະຖາຄົດເຈົ້າ ແລະ ຄວາມດີຂອງພຣະທໍາ
ເມື່ອເຫັນເທບເຫຼົ່າໃໝ່ຜູ້ມີວັນນະ ແລະ ມີຍົດ
ຜູ້ເຄີຍປະພຶດພົມມະຈັນໃນພຣະສຸຄົດເຈົ້າເຊິ່ງມາຢູ່ບ່ອນນີ້ນໍາ
ກໍພາກັນຊື່ນບານໃຈຫຼາຍ
ເທບເຫຼົ່ານັ້ນເປັນສາວົກ
ຂອງພຣະຜູ້ມີພຣະປັນຍາກວ້າງຂວາງຄືແຜ່ນດິນ
ທັງໝົດເປັນຜູ້ບັນລຸຄຸນວິເສດ
ຮຸ່ງເຮືອງເກີນເທບເຫຼົ່າອື່ນໃນບ່ອນນີ້
ດ້ວຍວັນນະຍົດ ແລະ ອາຍຸ
ພວກເທບຊັ້ນຕາວະຕິງສາມີພຣະອິນເປັນປະທານ

ເມື່ອເຫັນເຫດນີ້ແລ້ວພາກັນຊື່ນບານ
ຖວາຍນະມັດສະການພຣະຕະຖາຄົດເຈົ້າ ແລະ ຄວາມດີຂອງພຣະທຳ"
ສຽງຂອງສະນັງກຸມາຣະພົມ

[໔໗໕] ຂ້າແດ່ ພຣະອົງຜູ້ຈະເລີນ ສະນັງກຸມາຣະພົມໄດ້ຕັດເນື້ອຄວາມນີ້ ຂະນະທີ່ສະນັງກຸມາຣະພົມຕັດເນື້ອຄວາມນີ້ ມີສຽງປະກອບດ້ວຍອົງ ໘ ປະການ ຄື (໑) ແຈ່ມໃສ (໔) ຊັດແຈ້ງ (໓) ນຸ້ມນວນ (໔) ເປັນຕາຟັງ (໕) ກົມກ່ອມ (໖) ບໍ່ແຫບ (໗) ເລິກເຊິ່ງ (໘) ກ້ອງກັງວານ ສະນັງກຸມາຣະພົມເປັ່ງສຽງໃຫ້ຮູ້ກັນ ສະເພາະໃນບໍລິສັດທີ່ນັ້ນ ສຽງຂອງສະນັງກຸມາຣະພົມນັ້ນບໍ່ໄດ້ດັ່ງອອກໄປພາຍນອກ ບໍລິສັດຜູ້ມີສຽງປະກອບດ້ວຍອົງ ໘ ປະການແນວນີ້ຮຽກວ່າ "ມີສຽງຄືສຽງພຣະພົມ"

ຄັ້ງນັ້ນ ສະນັງກຸມາຣະພົມນິມິດອັດຕະພາບເປັນຮູບນິມິດ ໓໓ ອົງ ປະທັບນັ່ງເທິງບັນລັງຂອງພວກເທບຊັ້ນຕາວະຕິງສາທຸກບັນລັງ ຮັບສັ່ງຮຽກພວກເທບຊັ້ນຕາວະຕິງສາມາຕັດວ່າ "ພວກເທບຊັ້ນຕາວະຕິງສາຜູ້ຈະເລີນ ເຂົ້າໃຈເລື້ອງນັ້ນວ່າແນວໃດ? ກໍພຣະຜູ້ມີພຣະພາກເຈົ້າພຣະອົງນີ້ ຊົງປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍພຽງໃດ ເຫຼົ່າຊົນຜູ້ຈະເລີນ ຜູ້ຖືພຣະພຸດເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ຖືຮັກສາສີນໃຫ້ບໍລິບູນ ຫຼັງຈາກຕາຍໄປ ລາງພວກເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນປະຣະນິມມິຕະວະສະວັດຕີ ລາງພວກເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນນິມມານະຣະດີ ລາງພວກເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນດຸສິດ ລາງພວກເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນຍາມາ ລາງພວກເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນຕາວະຕິງສາ ລາງພວກເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນຈາຕຸມະຫາຣາດ ພວກທີ່ຍັງກາຍໃຫ້ບໍລິບູນ ເຊິ່ງຕ່ຳກວ່າເຂົາທັງຫຼາຍຍ່ອມໄປເພີ່ມຈຳນວນໝູ່ເທບຄົນທັນ"

[໔໗໖] ສະນັງກຸມາຣະພົມໄດ້ຕັດເນື້ອຄວາມນີ້ ໃນຂະນະທີ່ສະນັງກຸມາຣະພົມຕັດເນື້ອຄວາມນີ້ມີສຽງດັງ ພວກເທບເຂົ້າໃຈສຽງຂອງສະນັງກຸມາຣະພົມວ່າ "ຜູ້ທີ່ນັ່ງເທິງບັນລັງຂອງເຮົາກັບຜູ້ເວົ້າເປັນຄົນດຽວກັນ (ພຣະໂບຣານາຈານກ່າວວ່າ)

ເມື່ອສະນັງກຸມາຣະພົມຜູ້ດຽວກ່າວ
ຮູບນິມິດທຸກຮູບກໍກ່າວນຳ
ເມື່ອສະນັງກຸມາຣະພົມນິ່ງ
ຮູບນິມິດທຸກຮູບກໍນິ່ງ
ພວກເທບຊັ້ນຕາວະຕິງສາມີພຣະອິນເປັນປະທານ

ສຳຄັນສະນັງກຸມາຣະພົມວ່າ
"ຜູ້ທີ່ນັ່ງເທິງບັນລັງຂອງເຮົາກັບຜູ້ເວົ້າເປັນຄົນດຽວກັນ"

ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນແລ ສະນັງກຸມາຣະພົມກັບຄືນເປັນຜູ້ດຽວປະທັບນັ່ງຂັດສະມາທິເທິງບັນລັງຂອງທ້າວສັກກະຜູ້ເປັນຈອມແຫ່ງເທບ ຮັບສັ່ງຮຽກພວກເທບຊັ້ນຕາວະຕິງສາມາຕັດວ່າ

## ການຈະເລີນອິດທິບາດ ໔ ປະການ

[໔໗໗] "ພວກເທບຊັ້ນຕາວະຕິງສາຜູ້ຈະເລີນເຂົ້າໃຈເລື້ອງນັ້ນວ່າແນວໃດ? ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງບັນຍັດອິດທິບາດ ໔ ປະການນີ້ ແມ່ນທີ່ຊົງບັນຍັດໄວ້ຢ່າງດີກໍພຽງເພື່ອເພີ່ມພູນຄວາມສຳເລັດ ເພື່ອໃຫ້ຊຳນານໃນເລື້ອງຄວາມສຳເລັດ ເພື່ອພິກໄຫວໃຫ້ເກີດຄວາມສຳເລັດ

ອິດທິບາດ ໔ ປະການມີຫຍັງແດ່? ຄື

## ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດ ຄື ສັນທະສະມາທິປະທານສັງຂານ ໑ (ສະມາທິທີ່ເກີດຈາກສັນທະ ແລະ ຄວາມພຽນປະກອບ)

໔. ຈະເລີນອິດທິບາດ ຄື ວິຣິຍະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິລິຍະ ແລະ ຄວາມພຽນປະກອບ)

໓. ຈະເລີນອິດທິບາດ ຄື ຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກຈິດຕະ ແລະ ຄວາມພຽນປະກອບ)

໔. ຈະເລີນອິດທິບາດ ຄື ວິມັງສາສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາ ແລະ ຄວາມພຽນປະກອບ)

ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງບັນຍັດອິດທິບາດ ໔ ປະການນີ້ແລ ເພື່ອເພີ່ມພູນຄວາມສຳເລັດເພື່ອໃຫ້ຊຳນານໃນເລື້ອງຄວາມສຳເລັດ ເພື່ອພິກໄຫວໃຫ້ເກີດຄວາມສຳເລັດ

ທ່ານຜູ້ຈະເລີນ ໃນອະດີດຕະການໄດ້ມີສະມະນະ ຫຼື ພາມພວກໜຶ່ງໄດ້ອິດທິວິທະຍານຫຼາຍຢ່າງ ເພາະຈະເລີນ ເພາະເພີ່ມພູນອິດທິບາດ ໔ ປະການນີ້ ໃນອະນະຄົດຕະການຈັກມີສະມະນະ ຫຼື ພາມພວກໜຶ່ງ

ໄດ້ອິດທິວິທະຍານຫຼາຍຢ່າງ ເພາະຈະເລີນ ເພາະເພີ່ມພູນອິດທິບາດ ໔ ປະການນີ້ ໃນປະຈຸບັນ ກໍມີສະມະນະ ຫຼື ພາມພວກໜຶ່ງໄດ້ອິດທິວິທະຍານຫຼາຍຢ່າງ ເພາະຈະເລີນ ເພາະເພີ່ມພູນອິດທິບາດ ໔ ປະການນີ້ ພວກເທບຊັ້ນຕາວະຕິງສາຜູ້ຈະເລີນບໍ່ເຫັນລິດ ແລະອານຸພາບແບບນີ້ຂອງເຮົາບໍ?"

ພວກເທບຊັ້ນຕາວະຕິງສາຂາບທູນວ່າ "ເຫັນຂ້ານ້ອຍ"

ສະນັງກຸມາຣະພົມຕັດວ່າ "ເຮົາມີລິດຫຼາຍແບບນີ້ ມີອານຸພາບຫຼາຍແບບນີ້ ກໍເພາະຈະເລີນ ເພາະເພີ່ມພູນອິດທິບາດ ໔ ປະການນີ້ຄືກັນ"

ຂ້າແດ່ ພຣະອົງຜູ້ຈະເລີນ ສະນັງກຸມາຣະພົມໄດ້ຕັດເນື້ອຄວາມນີ້ແລ້ວ ຈຶ່ງຮັບສັ່ງຮຽກພວກເທບຊັ້ນຕາວະຕິງສາມາຕັດວ່າ

## ວິທີການບັນລຸໂອກາດ ໓ ປະການ

[໔໗໗] "ພວກເທບຊັ້ນຕາວະຕິງສາຜູ້ຈະເລີນ ເຂົ້າໃຈເລື່ອງນັ້ນວ່າແນວໃດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງຮູ້ວິທີການບັນລຸໂອກາດ (ຊ່ອງວ່າງ ) ໓ ປະການ ກໍພຽງເພື່ອໃຫ້ເຖິງຄວາມສຸກ

ວິທີການບັນລຸໂອກາດ ໓ ປະການນັ້ນມີຫຍັງແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ຍັງກ່ຽວຂ້ອງດ້ວຍກາມ ກ່ຽວຂ້ອງດ້ວຍອະກຸສົນທຳ ຢູ່ຕໍ່ມາເຂົາຟັງທຳຂອງພຣະອະຣິຍະ ໃສ່ໃຈຢ່າງລະອຽດ ປະຕິບັດທຳສົມຄວນແກ່ທຳ ເຂົາອາໄສການຟັງທຳຂອງພຣະອະຣິຍະ ອາໄສການໃສ່ໃຈຢ່າງລະອຽດ ອາໄສການປະຕິບັດທຳສົມຄວນແກ່ທຳບໍ່ກ່ຽວຂ້ອງດ້ວຍກາມ ບໍ່ກ່ຽວຂ້ອງດ້ວຍອະກຸສົນທຳ ຄວາມສຸກຍ່ອມເກີດຂຶ້ນ ໂສມະນັດຍິ່ງກວ່າຄວາມສຸກຍ່ອມເກີດຂຶ້ນແກ່ເຂົາ ຜູ້ບໍ່ກ່ຽວຂ້ອງດ້ວຍກາມ ບໍ່ກ່ຽວຂ້ອງດ້ວຍອະກຸສົນທຳ ທ່ານຜູ້ຈະເລີນ ຄວາມປາໂມດເກີດຈາກຄວາມເບີກບານໃຈ ແມ່ນສັນໃດ ຄວາມສຸກຍ່ອມເກີດຂຶ້ນໂສມະນັດຍິ່ງກວ່າຄວາມສຸກຍ່ອມເກີດຂຶ້ນ (ຈາກຄວາມຊື່ນບານໃຈ) ແກ່ເຂົາຜູ້ບໍ່ກ່ຽວຂ້ອງດ້ວຍກາມບໍ່ກ່ຽວຂ້ອງດ້ວຍອະກຸສົນທຳຢູ່ສັນນັ້ນ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງຮູ້ວິທີການບັນລຸໂອກາດທີ ໑ ນີ້ເພື່ອໃຫ້ເຖິງຄວາມສຸກ

໒. ບຸກຄົນບາງຄົນໃນໂລກນີ້ມີກາຍສັງຂານ[໑] ຢ່າງຫຍາບ ຍັງບໍ່ສະຫງົບລະງັບ ມີວະຈີສັງຂານ[໒] ຢ່າງຫຍາບ ຍັງບໍ່ສະຫງົບລະງັບ ມີຈິດຕະສັງຂານ[໓] ຢ່າງຫຍາບ ຍັງບໍ່ສະຫງົບລະງັບຕໍ່ມາເຂົາຟັງທຳຂອງພຣະອະຣິຍະ ໃສ່ໃຈຢ່າງລະອຽດ ປະຕິບັດທຳສົມຄວນແກ່ທຳ ເຂົາອາໄສ

ການຟັງທຳຂອງພຣະອະຣິຍະ ອາໄສການໃສ່ໃຈຢ່າງລະອຽດ ອາໄສການປະຕິບັດທຳສົມຄວນແກ່ທຳ ກາຍສັງຂານຢ່າງຫຍາບຍ່ອມສະຫງົບລະງັບ ວະຈີສັງຂານຢ່າງຫຍາບຍ່ອມສະຫງົບລະງັບ ຈິດຕະສັງຂານຢ່າງຫຍາບຍ່ອມສະຫງົບລະງັບ ເພາະກາຍສັງຂານຢ່າງຫຍາບສະຫງົບລະງັບ ວະຈີສັງຂານຢ່າງຫຍາບຍ່ອມສະຫງົບລະງັບ ຈິດຕະສັງຂານຢ່າງຫຍາບຍ່ອມສະຫງົບລະງັບ ຄວາມສຸກຍ່ອມເກີດຂຶ້ນ ໂສມະນັດຍິ່ງກວ່າຄວາມສຸກຍ່ອມເກີດຂຶ້ນແກ່ເຂົາ ທ່ານຜູ້ຈະເລີນ ຄວາມປາໂມດເກີດຈາກຄວາມເບີກບານໃຈແມ່ນສັນໃດ ທ່ານຜູ້ຈະເລີນເພາະກາຍສັງຂານຢ່າງຫຍາບສະຫງົບລະງັບ ເພາະວະຈີສັງຂານຢ່າງຫຍາບສະຫງົບລະງັບ ເພາະຈິດຕະສັງຂານຢ່າງຫຍາບສະຫງົບລະງັບ ຄວາມສຸກຍ່ອມເກີດຂຶ້ນ ໂສມະນັດຍິ່ງກວ່າຄວາມສຸກຍ່ອມເກີດຂຶ້ນສັນນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງຮູ້ວິທີການບັນລຸໂອກາດທີ ໘ ນີ້ ເພື່ອໃຫ້ເຖິງຄວາມສຸກ

໙. ບຸກຄົນບາງຄົນໃນໂລກນີ້ ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນກຸສົນ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນອະກຸສົນ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງມີໂທດ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງບໍ່ມີໂທດ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງຄວນເສບ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງບໍ່ຄວນເສບ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງຊົ່ວ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງປະນີດ" ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນທຳດຳ ທຳຂາວ ແລະ ທຳມີສ່ວນປຽບທຽບໄດ້" ຕໍ່ມາເຂົາຟັງທຳຂອງພຣະອະຣິຍະ ໃສ່ໃຈຢ່າງລະອຽດ ປະຕິບັດທຳສົມຄວນແກ່ທຳ ເຂົາອາໄສການຟັງທຳຂອງພຣະອະຣິຍະ ອາໄສການໃສ່ໃຈຢ່າງລະອຽດ ອາໄສການປະຕິບັດທຳສົມຄວນແກ່ທຳ ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນກຸສົນ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນອະກຸສົນ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງມີໂທດ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງບໍ່ມີໂທດ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງຄວນເສບ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງບໍ່ຄວນເສບ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງຊົ່ວ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນສິ່ງປະນີດ" ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ເປັນທຳດຳ ທຳຂາວ ແລະ ທຳມີສ່ວນປຽບ ທຽບໄດ້" ເມື່ອເຂົາຮູ້ເຫັນແນວນີ້ຍ່ອມລະອະວິດຊາໄດ້ ວິດຊາຍ່ອມເກີດຂຶ້ນເພາະອະວິດຊາດັບລົງ ເພາະວິດຊາເກີດຂຶ້ນ ຄວາມສຸກຍ່ອມເກີດຂຶ້ນ ໂສມະນັດຍິ່ງກວ່າຄວາມສຸກຍ່ອມເກີດຂຶ້ນ ທ່ານຜູ້ຈະເລີນຄວາມປາໂມດເກີດຈາກຄວາມເບີກບານໃຈແມ່ນສັນ ໃດເພາະອະວິດຊາດັບລົງ ເພາະວິດຊາເກີດຂຶ້ນ ຄວາມສຸກຍ່ອມເກີດຂຶ້ນ ໂສມະນັດຍິ່ງກວ່າຄວາມສຸກຍ່ອມເກີດຂຶ້ນສັນນັ້ນຄືກັນ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງຮູ້ວິທີການບັນລຸໂອກາດທີ ໙ ນີ້ ເພື່ອໃຫ້ເຖິງຄວາມສຸກ

ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດເຈົ້າ ພຣະອົງນັ້ນ ຊົງຮູ້ວິທີການບັນລຸໂອກາດ ໓ ປະການນີ້ແລ ເພື່ອໃຫ້ເຖິງຄວາມສຸກ”

ຂ້າແດ່ ພຣະອົງຜູ້ຈະເລີນ ສະນັງກຸມາຣະພົມໄດ້ຕັດເນື້ອຄວາມນີ້ແລ້ວ ຈຶ່ງຕັດຕໍ່ໄປວ່າ

## ສະຕິປັດຖານ ໔ ປະການ

[໔໗໙] “ພວກເທບຊັ້ນຕາວະຕິງສາ ຜູ້ຈະເລີນເຂົ້າໃຈເລື້ອງນັ້ນວ່າແນວໃດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງບັນຍັດສະຕິປັດຖານ ໔ ປະການນີ້ ແມ່ນທີ່ຊົງບັນຍັດໄວ້ຢ່າງດີ ກໍພຽງເພື່ອໃຫ້ບັນລຸກຸສົນທຳ

ສະຕິປັດຖານ ໔ ປະການນັ້ນມີຫຍັງແດ່ ຄື

## ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ພິກຂຸນັ້ນ ເມື່ອພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ຍ່ອມຕັ້ງຈິດໝັ້ນໂດຍທຳ ຍ່ອມຜ່ອງໃສໂດຍທຳ ໃນກາຍານຸປັດສະນານັ້ນ ພິກຂຸນັ້ນ ຕັ້ງຈິດໝັ້ນໂດຍທຳ ຜ່ອງໃສໂດຍທຳ ໃນກາຍານຸປັດສະນານັ້ນແລ້ວ ກໍຍ່ອມບັງເກີດມີຍານະທັດສະນະໃນກາຍອື່ນພາຍນອກ

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍພາຍໃນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ພິກຂຸນັ້ນ ເມື່ອພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍພາຍໃນຢູ່ ຍ່ອມຕັ້ງຈິດໝັ້ນໂດຍຊອບ ຍ່ອມຜ່ອງໃສໂດຍຊອບໃນເວທະນານຸປັດສະນານັ້ນ ພິກຂຸນັ້ນ ຕັ້ງຈິດໝັ້ນໂດຍຊອບ ຜ່ອງໃສໂດຍຊອບໃນເວ ທະນານຸປັດສະນານັ້ນແລ້ວ ກໍຍ່ອມບັງເກີດມີຍານະທັດສະນະໃນເວທະນາອື່ນພາຍນອກ

໓. ພິຈາລະນາເຫັນຈິດໃນຈິດພາຍໃນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ພິກຂຸນັ້ນ ເມື່ອພິຈາລະນາເຫັນຈິດໃນຈິດພາຍໃນຢູ່ຍ່ອມຕັ້ງຈິດໝັ້ນໂດຍທຳ ຍ່ອມຜ່ອງໃສໂດຍທຳ ໃນຈິດຕານຸປັດສະນານັ້ນ ພິກຂຸນັ້ນຕັ້ງຈິດ ໝັ້ນໂດຍທຳ ຜ່ອງໃສໂດຍທຳ ໃນຈິດຕານຸປັດສະນານັ້ນ ແລ້ວກໍຍ່ອມບັງເກີດມີຍານະທັດສະນະໃນຈິດອື່ນພາຍນອກ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ພິກຂຸນັ້ນ ເມື່ອພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ຍ່ອມຕັ້ງຈິດໝັ້ນໂດຍທຳ ຍ່ອມຜ່ອງໃສໂດຍທຳ ໃນທຳມານຸປັດສະນານັ້ນ ພິກຂຸນັ້ນຕັ້ງຈິດໝັ້ນໂດຍທຳ ຜ່ອງໃສໂດຍທຳ ໃນທຳມານຸປັດສນານັ້ນແລ້ວ ກໍຍ່ອມບັງເກີດມີຍານທັດສະນະໃນທຳອື່ນພາຍນອກ

ທ່ານຜູ້ຈະເລີນທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງບັນຍັດສະຕິປັດຖານ ໔ ປະການນີ້ແລ ເພື່ອໃຫ້ບັນລຸກຸສົນທຳ"

"ຂ້າແດ່ ພຣະອົງຜູ້ຈະເລີນ ສະນັງກຸມາຣະພົມ ໄດ້ຕັດເນື້ອຄວາມນີ້ແລ້ວ ຈຶ່ງໄດ້ຕັດຕໍ່ໄປອີກວ່າ

## ບໍຣິຂານແຫ່ງສະມາທິ ໗ ປະການ

[໔໙໐] "ພວກເທບຊັ້ນຕາວະຕິງສາຜູ້ຈະເລີນ ເຂົ້າໃຈເລື້ອງນັ້ນວ່າແນວໃດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນຊົງບັນຍັດບໍຣິຂານແຫ່ງສະມາທິ ໗ ປະການນີ້ ແມ່ນທີ່ຊົງບັນຍັດຢ່າງດີກໍພຽງເພື່ອຄວາມຈະເລີນເພື່ອຄວາມບໍລິບູນແຫ່ງສຳມາສະມາທິ

ບໍຣິຂານແຫ່ງສະມາທິ ໗ ປະການນັ້ນມີຫຍັງແດ່ ຄື

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ຄິດຖືກ)
໓. ສຳມາວາຈາ (ເວົ້າຈາຖືກ)
໔. ສຳມາກຳມັນຕະ (ການງານຖືກ)
໕. ສຳມາອາຊີວະ (ລ້ຽງຊີບຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)
໗. ສຳມາສະຕິ (ຣະນຶກຖືກ)

ທ່ານຜູ້ຈະເລີນທັງຫຼາຍ ສະພາວະທີ່ຈິດມີອາລົມດຽວ ເຊິ່ງມີອົງ ໗ ປະການນີ້ຫ້ອມລ້ອມຮຽກວ່າ "ອະຣິຍະສຳມາສະມາທິ ທີ່ມີອຸປະນິສະ[໑]" ກໍວ່າ "ອະຣິຍະສຳມາສະມາທິທີ່ມີບໍຣິຂານ" ກໍວ່າ

ທ່ານຜູ້ຈະເລີນທັງຫຼາຍ ຜູ້ມີສຳມາທິດຖິ ຈຶ່ງມີສຳມາສັງກັບປະ ຜູ້ມີສຳມາສັງກັບປະຈຶ່ງມີສຳມາວາຈາ ຜູ້ມີສຳມາວາຈາ ຈຶ່ງມີສຳມາກຳມັນຕະ ຜູ້ມີສຳມາກຳມັນຕະ ຈຶ່ງມີສຳມາອາຊີວະຜູ້ມີສຳມາອາຊີວະ ຈຶ່ງມີສຳມາວາຍາມະ ຜູ້ມີສຳມາວາຍາມະ ຈຶ່ງມີສຳມາສະຕິ ຜູ້ມີສຳມາສະຕິ ຈຶ່ງມີສຳມາສະມາທິ ຜູ້ມີສຳມາສະມາທິ ຈຶ່ງມີສຳມາວາຍາມະ ຜູ້ມີສຳມາວາຍາມະ ຈຶ່ງມີສຳມາວິມຸດຕິ

ທ່ານຜູ້ຈະເລີນທັງຫຼາຍ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງອົງທຳໃດວ່າ“ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນຊັດແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ” ປະຕູແຫ່ງອຳມະຕະຈຶ່ງຈະຊື່ວ່າໄດ້ໄຂອອກແລ້ວ

ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງອົງທຳທີ່ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວ ໃນພຣະສຳມາສຳພຸດທະເຈົ້າວ່າ “ພຣະທຳ ເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນຊັດແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ” ປະຕູແຫ່ງອຳມະຕະຈຶ່ງຈະຊື່ວ່າໄຂແລ້ວ

ທ່ານຜູ້ຈະເລີນທັງຫຼາຍ ຊົນເຫຼົ່າໃດປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ຊົນເຫຼົ່ານີ້ເປັນໂອປະປາຕິກະເປັນຜູ້ທີ່ພຣະຜູ້ມີພຣະພາກເຈົ້າຊົງແນະນຳ (ໃຫ້ຕັ້ງຢູ່) ໃນທຳແລ້ວ ເປັນຊາວມະຄົດ ມີຈຳນວນຫຼາຍກວ່າ ໘,໔໐໐,໐໐໐ ຄົນ ຜູ້ເຄີຍບໍາຣະບັດພຣະຣັດຕະນະໄຕຣ ລ່ວງລັບສັງຊີວິດໄປແລ້ວເປັນພຣະໂສດາບັນ ເພາະສັງໂຍດ ໓ ປະການສິ້ງໄປ ບໍ່ມີທາງຕໍ່າຕ້ອຍ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ ອັນໜຶ່ງ ໃນຊົນຈຳນວນນັ້ນ ຜູ້ທີ່ເປັນພຣະສະກະທາຄາມີກໍມີຢູ່

ຂ້າພະເຈົ້າຢ້ານການເວົ້າຕົວະຈຶ່ງບໍ່ອາດຄິດໄລ່ວ່າ
“ໃນຈຳນວນນັ້ນເຫຼົ່າຊົນນອກນີ້
ເປັນຜູ້ມີສ່ວນແຫ່ງບຸນ (ນັ້ນນຳຫຼືບໍ່?)”

[໔໗໑] ຂ້າແດ່ ພຣະອົງຜູ້ຈະເລີນ ສະນັງກຸມາຣະພົມໄດ້ຕັດເນື້ອຄວາມນີ້ແລ້ວ ເມື່ອສະນັງກຸມາຣະພົມຕັດເນື້ອຄວາມນີ້ຢູ່ ທ້າວເວດສະວັນມະຫາຣາດຊົງດຳຣິແນວນີ້ວ່າ “ເປັນຕາງຶດແທ້ນໍ ບໍ່ເຄີຍພາກົດມີມາກ່ອນວ່າ ຈະມີພຣະສາດສະດາຜູ້ປະເສີດຍິ່ງໄປກວ່ານີ້ ຈັກມີການສະແດງທຳທີ່ຍິ່ງໄປກວ່ານີ້ ຈັກພາກົດການບັນລຸຄຸນວິເສດທີ່ຍິ່ງໄປກວ່ານີ້”

ລຳດັບນັ້ນ ສະນັງກຸມາຣະພົມ ຊົງຮູ້ພຣະດຳຣິຂອງທ້າວເວດສະວັນມະຫາຣາດດ້ວຍພຣະຫະໄທ ຈຶ່ງຕັດກັບທ້າວເວດສະວັນມະຫາຣາດແນວນີ້ວ່າ "ເວດສະວັນມະຫາຣາດຜູ້ຈະເລີນເຂົ້າໃຈເລື້ອງນັ້ນວ່າແນວໃດ ໃນອະດີດຕະການກໍໄດ້ມີພຣະສາດສະດາຜູ້ປະເສີດຍິ່ງໄປກວ່ານີ້ ໄດ້ມີການສະແດງທຳທີ່ຍິ່ງໄປກວ່ານີ້ ໄດ້ຜາກົດການບັນລຸຄຸນວິເສດທີ່ຍິ່ງໄປກວ່ານີ້ ເຖິງໃນອະນະຄົດຕະການກໍຈັກມີພຣະສາດສະດາຜູ້ຍິ່ງໄປກວ່ານີ້ ຈັກມີການສະແດງທຳທີ່ຍິ່ງໄປກວ່ານີ້ຈັກຜາກົດການບັນລຸຄຸນວິເສດທີ່ຍິ່ງໄປກວ່ານີ້"

[໔໗໔] ສະນັງກຸມາຣະພົມໄດ້ຕັດເນື້ອຄວາມນີ້ ແກ່ພວກເທບຊັ້ນຕາວະຕິງສາແລ້ວ ທ້າວເວດສະວັນມະຫາຣາດຊົງນຳເນື້ອຄວາມນີ້ ທີ່ໄດ້ຊົງສະດັບຮັບມາສະເພາະພຣະພັກຂອງສະນັງກຸມາຣະພົມ ຜູ້ຕັດແກ່ພວກເທບຊັ້ນຕາວະຕິງສາ ມາຕັດບອກແກ່ບໍລິສັດຂອງພຣະອົງຊະນະວະສະພະຍັກ ນຳເນື້ອຄວາມນີ້ທີ່ໄດ້ສະດັບຮັບມາຈາກສະເພາະພຣະພັກຂອງທ້າວເວດສະວັນມະຫາຣາດທີ່ຕັດແກ່ບໍລິສັດຂອງພຣະອົງ ຂາບທູນແດ່ ພຣະຜູ້ມີພຣະພາກເຈົ້າ ໆ ໄດ້ຊົງສະດັບຮັບເນື້ອຄວາມນີ້ມາສະເພາະໜ້າຂອງຊະນະວະສະພະຍັກ ດ້ວຍຊົງຮູ້ແຈ້ງດ້ວຍພຣະອົງເອງດ້ວຍແລ້ວຕັດບອກແກ່ທ່ານພຣະອານົນ ທ່ານພຣະອານົນໄດ້ສະດັບຮັບເນື້ອຄວາມນັ້ນມາສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ແລ້ວບອກແກ່ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາທັງຫຼາຍພົມມະຈັນນີ້ນັ້ນ ຈຶ່ງບໍລິບູນກວ້າງຂວາງແຜ່ຫຼາຍ ຮູ້ຈັກກັນໂດຍສ່ວນຫຼາຍ ໝັ້ນຄົງດີ ຈົນວ່າເທບແລະ ມະນຸດທັງຫຼາຍປະກາດໄດ້"

**ຊະນະວະສະພະສູດທີ ໕ ຈົບ**

# ໖. ມະຫາໂຄວິນທະສູດ

## ວ່າດ້ວຍມະຫາໂຄວິນທະພາມ

[໔໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເທິງພູຄິດຊະກູດ ເຂດເມືອງຣາດຊະຄື ຄັ້ງນັ້ນ ປັນຈະສິຂະຄັນທັບພະບຸດ ເມື່ອຣາຕີຜ່ານໄປມີວັນນະງົດງາມຫຼາຍ ເປັ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພູຄິດຊະກູດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວຢືນຢູ່ໃນບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈະຂໍຂາບທູນຂໍ້ຄວາມທີ່ໄດ້ສະດັບຮັບມາສະເພາະໜ້າພວກເທບຊັ້ນຕາວະຕິງສາແດ່ ພຣະຜູ້ມີພຣະພາກເຈົ້າ" ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຊີນບອກເຮົາເທີ້ນປັນຈະສິຂະ"

**ເທວະສະພາ**

[໔໗໔] ປັນຈະສິຂະຄັນທັບພະບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຫຼາຍມື້ມາແລ້ວໃນຄືນເພັງ ວັນອຸໂປສົດ ໑໕ ຄ່ຳ ອັນເປັນວັນປະວາຣະນາພວກເທບຊັ້ນຕາວະຕິງສາທັງໝົດນັ່ງປະຊຸມກັນ ໃນສຸທຳມາເທວະສະພາ ມີເທບບໍລິສັດຫຼວງຫຼາຍນັ່ງຢູ່ໂດຍຮອບທ້າວຈາຕຸມະຫາຣາດປະທັບຢູ່ໃນທິດທັງ ໔ ຄື

໑. ທິດຕາເວັນອອກ ມີທ້າວທະຕະຣະຖະມະຫາຣາດ ປະທັບນັ່ງອວ່າຍພຣະພັກໄປທາງທິດຕາເວັນຕົກ ມີພວກເທບຢູ່ເບື້ອງໜ້າ

໒. ທິດໃຕ້ ມີທ້າວວິຣຸນລະຫົກມະຫາຣາດ ປະທັບນັ່ງອວ່າຍພຣະພັກໄປທາງທິດເໜືອມີພວກເທບຢູ່ເບື້ອງໜ້າ

໓. ທິດຕາເວັນຕົກ ມີທ້າວວິຣູປັກຂະມະຫາຣາດປະທັບນັ່ງອວ່າຍພຣະພັກໄປທາງທິດຕາເວັນອອກ ມີພວກເທບຢູ່ເບື້ອງໜ້າ

໔. ທິດເໜືອ ມີທ້າວເວດສະວັນມະຫາຣາດ ປະທັບນັ່ງອວ່າຍພຣະພັກໄປທາງທິດໃຕ້ມີພວກເທບຢູ່ເບື້ອງໜ້າ

ເມື່ອຄັ້ງທີ່ພວກເທບຊັ້ນຕາວະຕິງສາທັງໝົດ ນັ່ງປະຊຸມກັນໃນສຸທຳມາເທວະສະພາມີພວກເທບບໍລິສັດຫຼວງຫຼາຍນັ່ງຢູ່ໂດຍຮອບ ມີທ້າວຈາຕຸມະຫາຣາດປະທັບຢູ່ໃນທິດທັງ ໔ ນີ້ເປັນທຳນຽມໃນການນັ່ງຂອງທ້າວຈາຕຸມະຫາຣາດ ຂ້າງຫຼັງຖັດອອກມາເປັນບ່ອນນັ່ງຂອງຂ້າພຣະອົງທັງຫຼາຍ ເທບເຫຼົ່ານັ້ນ ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າແລ້ວ ດຽວນີ້ເກີດໃນສະຫວັນຊັ້ນຕາວະຕິງສາ ຮຸ່ງເຮືອງເກີນເທບເຫຼົ່າອື່ນດ້ວຍວັນນະ ແລະ ຍົດ ໄດ້ຍິນວ່າ ດ້ວຍເຫດນັ້ນພວກເທບຊັ້ນຕາວະຕິງສາ ຈຶ່ງມີໃຈຍິນດີ ເບີກບານໃຈ ເກີດປີຕິ ແລະ ໂສມະນັດວ່າ "ທ່ານທັງຫຼາຍ ໝູ່ເທບຈະເລີນເຕັມທີ່ ໝູ່ອະສູນເສື່ອມຖອຍລົງ"

[໔໗໕] ຂ້າແດ່ ພຣະອົງຜູ້ຈະເລີນ ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງຮູ້ຄວາມເຫຼື້ອມໃສຂອງພວກເທບຊັ້ນຕາວະຕິງສາ ຈຶ່ງຊົງອະນຸໂມທະນາດ້ວຍຄາຖາເຫຼົ່ານີ້ວ່າ

"ທ່ານຜູ້ຈະເລີນທັງຫຼາຍ ພວກເທບຊັ້ນຕາວະຕິງສາ

ມີພຣະອິນເປັນປະທານ
ຖວາຍນະມັດສະການພຣະຕະຖາຄົດເຈົ້າ ແລະ ຄວາມດີຂອງພຣະທຳ
ເມື່ອເຫັນເທບເຫຼົ່າໃໝ່ຜູ້ມີວັນນະ ແລະ ຍົດ
ຜູ້ເຄີຍປະພຶດພົມມະຈັນໃນພຣະສຸຄົດເຈົ້າເຂົ້າມາໃນບ່ອນນີ້ (ນຳ)
ກໍພາກັນຊື່ນບານໃຈ
ເທບເຫຼົ່ານັ້ນເປັນສາວົກ
ຂອງພຣະຜູ້ມີພຣະປັນຍາກວ້າງຂວາງຄືແຜ່ນດິນ
ທັງໝົດເປັນຜູ້ບັນລຸຄຸນວິເສດ
ຮຸ່ງເຮືອງເກີນເທບເຫຼົ່າອື່ນໃນບ່ອນນີ້
ດ້ວຍວັນນະ ຍົດ ແລະ ອາຍຸ
ພວກເທບຊັ້ນຕາວະຕິງສາມີພຣະອິນເປັນປະທານ
ເມື່ອເຫັນເຫດນີ້ແລ້ວພາກັນເບີກບານ
ຖວາຍນະມັດສະການພຣະຕະຖາຄົດເຈົ້າ ແລະ ຄວາມດີຂອງພຣະທຳ"

ຂ້າແດ່ ພຣະອົງຜູ້ຈະເລີນ ໄດ້ຍິນວ່າ ເພາະເຫດນັ້ນ ພວກເທບຊັ້ນຕາວະຕິງສາຈຶ່ງມີໃຈຍິນດີ ເບີກບານໃຈ ເກີດປີຕິ ແລະ ໂສມະນັດສຸດຈະປະມານ ໄດ້ກ່າວວ່າ "ທ່ານທັງຫຼາຍໝູ່ເທບຈະເລີນເຕັມທີ່ ໝູ່ອະສູນເສື່ອມຖອຍລົງ"

## ພະຄຸນຕາມຄວາມເປັນຈິງ ໘ ປະການ

[໘໗໙] ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນແລ ທ້າວສັກກະຜູ້ເປັນຈອມແຫ່ງເທບຊົງຮູ້ຄວາມເຫຼື້ອມໃສຂອງພວກເທບຊັ້ນຕາວະຕິງສາ ຈຶ່ງຮັບສັ່ງຮຽກພວກເທບຊັ້ນຕາວະຕິງສາມາຕັດວ່າ "ທ່ານຜູ້ນິຣະທຸກທັງຫຼາຍ ທ່ານປາຖະໜາຈະຟັງພຣະຄຸນຕາມຄວາມເປັນຈິງ ໘ ປະ ການຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນບໍ?"

ພວກເທບຊັ້ນຕາວະຕິງສາຂາບທູນວ່າ "ພວກຂ້າພຣະອົງປາຖະໜາຈະຟັງພຣະຄຸນຕາມຄວາມເປັນຈິງຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຂ້ານ້ອຍ" ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບຊົງປະກາດພຣະຄຸນຕາມຄວາມເປັນຈິງ ໘ ປະການຂອງພຣະຜູ້ມີພຣະພາກເຈົ້າແກ່ພວກເທບຊັ້ນຕາວະຕິງສາວ່າ

ເທບຊັ້ນຕາວະຕິງສາ ຜູ້ຈະເລີນທັງຫຼາຍ ເຂົ້າໃຈເລື້ອງນັ້ນວ່າແນວໃດ?

໑. ເມື່ອໃດ ພຣະຜູ້ມີພຣະພາກເຈົ້າພຣະອົງນີ້ ຊົງປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອ

ຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໔. ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນຊັດແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນ ແມ່ນແນວນີ້ ຜູ້ຊົງສະແດງທຳທີ່ຄວນນ້ອມເຂົ້າມາແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໕. ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງບັນຍັດໄວ້ດີແລ້ວວ່າ “ນີ້ເປັນກຸສົນ” ຊົງບັນຍັດໄວ້ດີແລ້ວວ່າ “ນີ້ເປັນອະກຸສົນ” ຊົງບັນຍັດໄວ້ດີແລ້ວວ່າ “ນີ້ເປັນສິ່ງມີໂທດ” “ນີ້ເປັນສິ່ງບໍ່ມີໂທດ” “ນີ້ເປັນສິ່ງຄວນເສບ” “ນີ້ເປັນສິ່ງບໍ່ຄວນເສບ” “ນີ້ເປັນສິ່ງຊົ່ວ” “ນີ້ເປັນສິ່ງປະນີດ” “ນີ້ເປັນທຳດຳ ທຳຂາວ ແລະ ທຳມີສ່ວນປຽບທຽບ”

ເຮົາບໍ່ເຄີຍເຫັນພຣະສາດສະດາ ຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງບັນຍັດທຳທີ່ເປັນກຸສົນ ເປັນອະກຸສົນ ເປັນທຳມີໂທດ ເປັນທຳບໍ່ມີໂທດ ເປັນທຳຄວນເສບ ເປັນທຳບໍ່ຄວນເສບ ເປັນທຳຊົ່ວ ເປັນທຳປະນີດ ເປັນທຳດຳ ທຳຂາວ ແລະ ທຳມີສ່ວນປຽບທຽບແນວນີ້ໃນອະດີດຕະການເລີຍ ເຖິງໃນບັດນີ້ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໖. ຂໍ້ປະຕິບັດທີ່ໃຫ້ເຖິງພຣະນິບພານ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງບັນຍັດໄວ້ດີແລ້ວແກ່ສາວົກທັງຫຼາຍ ພຣະນິບພານ ແລະ ຂໍ້ປະຕິບັດຍ່ອມເໝາະສົມກັນ ນ້ຳຈາກແມ່ນ້ຳຄົງຄາ ກັບນ້ຳຈາກແມ່ນ້ຳຍະມຸນາ ຍ່ອມກົມກືນກັນ ເຂົ້າກັນໄດ້ສັນໃດ ຂໍ້ປະຕິບັດທີ່ໃຫ້ເຖິງພຣະນິບພານທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງບັນຍັດໄວ້ດີແລ້ວແກ່ສາວົກທັງຫຼາຍ ພຣະນິບພານ ແລະ ຂໍ້ປະຕິບັດຍ່ອມເໝາະສົມກັນສັນນັ້ນຄືກັນ ເຮົາບໍ່ເຄີຍເຫັນພຣະສາດສະດາ ຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງບັນຍັດຂໍ້ປະຕິບັດທີ່ໃຫ້ເຖິງພຣະນິບພານແນວນີ້ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ

໗. ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງໄດ້ພຣະເສຂະທັງຫຼາຍ ຜູ້ຍັງຕ້ອງປະຕິບັດ ແລະ ພຣະຂີນາສົບທັງຫຼາຍ ຜູ້ຢູ່ຈົບພົມມະຈັນແລ້ວ ເປັນພຣະສະຫາຍ (ແຕ່) ບໍ່ຊົງຕິດທ່ານ

ເຫຼົ່ານັ້ນ ຊົງມຸ່ງໝັ້ນປະຕິບັດທຳ ທີ່ຍິນດີການຢູ່ຜູ້ດຽວ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງມຸ່ງໝັ້ນປະຕິບັດທຳ ທີ່ຍິນດີການຢູ່ຜູ້ດຽວແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໖. ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງມີລາບສັກກາຣະເກີດຂຶ້ນຫຼວງຫຼາຍ ຊົງມີຄຳສັນລະເສີນເກີດຂຶ້ນແພ່ຫຼາຍ ເຫັນຈະປຽບທຽບກັບກະສັດທັງຫຼາຍ ຜູ້ມີພຣະສິລິໂສມສະຫງ່າງາມ ເປັນຕາຮັກ ແຕ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ສະເຫວີຍພຣະກະຍາຫານຢ່າງປາສະຈາກຄວາມມົວເມົາ ເຮົາບໍ່ເຄີຍເຫັນພຣະສາດສະດາ ຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ສະເຫວີຍພຣະກະຍາຫານຢ່າງປາສະຈາກຄວາມມົວເມົາແນວນີ້ ໃນອະດີດຕະການເລີຍເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ

໗. ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງມີປົກກະຕິຕັດແນວໃດ ກໍຊົງທຳແນວນັ້ນ ຊົງມີປົກກະຕິກະທຳແນວໃດ ກໍຕັດແນວນັ້ນ ດ້ວຍເຫດນັ້ນ ຈຶ່ງຊື່ວ່າເປັນຜູ້ຊົງມີປົກກະຕິຕັດແນວໃດ ກໍຊົງກະທຳແນວນັ້ນ ຊົງມີປົກກະຕິກະທຳແນວໃດ ກໍຕັດແນວນັ້ນ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງປະຕິບັດທຳສົມຄວນແກ່ທຳແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໘. ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຜູ້ຊົງຂ້າມຄວາມສົງໄສປາສະຈາກຄວາມສົງໄສ ຜູ້ຈົບສິ້ນຄວາມຄິດດ້ວຍອາທິພົມມະຈັນ ອັນເປັນໄປຕາມອັດທະຍາໄສ ເຮົາບໍ່ເຄີຍເຫັນພຣະສາດສະດາ ຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງຂ້າມຄວາມສົງໄສປາສະຈາກຄວາມສົງໄສ ຈົບສິ້ນ ຄວາມຄິດດ້ວຍອາທິພົມມະຈັນ ອັນເປັນໄປຕາມອັດທະຍາໄສແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ"

[໔໓] ຂ້າແດ່ ພຣະອົງຜູ້ຈະເລີນ ທ້າວສັກກະຜູ້ເປັນຈອມແຫ່ງເທບຊົງປະກາດພຣະຄຸນຕາມຄວາມເປັນຈິງ ໘ ປະການນີ້ຂອງພຣະຜູ້ມີພຣະພາກເຈົ້າ ແກ່ພວກເທບຊັ້ນຕາວະຕິງສາ ໄດ້ຍິນວ່າ ເພາະການປະກາດນັ້ນ ພວກເທບຊັ້ນຕາວະຕິງສາ ເມື່ອສະດັບພຣະຄຸນຕາມຄວາມເປັນຈິງ ໘ ປະການຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງມີໃຈຍິນດີ ເບີກບານໃຈ ເກີດປິຕິ ແລະໂສມະນັດສຸດຈະປະມານໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ໃນຈຳນວນເທບເຫຼົ່ານັ້ນ ເທບບາງເຫຼົ່າກ່າວແນວນີ້ວ່າ "ທ່ານຜູ້ນິຣະທຸກທັງຫຼາຍ ຂໍໃຫ້ພຣະສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ໔ ພຣະອົງ ແລະຊົງສະແດງທຳ ຄື ພຣະຜູ້ມີພຣະພາກເຈົ້າເຫີ້ນ (ເພາະ) ການສະເດັດອຸບັດຂຶ້ນ ແລະ ການສະ

ແດງທຳຂອງພຣະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ" ເທບບາງເຫຼົ່າກ່າວແນວນີ້ວ່າ "ທ່ານຜູ້ນິຣະທຸກທັງຫຼາຍ ພຣະສຳມາສຳພຸດທະເຈົ້າ ໔ ພຣະອົງ ຈົ່ງຍົກໄວ້ກ່ອນເທີ້ນ ຂໍໃຫ້ພຣະສຳມາສຳພຸດທະເຈົ້າສະເດັດອຸບັດຂຶ້ນໃນໂລກ ໓ ພຣະອົງ ແລະ ຊົງສະແດງທຳ ຄື ພຣະຜູ້ມີພຣະພາກເຈົ້າເທີ້ນ (ເພາະ) ການສະເດັດອຸບັດຂຶ້ນ ແລະ ການສະແດງທຳຂອງພຣະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ" ເທບບາງເຫຼົ່າກ່າວແນວນີ້ວ່າ "ທ່ານຜູ້ນິຣະທຸກທັງຫຼາຍ ພຣະສຳມາສຳພຸດທະເຈົ້າ ໓ ພຣະອົງຈົ່ງຍົກໄວ້ກ່ອນເທີ້ນ ຂໍໃຫ້ພຣະສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ໔ ພຣະອົງ ແລະຊົງສະແດງທຳ ຄື ພຣະຜູ້ມີພຣະພາກເຈົ້າເທີ້ນ (ເພາະ) ການສະ ເດັດອຸບັດຂຶ້ນ ແລະ ການສະແດງທຳຂອງພຣະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ"

[໔໗໘] ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພວກເທບຊັ້ນຕາວະຕິງສາກ່າວແນວນີ້ ແລ້ວທ້າວສັກກະຜູ້ເປັນຈອມແຫ່ງເທບຕັດແກ່ພວກເທບຊັ້ນຕາວະຕິງສາແນວນີ້ວ່າ "ທ່ານຜູ້ນິຣະທຸກທັງຫຼາຍ ນັ້ນບໍ່ແມ່ນຖານະ ບໍ່ແມ່ນໂອກາດ ທີ່ພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ໔ ພຣະອົງ ຈະສະເດັດອຸບັດຂຶ້ນໃນໂລກກະທາດດຽວກັນ ບໍ່ກ່ອນບໍ່ຫຼັງ (ພ້ອມກັນ) ຖານະແນວນີ້ມີບໍ່ໄດ້ເລີຍ ທ່ານຜູ້ນິຣະທຸກທັງຫຼາຍ ຂໍໃຫ້ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງມີໂຣຄາພາດໜ້ອຍ ດຳຣົງຢູ່ຍັ້ງຍືນຍາວນານເທີ້ນ (ເພາະ) ການທີ່ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງດຳຣົງຢູ່ຍັ້ງຍືນຍາວນານ ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ"

ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນແລ ແມ່ນທ້າວຈາຕຸມະຫາຣາດໄດ້ຮັບຄຳບອກເລົ່າເລື້ອງທີ່ເປັນເຫດໃຫ້ພວກເທບຊັ້ນຕາວະຕິງສາ ຕ້ອງມານັ່ງປະຊຸມກັນພິຈາລະນາໃນສຸທຳມາເທວະສະພາແລ້ວ ກໍຍັງດຳເນີນການໃນເລື້ອງນັ້ນຢູ່ ທັງໄດ້ຮັບຄຳແນະນຳທີ່ພວກເທບຊັ້ນຕາວະຕິງສາຕາມສັ່ງສອນສະເພາະແລ້ວ ກໍຊົງດຳເນີນການໃນເລື້ອງນັ້ນຢູ່ ແລະ ຕ່າງກໍຍັງຄົງປະທັບຢືນຢູ່ບ່ອນທີ່ປະທັບຂອງຕົນບໍ່ຍອມຈາກໄປ

ທ້າວຈາຕຸມະຫາຣາດເຫຼົ່ານັ້ນ
ໄດ້ຮັບຄຳບອກແລ້ວທັງໄດ້ຮັບຄຳແນະນຳແລ້ວ

ຈຶ່ງມີພຣະຫະໄທຜ່ອງໃສປະທັບຢືນສະຫງົບຢູ່
ໃນທີ່ປະທັບຂອງຕົນ

[໘໙] ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນແລ ໄດ້ເກີດແສງສະຫວ່າງຮຸ່ງເຮືອງຂຶ້ນທາງທິດເໜືອ ຜາກົດແສງສະຫວ່າງເກີນເທວານຸພາບຂອງເທບທັງຫຼາຍ ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບຮັບສັ່ງຮຽກພວກເທບຊັ້ນດາວະຕຶງສາມາຕັດວ່າ "ທ່ານຜູ້ນິຣະທຸກທັງຫຼາຍມີນິມິດທີ່ສັງເກດໄດ້ (ຄື) ແສງສະຫວ່າງເກີດຂຶ້ນແສງສະຫວ່າງຜາກົດຂຶ້ນ ພຣະພົມກໍຈະຜາກົດອົງຂຶ້ນ ເພາະການທີ່ແສງສະຫວ່າງເກີດຂຶ້ນແສງສະຫວ່າງຜາກົດຂຶ້ນນີ້ ຈັດເປັນບຸບພະນິມິດແຫ່ງການຜາກົດຂອງພຣະພົມ"

ເມື່ອມີນິມິດທີ່ສັງເກດໄດ້
ພຣະພົມກໍຈະຜາກົດອົງຂຶ້ນ
ເພາະແສງສະຫວ່າງອັນຮຸ່ງເຮືອງຍິ່ງນັ້ນ
ເປັນນິມິດແຫ່ງພຣະພົມ

## ເລື້ອງສະນັງກຸມາຣະພົມ

[໓໐໐] ຂ້າແດ່ພຣະອົງຜູ້ຈະເລີນ ລຳດັບນັ້ນ ພວກເທບຊັ້ນດາວະຕຶງສານັ່ງຢູ່ເທິງອາສະນະຂອງຕົນກ່າວວ່າ "ພວກເຮົາຈັກຮູ້ແສງສະຫວ່າງນັ້ນ ເມື່ອຮູ້ຊັດແຈ້ງຜົນທີ່ຜາກົດແລ້ວຈຶ່ງຈະໄປ" ແມ່ນທ້າວຈາຕຸມະຫາຣາດປະທັບນັ່ງຢູ່ເທິງທີ່ປະທັບຂອງຕົນ ກໍກ່າວວ່າ "ພວກເຮົາຈັກຮູ້ແສງສະຫວ່າງນັ້ນ ເມື່ອຮູ້ຊັດແຈ້ງຜົນທີ່ຜາກົດແລ້ວ ຈຶ່ງຈະໄປ" ພວກເທບຊັ້ນດາວະຕຶງສາສະດັບເລື້ອງນີ້ແລ້ວເຂົ້າຊານສະຫງົບຢູ່ດ້ວຍຄິດວ່າ "ພວກເຮົາຈັກຮູ້ແສງສະຫວ່າງນັ້ນ ເມື່ອຮູ້ຊັດແຈ້ງຜົນທີ່ຜາກົດແລ້ວຈຶ່ງຈະໄປ" ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນດາວະຕຶງສາ ພຣະອົງຊົງນິມິດອັດຕະພາບໃຫ້ຫຍາບ ຜາກົດຂຶ້ນເພາະຮູບຮ່າງປົກກະຕິຂອງພົມບໍ່ອາດຜາກົດໃນຄອງຈັກຂຸຂອງພວກເທບຊັ້ນດາວະຕຶງສາໄດ້ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນດາວະຕຶງສາ ພຣະອົງກໍຮຸ່ງເຮືອງເກີນເທບເຫຼົ່າອື່ນ ດ້ວຍວັນນະແລະ ຍົດ ຮ່າງກາຍທີ່ເປັນຄຳຍ່ອມງົດງາມເກີນຮ່າງກາຍມະນຸດສັນໃດ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນດາວະຕຶງສາ ພຣະອົງກໍຮຸ່ງເຮືອງເກີນເທບເຫຼົ່າອື່ນ ດ້ວຍວັນນະແລະຍົດສັນນັ້ນຄືກັນ ເມື່ອສະນັງກຸມາຣະພົມຜາກົດແກ່ພວກເທບຊັ້ນດາວະຕຶງສາໃນເທບບໍລິສັດນັ້ນເທບບາງອົງບໍ່ໄຫວ້ບໍ່ຕ້ອນຮັບບໍ່ເຊີນດ້ວຍອາສະນະທັງໝົດ ພາກັນນັ່ງຂັດສະມາທິ ປະນົມມືນິ່ງຢູ່ດ້ວຍຄິດວ່າ "ບັດນີ້ສະນັງກຸມາຣະພົມຈະປະທັບນັ່ງເທິງບັນລັງຂອງເທບທີ່ພຣະອົງປາຖະໜາ"

ສະນັງກຸມາຣະພົມປະທັບນັ່ງເທິງບັນລັງຂອງເທບອົງໃດ ເທບອົງນັ້ນໄດ້ຄວາມຍິນດີຢ່າງຍິ່ງໄດ້ຄວາມໂສມະນັດຢ່າງຍິ່ງ ຜູ້ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ເພິ່ງຈະໄດ້ຄອງຣາດ ຊົງໄດ້ຄວາມຍິນດີຢ່າງຍິ່ງ ໄດ້ຄວາມໂສມະນັດຢ່າງຍິ່ງສັນໃດ ສະນັງກຸມາຣະພົມປະທັບນັ່ງເທິງບັນລັງຂອງເທບອົງໃດ ເທບອົງນັ້ນກໍໄດ້ຄວາມຍິນດີຢ່າງຍິ່ງ ໄດ້ຄວາມໂສ ມະນັດຢ່າງຍິ່ງສັນນັ້ນຄືກັນ ຈາກນັ້ນເມື່ອສະນັງກຸມາຣະພົມຊົງຮູ້ຄວາມເຫຼື້ອມໃສຂອງພວກເທບຊັ້ນຕາວະຕິງສາ ກໍຊົງຫາຍໂຕແລ້ວອະນຸໂມທະນາດ້ວຍຄາຖາເຫຼົ່ານີ້ວ່າ

"ທ່ານຜູ້ຈະເລີນທັງຫຼາຍພວກເທບຊັ້ນຕາວະຕິງສາ
ມີພຣະອິນເປັນປະທານ
ຖວາຍນະມັດສະການພຣະຕະຖາຄົດເຈົ້າແລະຄວາມດີຂອງພຣະທຳ
ເມື່ອເຫັນເທບເຫຼົ່າໃໝ່ຜູ້ມີວັນນະແລະຍົດ
ຜູ້ເຄີຍປະພຶດພົມມະຈັນໃນພຣະສຸຄົດເຈົ້າ ເຊິ່ງມາໃນບ່ອນນີ້ (ນຳ)
ກໍພາກັນຊື່ນບານໃຈ ຍິນດີຫຼາຍ
ເທບເຫຼົ່ານັ້ນເປັນສາວົກ
ຂອງພຣະຜູ້ມີພຣະປັນຍາກວ້າງຂວາງຄືແຜ່ນດິນ
ທັງໝົດເປັນຜູ້ບັນລຸຄຸນວິເສດ
ຮຸ່ງເຮືອງເກີນເທບເຫຼົ່າອື່ນໃນບ່ອນນີ້
ດ້ວຍວັນນະ ຍົດແລະອາຍຸ
ພວກເທບຊັ້ນຕາວະຕິງສາມີພຣະອິນເປັນປະທານ
ເມື່ອເຫັນເຫດນີ້ແລ້ວພາກັນເບີກບານ
ຖວາຍນະມັດສະການພຣະຕະຖາຄົດເຈົ້າ ແລະ ຄວາມດີຂອງພຣະທຳ"

## ສຽງຂອງສະນັງກຸມາຣະພົມ

[໓໐໑] ຂ້າແດ່ ພຣະອົງຜູ້ຈະເລີນ ສະນັງກຸມາຣະພົມໄດ້ຕັດເນື້ອຄວາມນີ້ໃນຂະນະທີ່ສະນັງກຸມາຣະພົມຕັດເນື້ອຄວາມນີ້ ມີສຽງປະກອບດ້ວຍອົງ ໘ ປະການ ຄື (໑) ແຈ່ມໃສ (໒) ຊັດແຈ້ງ (໓) ນຸ້ມນວນ (໔) ເປັນຕາຟັງ (໕) ກົມກ່ອມ (໖) ບໍ່ແຫບ (໗) ເລິກເຊິ່ງ (໘) ກ້ອງກັງວານ ສະນັງກຸມາຣະພົມເປັ່ງສຽງໃຫ້ຮູ້ກັນສະເພາະໃນບໍລິສັດທີ່ນັ້ນ ສຽງຂອງສະນັງກຸມາຣະພົມນັ້ນ ບໍ່ໄດ້ດັງອອກໄປພາຍນອກບໍລິສັດ ຜູ້ມີສຽງປະກອບດ້ວຍອົງ ໘ ປະການແນວນີ້ຮຽກວ່າ "ມີສຽງຄືສຽງພຣະພົມ"

ຄັ້ງນັ້ນ ພວກເທບຊັ້ນຕາວະຕິງສາໄດ້ທູນສະນັງກຸມາຣະພົມແນວນີ້ວ່າ "ຂໍໂອກາດເທີ້ນທ່ານທ້າວມະຫາພົມ ພວກເຮົາຮູ້ເນື້ອຄວາມນີ້ແລ້ວ ຈຶ່ງເບີກບານໃຈ ອັນໜຶ່ງ ທ້າວສັກກະຜູ້ເປັນ

ຈອມແຫ່ງເທບໄດ້ຕັດພຣະຄຸນຕາມຄວາມເປັນຈິງ ໗ ປະການຂອງພຣະຜູ້ມີພຣະພາກໄວ້ພວກເຮົາຮູ້ແລ້ວກໍເບີກບານໃຈ”

## ພະຄຸນຕາມຄວາມເປັນຈິງ ໗ ປະການ

[໓໐໔] ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນ ສະນັງກຸມາຣະພົມໄດ້ຕັດກັບທ້າວສັກກະຜູ້ເປັນຈອມແຫ່ງເທບແນວນີ້ວ່າ “ຂໍໂອກາດເທີ້ນທ່ານຈອມເທບ ເຮົາກໍຄວນໄດ້ຟັງພຣະຄຸນຕາມຄວາມເປັນຈິງ ໗ ປະການ ຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນແດ່” ທ້າວສັກກະຜູ້ເປັນຈອມແຫ່ງເທບທູນຮັບສະໜອງພຣະດຳຣັດແລ້ວ ຊົງປະກາດພຣະຄຸນຕາມຄວາມເປັນຈິງ ໗ ປະການແກ່ສະນັງກຸມາຣະພົມວ່າ

“ທ້າວມະຫາພົມຜູ້ຈະເລີນເຂົ້າໃຈເລື້ອງນັ້ນວ່າແນວໃດ?”

໑. ເມື່ອໃດ ພຣະຜູ້ມີພຣະພາກເຈົ້າພຣະອົງນີ້ ຊົງປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະມະນຸດທັງຫຼາຍໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໒. ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນຊັດແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນ ແມ່ນແນວນີ້ ຜູ້ຊົງສະແດງທຳທີ່ຄວນນ້ອມເຂົ້າມາແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໓. ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງບັນຍັດໄວ້ດີແລ້ວວ່າ “ນີ້ເປັນກຸສົນ” ຊົງບັນຍັດໄວ້ດີແລ້ວວ່າ “ນີ້ເປັນອະກຸສົນ” ຊົງບັນຍັດໄວ້ດີແລ້ວວ່າ “ນີ້ເປັນສິ່ງມີໂທດ” “ນີ້ເປັນສິ່ງບໍ່ມີໂທດ” “ນີ້ເປັນສິ່ງຄວນເສບ” “ນີ້ເປັນສິ່ງບໍ່ຄວນເສບ” “ນີ້ເປັນສິ່ງຊົ່ວ” “ນີ້ເປັນສິ່ງປະນີດ” “ນີ້ເປັນທຳດຳ ທຳຂາວ ແລະ ທຳມີສ່ວນປຽບທຽບ”

ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງບັນຍັດທຳທີ່ເປັນກຸສົນ ເປັນອະກຸສົນ ເປັນທຳມີໂທດ ເປັນທຳບໍ່ມີໂທດ ເປັນທຳຄວນເສບ ເປັນທຳບໍ່ຄວນ

ເສບ ເປັນທຳຊົ່ວ ເປັນທຳປະປົດ ເປັນທຳດຳ ທຳຂາວ ແລະ ທຳມີສ່ວນປຽບທຽບແນວນີ້ໃນອະດີດຕະການເລີຍ ເຖິງໃນບັດນີ້ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໔. ຂໍ້ປະຕິບັດທີ່ໃຫ້ເຖິງພຣະນິບພານ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງບັນຍັດໄວ້ດີແລ້ວແກ່ສາວົກທັງຫຼາຍ ພຣະນິບພານ ແລະ ຂໍ້ປະຕິບັດຍ່ອມເໝາະສົມກັນ ນໍ້າຈາກແມ່ນໍ້າຄົງຄາ ກັບນໍ້າຈາກແມ່ນໍ້າຍະມຸນາ ຍ່ອມກົມກືນກັນ ເຂົ້າກັນໄດ້ສັນໃດ ຂໍ້ປະຕິບັດທີ່ໃຫ້ເຖິງພຣະນິບພານທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງບັນຍັດໄວ້ດີແລ້ວແກ່ສາວົກທັງຫຼາຍ ພຣະນິບພານ ແລະ ຂໍ້ປະຕິບັດຍ່ອມເໝາະສົມກັນສັນນັ້ນຄືກັນ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງບັນຍັດຂໍ້ປະຕິບັດທີ່ໃຫ້ເຖິງພຣະນິບພານແນວນີ້ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໕. ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງໄດ້ພຣະເສຂະທັງຫຼາຍ ຜູ້ຍັງຕ້ອງປະຕິບັດ ແລະ ພຣະຂີນາສົບທັງຫຼາຍ ຜູ້ຢູ່ຈົບພົມມະຈັນແລ້ວ ເປັນພຣະສະຫາຍ (ແຕ່) ບໍ່ຊົງຕິດທ່ານເຫຼົ່ານັ້ນ ຊົງມຸ່ງໝັ້ນປະຕິບັດທຳ ທີ່ຍິນດີການຢູ່ຜູ້ດຽວ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງມຸ່ງໝັ້ນປະຕິບັດທຳ ທີ່ຍິນດີການຢູ່ຜູ້ດຽວແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ

໖. ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງມີລາບສັກກາຣະເກີດຂຶ້ນຫຼວງຫຼາຍ ຊົງມີຄຳສັນລະເສີນເກີດຂຶ້ນແພ່ຫຼາຍ ເຫັນຈະປຽບທຽບກັບກະສັດທັງຫຼາຍ ຜູ້ມີພຣະສີລິໂສມສະຫງ່າງາມເປັນຕາຮັກ ແຕ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ສະເຫວີຍພຣະກະຍາຫານຢ່າງປາສະຈາກຄວາມມົວເມົາ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ສະເຫວີຍພຣະກະຍາຫານ ຢ່າງປາສະຈາກຄວາມມົວເມົາແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ

໗. ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງມີປົກກະຕິຕັດແນວໃດ ກໍຊົງເຮັດແນວນັ້ນ ຊົງມີປົກກະຕິກະເຮັດແນວໃດ ກໍຕັດແນວນັ້ນ ດ້ວຍເຫດນັ້ນ ຈຶ່ງຊື່ວ່າເປັນຜູ້ຊົງມີປົກກະຕິຕັດແນວໃດ ກໍຊົງກະທຳແນວນັ້ນ ຊົງມີປົກກະຕິກະທຳແນວໃດ ກໍຕັດແນວນັ້ນ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງປະຕິບັດທຳສົມຄວນແກ່ທຳແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

໗. ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຜູ້ຊົງຂ້າມຄວາມສົງໄສປາສະຈາກຄວາມສົງໄສ ຜູ້ຈົບສິ້ນຄວາມຄິດດ້ວຍອາທິພົມມະຈັນ ອັນເປັນໄປຕາມອັດທະຍາໄສ ເຮົາບໍ່ເຄີຍເຫັນພຣະສາດສະດາຜູ້ປະກອບດ້ວຍອົງຄຸນແມ່ນແນວນີ້ ຜູ້ຊົງຂ້າມຄວາມສົງໄສປາສະຈາກຄວາມສົງໄສ ຈົບສິ້ນ ຄວາມຄິດດ້ວຍອາທິພົມມະຈັນ ອັນເປັນໄປຕາມອັດທະຍາໄສແນວນີ້ ໃນອະດີດຕະການເລີຍ ເຖິງໃນບັດນີ້ ເຮົາກໍບໍ່ເຫັນ (ຜູ້ໃດຜູ້ໜຶ່ງ) ນອກຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ"

[໓໐໓] ຂ້າແດ່ ພຣະອົງຜູ້ຈະເລີນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງປະກາດພຣະຄຸນຕາມຄວາມເປັນຈິງ ໗ ປະການນີ້ ຂອງພຣະຜູ້ມີພຣະພາກເຈົ້າ ແກ່ສະນັງກຸມາຣະພົມແລ້ວໄດ້ຍິນວ່າ ເພາະການປະກາດນັ້ນ ສະນັງກຸມາຣະພົມເມື່ອຊົງສະດັບພຣະຄຸນຕາມຄວາມເປັນຈິງ ໗ ປະການຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງມີພຣະທະໄທຍິນດີ ເບີກບານ ເກີດປີຕິ ແລະໂສມະນັດ ຈາກນັ້ນສະນັງກຸມາຣະພົມ ຊົງນິມິດອັດຕະພາບໃຫ້ຫຍາບເປັນຮູບກຸມານ ເຊັ່ນກັບປັນຈະສິຂະຄັນທັບພະບຸດ ຜາກົດແກ່ພວກເທບຊັ້ນຕາວະຕິງສາແລ້ວ ເຫາະຂຶ້ນເທິງອາກາດປະທັບນັ່ງຂັດສະມາທິໃນອາກາດເທິງບ່ອນວ່າງກາງອາກາດ ຄື ບຸຣຸດມີກຳລັງນັ່ງຂັດສະມາທິເທິງບັນລັງທີ່ປູລາດໄວ້ດີແລ້ວ ຫຼື ເທິງພື້ນທີ່ຮາບພຽງສະເໝີກັນສັນນັ້ນ ແລ້ວຮັບສັ່ງຮຽກພວກເທບຊັ້ນຕາວະຕິງສາມາຕັດວ່າ

## ເລື່ອງໂຄວິນທະພາມ

[໓໐໔] "ເທບຊັ້ນຕາວະຕິງສາຜູ້ຈະເລີນທັງຫຼາຍ ເຂົ້າໃຈເລື່ອງນັ້ນວ່າແນວໃດ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງເປັນຜູ້ມີປັນຍາຫຼາຍມາດົນພຽງໃດ ທ່ານຜູ້ຈະເລີນທັງຫຼາຍເລື້ອງເຄີຍມີມາແລ້ວ ມີພຣະຣາຊາພຣະອົງໜຶ່ງພຣະນາມວ່າ ທິສຳບໍດີ ແລະ ມີພາມຊື່ວ່າ ໂຄວິນທະເປັນປຸໂລຫິດຂອງພຣະເຈົ້າທິສຳບໍດີ ພຣະຣາດຊະກຸມານພຣະນາມວ່າ ເຣນຸ ເປັນຣາດຊະບຸດຂອງພຣະເຈົ້າທິສຳບໍດີ ມານົບຊື່ວ່າ ໂຊຕິປາລະ ເປັນບຸດຂອງໂຄວິນທະພາມເພາະເຫດນັ້ນບຸກຄົນເຫຼົ່ານີ້ ຄື ພຣະຣາດຊະບຸດ ເຣນຸ ໂຊຕິປານລະມານົບ ແລະ ກະສັດອີກ ໖ ພຣະອົງລວມເປັນ ໗ ຄົນ ໄດ້ເປັນສະຫາຍກັນ ເມື່ອວັນຄືນຜ່ານໄປ ໂຄວິນທະພາມໄດ້ສິ້ນຊີວິດແລ້ວພຣະເຈົ້າທິສຳບໍດີຊົງຮ່ຳໄຮວ່າ "ທ່ານຜູ້ຈະເລີນທັງຫຼາຍ ໂຄວິນທະພາມໄດ້ສິ້ນຊີວິດໄປໃນເວລາທີ່ເຮົາມອບຣາດຊະກິດທັງປວງໄວ້ໃຫ້ແລ້ວ (ເຮົາ) ອີ່ມອົກ ອີ່ມໃຈ ພັ່ງພ້ອມໄດ້ຮັບການບົວຣະບັດຢູ່ດ້ວຍກາມມະຄຸນ ໕ "

ທ່ານຜູ້ຈະເລີນທັງຫຼາຍ ເມື່ອພຣະເຈົ້າທິສຳບໍດີຕັດແນວນັ້ນ ພຣະຣາດຊະບຸດເຣນຸ ຂາບທູນພຣະເຈົ້າທິສຳບໍດີແນວນີ້ວ່າ "ຂ້າແດ່ ມະຫາຣາດຊະເຈົ້າ ເມື່ອໂຄວິນທະພາມໄດ້ສິ້ນຊີວິດໄປແລ້ວ ຂໍພຣະອົງຢ່າຊົງຮ່ຳໄຮໄປເລີຍ ຍັງມີໂຊຕິປາລະມານົບບຸດຂອງໂຄວິນທະພາມເປັນຜູ້

ສະຫຼາດກວ່າບິດາ ແລະ ສາມາດເລັງເຫັນອັດຖະຄະດີໄດ້ດີກວ່າບິດາຂອງເຂົາອີກ ເຂົາສາມາດຖວາຍໃຫ້ຄຳເປີກສາອັດຖະຄະດີ ຄື ກັນກັບບິດາຂອງເຂົາໄດ້ຖວາຍຄຳເປີກສາແກ່ພຣະອົງ"

ພຣະເຈົ້າທີສຳບໍດີຕັດຖາມວ່າ "ເປັນແນວນັ້ນບໍ? ລູກ"

ພຣະຣາດຊະບຸດເຣນຸທູນຕອບວ່າ "ໂດຍ ເປັນແນວນັ້ນແລ້ວ ຂ້ານ້ອຍ"

## ເລື້ອງມະຫາໂຄວິນທະ

[໓໐໔] ທ່ານຜູ້ຈະເລີນທັງຫຼາຍ ລຳດັບນັ້ນ ພຣະເຈົ້າທີສຳບໍດີຮັບສັ່ງຮຽກຣາດຊະບຸຣຸດຄົນໜຶ່ງມາຕັດວ່າ "ມານີ້ທ້າວ ທ່ານຈົ່ງເຂົ້າໄປຫາໂຊຕິປາລະມານົບເຖິງບ່ອນຢູ່ ແລ້ວໃຫ້ບອກກັບໂຊຕິປາລະມານົບແນວນີ້ວ່າ "ຂໍໃຫ້ໂຊຕິປາລະມານົບ ມີຄວາມສຸກຄວາມຈະເລີນ ພຣະເຈົ້າທີສຳບໍດີຮັບສັ່ງໃຫ້ທ່ານເຂົ້າເຝົ້າ ພຣະເຈົ້າທີສຳບໍດີ ມີພຣະຣາດປະສົງຈະພົບທ່ານ"

ຣາດຊະບຸຣຸດນັ້ນທູນຮັບສະໜອງພຣະຣາດຊະດຳຣັດ ແລ້ວເຂົ້າໄປຫາໂຊຕິປາລະມານົບເຖິງບ່ອນຢູ່ ບອກເຂົາແນວນີ້ວ່າ "ຂໍໃຫ້ທ່ານໂຊຕິປາລະມານົບ ມີຄວາມສຸກຄວາມຈະເລີນ ພຣະເຈົ້າທີສຳບໍດີຮັບສັ່ງໃຫ້ທ່ານເຂົ້າເຝົ້າ ພຣະເຈົ້າທີສຳບໍດີມີພຣະຣາດປະສົງຈະພົບທ່ານ"

ໂຊຕິປາລະມານົບຮັບຄຳແລ້ວ ເຂົ້າໄປເຝົ້າພຣະເຈົ້າທີສຳບໍດີເຖິງບ່ອນປະທັບ ໄດ້ຂາບທູນສົນທະນາປາໄສພໍເປັນທີ່ຊື່ນບານໃຈ ພໍເປັນທີ່ໃຫ້ຊົງລະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ພຣະເຈົ້າທີສຳບໍດີໄດ້ຕັດກັບໂຊຕິປາລະມານົບແນວນີ້ວ່າ "ທ່ານໂຊຕິປາລະມານົບທ່ານຈົ່ງເປັນຜູ້ໃຫ້ຄຳເປີກສາແກ່ເຮົາເທີ້ນ ຢ່າປະຕິເສດການໃຫ້ຄຳເປີກສາເຮົາເລີຍ ເຮົາຈະແຕ່ງຕັ້ງທ່ານໃຫ້ດຳຣົງຕຳແໜ່ງແທນບິດາຂອງທ່ານ ຈະເຮັດພິທີອະພິເສກໄວ້ໃນຕຳແໜ່ງໂຄວິນທະພາມ" ໂຊຕິປາລະມານົບທູນຮັບສະໜອງຕາມພຣະຣາດຊະດຳຣັດແລ້ວ ລຳດັບນັ້ນ ພຣະເຈົ້າທີສຳບໍດີ ຊົງປະກອບພຣະຣາດຊະພິທີອະພິເສກໂຊຕິປາລະມານົບ ໄວ້ໃນຕຳແໜ່ງໂຄວິນທະຊົງແຕ່ງຕັ້ງໃຫ້ດຳຣົງຕຳແໜ່ງແທນບິດາ ໂຊຕິປາລະມານົບຜູ້ໄດ້ຮັບອະພິເສກແຕ່ງຕັ້ງໃນຕຳແໜ່ງແທນບິດາ ໄດ້ຖວາຍຄຳເປີກສາອັດຖະຄະດີ ທີ່ບິດາເຄີຍໃຫ້ຄຳຖວາຍເປີກສາ ຈັດແຈ່ງການງານທີ່ບິດາເຄີຍຈັດແຈ່ງ ຊາວບ້ານຈຶ່ງຮຽກໂຊຕິປາລະມານົບວ່າ "ທ່ານໂຄວິນທະພາມຜູ້ຈະເລີນ ທ່ານໂຄວິນທະພາມຜູ້ຈະເລີນ" ເພາະເຫດນີ້ແລ ໂຊຕິປາລະມານົບຈຶ່ງເກີດມີສົມຍານາມວ່າ "ໂຄວິນທະ ມະຫາໂຄວິນທະ"

## ການແບ່ງຣາດຊະສົມບັດ

[໓໐໕] ທ່ານຜູ້ຈະເລີນທັງຫຼາຍ ຕໍ່ມາທ່ານມະຫາໂຄວິນທະພາມເຂົ້າເຝົ້າກະສັດ ໖ ພຣະອົງ ເຖິງບ່ອນປະທັບ ແລ້ວຂາບທູນກະສັດ ໖ ພຣະອົງນັ້ນແນວນີ້ວ່າ "ຂ້າແດ່ ມະຫາຣາດ

ພຣະເຈົ້າທີສຳບໍດີຊົງຊະຣາ ຊົງແກ່ເຖົ້າ ລ່ວງການຜ່ານວັຍ ໄປໂດຍລຳດັບ ໃຜຈະຮູ້ (ຊະຕາ) ຊີວິດຂອງພຣະອົງວ່າຈະຢູ່ຮອດມື້ໃດ ສະນັ້ນ ເລື້ອງທີ່ພວກອຳມາດຜູ້ສຳເລັດຣາດຊະການຢູ່ຈະເພິ່ງອະພິເສກພຣະຣາດຊະບຸດເຣນຸຂຶ້ນເປັນພຣະເຈົ້າແຜ່ນດິນ ເມື່ອພຣະເຈົ້າທີສຳບໍດີສະຫວັນນະຄົດແລ້ວນັ້ນ ເປັນໄປໄດ້ຢ່າງແນ່ນອນ ຂໍທ່ານຜູ້ຈະເລີນສະເດັດມາເທີ້ນ ຈົ່ງພາກັນໄປເຂົ້າເຝົ້າພຣະຣາດຊະບຸດເຣນຸເຖິງບ່ອນປະທັບ ແລ້ວຂາບທູນແນວນີ້ວ່າ "ພວກຂ້ານ້ອຍເປັນພຣະສະຫາຍທີ່ຮັກ ທີ່ຖືກພຣະຫະໄທ ທີ່ຮັກແພງຂອງທ່ານເຣນຸ ເມື່ອທ່ານເຣນຸເປັນສຸກພວກຂ້ານ້ອຍກໍເປັນສຸກນຳ ເມື່ອທ່ານເຣນຸເປັນທຸກພວກຂ້ານ້ອຍກໍເປັນທຸກນຳ ພຣະເຈົ້າທີສຳບໍດີຊົງຊະຣາ ຊົງແກ່ເຖົ້າ ລ່ວງການຜ່ານວັຍໄປໂດຍລຳດັບໃຜຈະຮູ້ (ຊະຕາ) ຊີວິດ ສະນັ້ນເລື້ອງທີ່ພວກອຳມາດຜູ້ສຳເລັດຣາດຊະການຢູ່ ຈະເພິ່ງອະພິເສກພຣະຣາດຊະບຸດເຣນຸຂຶ້ນເປັນພຣະເຈົ້າແຜ່ນດິນ ເມື່ອພຣະເຈົ້າທີສຳບໍດີສະຫວັນນະຄົດແລ້ວນັ້ນ ເປັນໄປໄດ້ຢ່າງແນ່ນອນ ຖ້າທ່ານເຣນຸໄດ້ຄອງຣາດແລ້ວ ຂໍຈົ່ງຊົງແບ່ງຣາດຊະສົມບັດໃຫ້ພວກຂ້ານ້ອຍແດ່ເທີ້ນ"

ກະສັດທັງ ໖ ພຣະອົງນັ້ນ ຊົງຮັບຄຳຂອງມະຫາໂຄວິນທະພາມແລ້ວເຂົ້າໄປເຝົ້າຣາດຊະບຸດເຣນຸເຖິງບ່ອນປະທັບ ໄດ້ຂາບທູນແນວນີ້ວ່າ "ພວກຂ້ານ້ອຍເປັນສະຫາຍທີ່ຮັກ ທີ່ຖືກພຣະຫະໄທ ທີ່ຮັກແພງຂອງທ່ານເຣນຸ ເມື່ອທ່ານເຣນຸເປັນສຸກພວກຂ້ານ້ອຍກໍເປັນສຸກນຳ ເມື່ອທ່ານເຣນຸເປັນທຸກພວກຂ້ານ້ອຍກໍເປັນທຸກນຳ ພຣະເຈົ້າທີສຳບໍດີຊົງຊະຣາ ຊົງແກ່ເຖົ້າ ລ່ວງການຜ່ານວັຍໄປໂດຍລຳດັບໃຜຈະຮູ້ (ຊະຕາ) ຊີວິດ ສະນັ້ນ ເລື້ອງທີ່ພວກອຳມາດຜູ້ສຳເລັດຣາດຊະການຢູ່ຈະເພິ່ງອະພິເສກພຣະຣາດຊະບຸດເຣນຸຂຶ້ນເປັນພຣະເຈົ້າແຜ່ນດິນ ເມື່ອພຣະເຈົ້າທີສຳບໍດີສະຫວັນນະຄົດແລ້ວນັ້ນ ເປັນໄປໄດ້ຢ່າງແນ່ນອນ ຖ້າທ່ານເຣນຸໄດ້ຄອງຣາດຂໍຈົ່ງຊົງແບ່ງຣາດຊະສົມບັດໃຫ້ພວກຂ້ານ້ອຍແດ່ເທີ້ນ" ພຣະຣາດຊະບຸດເຣນຸຕັດຕອບວ່າ "ທ່ານຜູ້ຈະ ເລີນທັງຫຼາຍ ໃນແວ່ນແຄວັ້ນຂອງເຮົາ ມີຜູ້ໃດເດຈະເພິ່ງມີຄວາມສຸກນອກຈາກທ່ານທັງຫຼາຍ ຖ້າເຮົາໄດ້ຄອງຣາດແລ້ວ ກໍຈະແບ່ງຣາດຊະສົມບັດໃຫ້ທ່ານທັງຫຼາຍນຳ"

[໖໐໗] ທ່ານຜູ້ຈະເລີນທັງຫຼາຍ ຕໍ່ມາເມື່ອວັນຄືນຜ່ານໄປພຣະເຈົ້າທີສຳບໍດີສະຫວັນນະຄົດ ເມື່ອພຣະອົງສະຫວັນນະຄົດ ອຳມາດຜູ້ສຳເລັດຣາດຊະການໄດ້ອະພິເສກຣາດຊະບຸດເຣນຸຂຶ້ນເປັນພຣະເຈົ້າແຜ່ນດິນ ຣາດຊະບຸດເຣນຸໄດ້ຮັບອະພິເສກເປັນພຣະເຈົ້າແຜ່ນດິນແລ້ວຊົງອີ່ມອົກອີ່ມໃຈ ພັ່ງພ້ອມ ໄດ້ຮັບການບົວຣະບັດຢູ່ດ້ວຍກາມມະຄຸນ ໕ ຕໍ່ມາທ່ານມະຫາໂຄວິນທະພາມເຂົ້າໄປເຝົ້າກະສັດ ໖ ພຣະອົງນັ້ນ ເຖິງບ່ອນປະທັບໄດ້ຂາບທູນແນວນີ້ວ່າ "ຂ້າແດ່ພຣະອົງທັງຫຼາຍ ພຣະເຈົ້າທີສຳບໍດີສະຫວັນນະຄົດແລ້ວ ພຣະຣາດຊະບຸດເຣນຸໄດ້ຮັບອະພິເສກເປັນພຣະເຈົ້າແຜ່ນດິນແລ້ວ ຊົງອີ່ມອົກອີ່ມໃຈພັ່ງພ້ອມໄດ້ຮັບການບົວຣະບັດຢູ່ດ້ວຍກາມມະຄຸນ ໕ ກໍຜູ້ໃດເດຈະຮູ້ວ່າ ກາມມະຣົມເປັນເຫດໃຫ້ຫຼົງມົວເມົາ ຂໍພຣະອົງສະເດັດມາເທີ້ນ ຂໍຈົງໄປເຂົ້າເຝົ້າພຣະເຈົ້າເຣນຸເຖິງບ່ອນປະທັບແລ້ວຂາບທູນແນວນີ້ວ່າ "ພຣະເຈົ້າທີສຳບໍດີສະຫວັນນະຄົດແລ້ວ ທ່ານ

ເຣນຸໄດ້ຮັບອະພິເສກເປັນພຣະເຈົ້າແຜ່ນດິນແລ້ວ ຍັງຊົງລະນຶກເຖິງພຣະດຳຣັດນັ້ນໄດ້ຢູ່ບໍ? ຂ້ານ້ອຍ"

[໖໐໗] ກະສັດທັງ ໖ ພຣະອົງນັ້ນ ຊົງຮັບຄຳຂອງທ່ານມະຫາໂຄວິນທະພາມແລ້ວເຂົ້າໄປເຝົ້າພຣະເຈົ້າເຣນຸເຖິງບ່ອນປະທັບໄດ້ຂາບທູນແນວນີ້ວ່າ "ພຣະເຈົ້າທີສຳບໍດີສະຫວັນນະຄົດແລ້ວ ທ່ານເຣນຸໄດ້ຮັບອະພິເສກເປັນພຣະເຈົ້າແຜ່ນດິນແລ້ວ ຍັງຊົງລະນຶກເຖິງພຣະດຳຣັດນັ້ນໄດ້ຢູ່ບໍ? ຂ້ານ້ອຍ"

ພຣະເຈົ້າເຣນຸຕັດຕອບວ່າ "ທ່ານຜູ້ຈະເລີນ ເຮົາຍັງລະນຶກເຖິງຄຳນັ້ນໄດ້ຢູ່ ຜູ້ໃດນໍຈະສາມາດແບ່ງມະຫາປະທະພີນີ້ ເຊິ່ງທາງທິດເໜືອຫວາອອກ ແລະ ທາງທິດໃຕ້ຈ້ອມເຂົ້າຄືສ່ວນໜ້າຂອງກວຽນໃຫ້ເປັນສ່ວນແບ່ງຢ່າງດີ ໗ ສ່ວນ ທໍ່ ໆ ກັນໄດ້"

ກະສັດທັງ ໖ ພຣະອົງຂາບທູນວ່າ "ຈະມີຜູ້ໃດອີກທີ່ສາມາດແບ່ງໄດ້ນອກຈາກມະຫາໂຄວິນທະພາມ ຂ້ານ້ອຍ"

ລຳດັບນັ້ນ ພຣະເຈົ້າເຣນຸຮັບສັ່ງຮຽກຣາດຊະບຸຣຸດຄົນໜຶ່ງມາຕັດວ່າ "ມາເທີ້ນທ່ານຜູ້ຈະເລີນ ຈົ່ງເຂົ້າໄປຫາມະຫາໂຄວິນທະພາມເຖິງບ່ອນຢູ່ແລ້ວບອກວ່າ "ພຣະເຈົ້າເຣນຸຮັບສັ່ງຮຽກຫາທ່ານ"

ຣາດຊະບຸຣຸດນັ້ນ ທູນຮັບສະໜອງພຣະຣາດຊະດຳຣັດແລ້ວ ເຂົ້າໄປຫາມະຫາໂຄວິນທະພາມເຖິງບ່ອນຢູ່ບອກວ່າ "ພຣະເຈົ້າເຣນຸຮັບສັ່ງຫາທ່ານ ຂ້ານ້ອຍ"

ທ່ານມະຫາໂຄວິນທະພາມຮັບຄຳແລ້ວ ໄປເຂົ້າເຝົ້າພຣະເຈົ້າເຣນຸເຖິງບ່ອນປະທັບໄດ້ທູນສົນທະນາປາໄສພໍເປັນທີ່ຊື່ນບານໃຈ ພໍເປັນທີ່ໃຫ້ລະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ

ພຣະເຈົ້າເຣນຸຕັດກັບທ່ານມະຫາໂຄວິນທະພາມແນວນີ້ວ່າ "ມາເທີ້ນທ່ານໂຄວິນທະຈົ່ງແບ່ງມະຫາປະທະພີນີ້ ເຊິ່ງທາງທິດເໜືອຫວາອອກ ແລະ ທາງທິດໃຕ້ຈ້ອມເຂົ້າຄືສ່ວນໜ້າຂອງກວຽນໃຫ້ເປັນສ່ວນແບ່ງຢ່າງດີ ໗ ສ່ວນທໍ່ ໆ ກັນ"

ທ່ານມະຫາໂຄວິນທະພາມທູນຮັບສະໜອງພຣະຣາດຊະດຳຣັດແລ້ວ ແບ່ງມະຫາປະທະພີນີ້ ເຊິ່ງທາງທິດເໜືອຫວາອອກ ແລະ ທາງທິດໃຕ້ຈ້ອມເຂົ້າຄືສ່ວນໜ້າຂອງກວຽນໃຫ້ເປັນສ່ວນແບ່ງຢ່າງດີ ໗ ສ່ວນທໍ່ ໆ ກັນ ສະຖາປະນາລັດ (ອານາຈັກ) ທັງໝົດໃຫ້ມີລັກສະນະຄື ສ່ວນໜ້າຂອງກວຽນຮູ້ວ່າໃນເນື້ອທີ່ເຫຼົ່ານັ້ນ ຊົນນະບົດ (ມະຫາອານາຈັກ) ຂອງພຣະເຈົ້າເຣນຸຢູ່ສູນກາງລັດທັງໝົດນັ້ນ (ຄື)

[໖໐໘] ທ່ານ (ມະຫາ) ໂຄວິນທະໃຫ້ສ້າງເມືອງຫຼວງເຫຼົ່ານີ້ໄວ້ (ຄື)

ໃຫ້ສ້າງເມືອງ ທັນຕະປຸຣະ ເປັນເມືອງຫຼວງຂອງ ລັດກາລິງຄະ
ໃຫ້ສ້າງເມືອງ ໂປຕະນະ ເປັນເມືອງຫຼວງຂອງ ລັດອັດສະກະ
ໃຫ້ສ້າງເມືອງ ມາຫິດສະຕິ ເປັນເມືອງຫຼວງຂອງ ລັດອະວັນຕີ
ໃຫ້ສ້າງເມືອງ ໂຣຣຸກະ ເປັນເມືອງຫຼວງຂອງ ລັດໂສວີຣານະ
ໃຫ້ສ້າງເມືອງ ມິຖິລາ ເປັນເມືອງຫຼວງຂອງ ລັດວິເທຫະ
ໃຫ້ສ້າງເມືອງ ຈຳປາ ເປັນເມືອງຫຼວງຂອງ ລັດອັງຄະ
ໃຫ້ສ້າງເມືອງ ພາຣານະສີ ເປັນເມືອງຫຼວງຂອງ ລັດກາສີ

[໓໑໐] ທ່ານຜູ້ຈະເລີນທັງຫຼາຍ ຄັ້ງນັ້ນ ກະສັດ ໖ ພຣະອົງມີພຣະຫະໄທຍິນດີດ້ວຍສ່ວນໄດ້ ຂອງພຣະອົງມີພຣະດຳຣິສຳເລັດບໍລິບູນວ່າ "ສິ່ງໃດທີ່ເຮົາຢາກໄດ້ ສິ່ງໃດທີ່ເຮົາຫວັງ ສິ່ງໃດທີ່ເຮົາປະສົງ ສິ່ງໃດທີ່ເຮົາປາຖະໜາຢ່າງຍິ່ງ ສິ່ງນັ້ນເຮົາໄດ້ແລ້ວ"

ພຣະເຈົ້າສັດຕະພູ ພຣະເຈົ້າພົມມະທັດ
ພຣະເຈົ້າເວດສະພູ ພຣະເຈົ້າພະຣະຕະ
ພຣະເຈົ້າເຣນຸ ພຣະເຈົ້າທະຕະຣະທະ ໔ ພຣະອົງ
ລວມພຣະມະຫາກະສັດຜູ້ຄອງຣາດ
ໃນເວລານັ້ນມີ ໗ ພຣະອົງ

**ພານະວານທີ ໑ ຈົບ**

## ກິດຕິຄຸນຂອງມະຫາໂຄວິນທະພາມ

[໓໑໑] ທ່ານຜູ້ຈະເລີນທັງຫຼາຍ ຕໍ່ມາກະສັດທັງ ໖ ພຣະອົງສະເດັດເຂົ້າໄປຫາທ່ານໂຄວິນທະພາມເຖິງບ່ອນຢູ່ໄດ້ຕັດແນວນີ້ວ່າ "ຂໍທ່ານໂຄວິນທະພາມ ຈົ່ງເປັນສະຫາຍທີ່ຮັກ ທີ່ຖືກໃຈ ທີ່ຮັກແພງຂອງພວກເຮົາ ດັ່ງທີ່ທ່ານໂຄວິນທະເປັນສະຫາຍທີ່ຮັກ ທີ່ຖືກໃຈ ທີ່ຮັກແພງຂອງພຣະເຈົ້າເຣນຸ ຂໍຈົ່ງໃຫ້ຄຳເປີກສາພວກເຮົາ ຢ່າປະຕິເສດການໃຫ້ຄຳເປີກສາພວກເຮົາເລີຍ"

ມະຫາໂຄວິນທະພາມ ທູນຮັບສະໜອງພຣະຣາດຊະດຳຣັດຂອງກະສັດທັງ ໖ ພຣະອົງເຫຼົ່ານັ້ນ ຜູ້ໄດ້ຮັບມຸດທາພິເສກແລ້ວ

ຕໍ່ມາ ທ່ານມະຫາໂຄວິນທະພາມ ຖວາຍຄຳເປີກສາກ່ຽວກັບຣາດຊະກິດແດ່ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ໗ ພຣະອົງທີ່ຕົນຕ້ອງຖວາຍຄຳເປີກສາ ແລະ ບອກມົນແກ່ພາມມະນະມະຫາສານ ໗ ຄົນ ແລະ ພາມມະຫາດົກ[໑] ໗໐໐ ຄົນ

[໓໑໔] ທ່ານຜູ້ຈະເລີນທັງຫຼາຍ ເມື່ອຕໍ່ມາທ່ານມະຫາໂຄວິນທະພາມມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ມະຫາໂຄວິນທະພາມ ສາມາດເບິ່ງເຫັນພຣະພົມໄດ້ ສາມາດສົນທະນາປາໄສ ເປັກສາກັບພຣະພົມໄດ້"

ຄັ້ງນັ້ນ ທ່ານມະຫາໂຄວິນທະພາມມີຄວາມຄິດແນວນີ້ວ່າ "ເຮົາມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ມະຫາໂຄວິນທະພາມ ສາມາດເບິ່ງເຫັນພຣະພົມໄດ້ ສາມາດສົນທະນາປາໄສເປັກສາກັບພຣະພົມໄດ້" ແຕ່ເຮົາບໍ່ເຄີຍເຫັນພຣະພົມ ທັງບໍ່ເຄີຍສົນທະນາປາໄສເປັກສາກັບພຣະພົມເລີຍ ເຮົາໄດ້ສະດັບຮັບຟັງຄໍາຂອງພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ຜູ້ເປັນປະ ຣະມາຈານເວົ້າກັນວ່າ "ບຸກຄົນຜູ້ຫຼີບຫຼີກຢູ່ ເພ່ງກະລຸນາຊານຕະຫຼອດ ໔ ເດືອນໃນລະດູຝົນ ເຂົາຈະເຫັນພຣະພົມສົນທະນາປາໄສ ເປັກສາກັບພຣະພົມໄດ້" ທາງທີ່ດີເຮົາຄວນຫຼີບຫຼີກເພ່ງກະລຸນາຊານຢູ່ຈັກ ໔ ເດືອນ"

[໓໑໕] ທ່ານຜູ້ຈະເລີນທັງຫຼາຍ ຈາກນັ້ນທ່ານມະຫາໂຄວິນທະພາມເຂົ້າໄປເຝົ້າພຣະເຈົ້າເຣນຸເຖິງບ່ອນປະທັບ ໄດ້ຂາບທູນແນວນີ້ວ່າ "ຂ້າແດ່ ພຣະອົງ ຂ້າພຣະອົງມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ມະຫາໂຄວິນທະພາມ ສາມາດເບິ່ງເຫັນພຣະພົມໄດ້ ສາມາດສົນທະນາປາໄສເປັກສາກັບພຣະພົມໄດ້" ຂ້າພຣະອົງບໍ່ເຄີຍເຫັນພຣະພົມ ທັງບໍ່ເຄີຍສົນທະນາປາໄສເປັກສາກັບພຣະພົມເລີຍ ແຕ່ຂ້າພຣະອົງໄດ້ສະດັບຄໍານີ້ຂອງພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະຜູ້ເປັນປະຣະມາຈານເວົ້າກັນວ່າ "ບຸກຄົນຜູ້ຫຼີບຫຼີກຢູ່ເພ່ງກະລຸນາຊານຕະຫຼອດ ໔ ເດືອນໃນລະດູຝົນ ເຂົາຈະເຫັນພຣະພົມໄດ້ສົນທະນາປາໄສເປັກສາກັບພຣະພົມໄດ້" ຂ້າພຣະອົງປາຖະໜາຈະຫຼີບຫຼີກເພ່ງກະລຸນາຊານຢູ່ຈັກ ໔ ເດືອນໃນລະດູຝົນ ໃຜ ໆ ບໍ່ຄວນເຂົ້າໄປຫາຂ້າພຣະອົງເລີຍ ຍົກເວັ້ນຄົນທີ່ນໍາອາຫານໄປໃຫ້ຄົນດຽວທໍ່ນັ້ນ"

ພຣະເຈົ້າເຣນຸຮັບສັ່ງວ່າ "ໂຄວິນທະ ຂໍທ່ານຈົ່ງກໍານົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໓໑໔] ທ່ານຜູ້ຈະເລີນທັງຫຼາຍ ຈາກນັ້ນ ທ່ານມະຫາໂຄວິນທະພາມເຂົ້າໄປເຝົ້າກະສັດທັງ ໖ ພຣະອົງ ໄດ້ຂາບທູນແນວນີ້ວ່າ "ຂ້າແດ່ ພຣະອົງ ຂ້າພຣະອົງມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ມະຫາໂຄວິນທະພາມ ສາມາດເບິ່ງເຫັນພຣະພົມໄດ້ ສາມາດສົນທະນາປາໄສເປັກສາກັບພຣະພົມໄດ້" ແຕ່ຂ້າພຣະອົງ ບໍ່ເຄີຍເຫັນພຣະພົມ ທັງບໍ່ເຄີຍສົນທະນາປາໄສເປັກສາກັບພຣະພົມເລີຍ ແຕ່ຂ້າພຣະອົງ ໄດ້ສະດັບຄໍານີ້ຂອງພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈາແລະຜູ້ເປັນປະຣະມາຈານເວົ້າກັນວ່າ "ບຸກຄົນຜູ້ຫຼີບຫຼີກຢູ່ເພ່ງກະລຸນາຊານຕະຫຼອດ ໔ ເດືອນໃນລະດູຝົນ ເຂົາຈະເຫັນພຣະພົມໄດ້ສົນທະນາປາໄສເປັກສາກັບພຣະພົມໄດ້" ຂ້າພຣະອົງປາຖະໜາຈະຫຼີບຫຼີກ ເພ່ງກະລຸນາຊານຢູ່ຕະຫຼອດ ໔ ເດືອນໃນລະດູຝົນ ໃຜ ໆ ບໍ່ຄວນເຂົ້າໄປຫາຂ້າພຣະອົງຍົກເວັ້ນຄົນທີ່ນໍາອາຫານໄປໃຫ້ຄົນດຽວທໍ່ນັ້ນ"

ກະສັດທັງ ໖ ພຣະອົງຕັດວ່າ "ໂຄວິນທະ ຂໍທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໓໑໕] ທ່ານຜູ້ຈະເລີນທັງຫຼາຍ ຈາກນັ້ນທ່ານມະຫາໂຄວິນທະພາມເຂົ້າໄປຫາພາມມະນະມະຫາສານ ໗ ຄົນ ແລະ ພາມນະຫາດົກ ໗໐໐ ຄົນແລ້ວ ຈຶ່ງໄດ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ "ມະຫາໂຄວິນທະພາມ ສາມາດເບິ່ງເຫັນພຣະພົມໄດ້ ສາມາດສົນທະນາປາໄສເປີກສາກັບພຣະພົມໄດ້" ແຕ່ຂ້າພະເຈົ້າບໍ່ເຄີຍເຫັນພຣະພົມ ທັງບໍ່ເຄີຍສົນທະນາປາໄສກັບພຣະພົມເລີຍ ແຕ່ຂ້າພະເຈົ້າໄດ້ສະດັບຄຳນີ້ຂອງພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ຜູ້ເປັນປະຣະມາຈານເວົ້າກັນວ່າ "ບຸກຄົນຜູ້ຫຼີບຫຼີກຢູ່ ເພ່ງກະລຸນາຊານຕະຫຼອດ ໔ ເດືອນ ໃນລະດູຝົນ ເຂົາຈະເຫັນພຣະພົມໄດ້ ສົນທະນາປາໄສເປີກສາກັບພຣະພົມໄດ້" ຖ້າເປັນແນວນັ້ນ ພວກທ່ານຈົ່ງສາທະຍາຍມົນ ຕາມທີ່ໄດ້ສະ ດັບມາແລ້ວ ຕາມທີ່ໄດ້ຮຽນມາແລ້ວໂດຍພິດສະດານ ແລະຈົ່ງບອກມົນແກ່ກັນ ແລະກັນຂ້າພະ ເຈົ້າປາຖະໜາຈະຫຼີບຫຼີກ ເພ່ງກະລຸນາຊານຢູ່ຕະຫຼອດ ໔ ເດືອນໃນລະດູຝົນໃຜ ໆ ບໍ່ຄວນເຂົ້າໄປຫາຂ້າພະເຈົ້າເລີຍ ຍົກເວັ້ນຄົນທີ່ນຳອາຫານໄປໃຫ້ຄົນດຽວທໍ່ນັ້ນ"

ພວກພາມມະນະມະຫາສານ ແລະ ພວກພາມນະຫາດົກກ່າວວ່າ "ທ່ານໂຄວິນທະຂໍທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໓໑໖] ທ່ານຜູ້ຈະເລີນທັງຫຼາຍ ຈາກນັ້ນທ່ານມະຫາໂຄວິນທະພາມ ເຂົ້າໄປຫາພັນລະຍາຜູ້ມີຖານະທໍ່ກັນ ໔໐ ຄົນ ເຖິງບ່ອນຢູ່ໄດ້ກ່າວແນວນີ້ວ່າ "ນາງຜູ້ຈະເລີນ ເຮົາມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ "ມະຫາໂຄວິນທະພາມ ສາມາດເບິ່ງເຫັນພຣະພົມໄດ້ ສາມາດສົນທະ ນາປາໄສເປີກສາກັບພຣະພົມໄດ້" ແຕ່ເຮົາບໍ່ເຄີຍເຫັນພຣະພົມ ທັງບໍ່ເຄີຍສົນທະນາປາໄສເປີກ ສາກັບພຣະພົມເລີຍ ແຕ່ເຮົານັ້ນໄດ້ສະດັບຄຳນີ້ຂອງພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະຜູ້ເປັນປະຣະມາຈານເວົ້າກັນວ່າ "ບຸກຄົນຜູ້ຫຼີບຫຼີກເພ່ງກະລຸນາຊານຕະຫຼອດ ໔ ເດືອນໃນລະດູຝົນເຂົາຈະສາມາດເບິ່ງເຫັນພຣະພົມໄດ້ ສົນທະນາປາໄສເປີກສາກັບພຣະພົມໄດ້" ເຮົາປາຖະໜາຈະຫຼີບຫຼີກເພ່ງກະລຸນາຊານຢູ່ຕະຫຼອດ ໔ ເດືອນໃນລະດູຝົນ ໃຜ ໆ ບໍ່ຄວນເຂົ້າໄປຫາເຮົາເລີຍຍົກເວັ້ນຄົນທີ່ນຳອາຫານໄປໃຫ້ຄົນດຽວທໍ່ນັ້ນ"

ພັນລະຍາເຫຼົ່ານັ້ນກ່າວວ່າ "ທ່ານໂຄວິນທະ ຂໍທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໓໑໗] ທ່ານຜູ້ຈະເລີນທັງຫຼາຍ ຈາກນັ້ນ ທ່ານໂຄວິນທະພາມ ຈຶ່ງໃຫ້ສ້າງສັນຖາຄານຫຼັງໃໝ່ທາງທິດຕາເວັນອອກຂອງເມືອງ ແລ້ວຫຼີບຫຼີກເພ່ງກະລຸນາຊານຢູ່ຕະຫຼອດ ໔ ເດືອນໃນລະດູຝົນບໍ່ມີໃຜ ໆ ເຂົ້າໄປຫາ ນອກຈາກຄົນນຳອາຫານໄປໃຫ້ຄົນດຽວທໍ່ນັ້ນ ເມື່ອເວລາລ່ວງໄປ

໔ ເດືອນແລ້ວ ທ່ານມະຫາໂຄວິນທະພາມເກີດຄວາມເບື່ອໜ່າຍທໍ້ຖອຍວ່າ “ເຮົາໄດ້ສະດັບຄຳນີ້ຂອງພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ຜູ້ເປັນປະຣະມາຈານເວົ້າກັນວ່າ “ບຸກຄົນຜູ້ຫຼີບຫຼີກເພ່ງກະລຸນາຊານຢູ່ຕະຫຼອດ ໔ ເດືອນໃນລະດູຝົນ ເຂົາຈະສາມາດເຫັນພຣະພົມໄດ້ສົນທະນາປາໄສເປີກສາກັບພຣະພົມໄດ້ ແຕ່ເຮົາຍັງບໍ່ເຄີຍເຫັນພຣະພົມ ທັງບໍ່ໄດ້ສົນທະນາປາໄສເປີກສາກັບພຣະພົມເລີຍ”

## ການສົນທະນາກັບພຣະພົມ

[໓໑໙] ທ່ານຜູ້ຈະເລີນທັງຫຼາຍ ເວລານັ້ນ ສະນັງກຸມາຣະພົມຮູ້ຄວາມຄິດຄຳນຶງຂອງທ່ານມະຫາໂຄວິນທະພາມດ້ວຍໃຈ ຊິງຫາຍໄປຈາກພົມມະໂລກ ມາຜາກົດສະເພາະໜ້າທ່ານມະຫາໂຄວິນທະພາມ ຄື ບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ທ່ານມະຫາໂຄວິນທະພາມເກີດຄວາມຢ້ານກົວຂົນຫົວລຸກ ເພາະເຫັນຮູບທີ່ບໍ່ເຄີຍເຫັນ ເມື່ອມະຫາໂຄວິນທະພາມເກີດຄວາມຢ້ານກົວຂົນຫົວລຸກແລ້ວ ໄດ້ຂາບທູນສະນັງກຸມາຣະພົມດ້ວຍຄາຖາວ່າ

“ທ່ານຜູ້ນິຣະທຸກທ່ານເປັນໃຜ
ຈຶ່ງມີວັນນະ ຍົດ ແລະ ສິລິໂສມງາມແທ້
ຂ້າພະເຈົ້າບໍ່ຮູ້ຈັກທ່ານຈຶ່ງຂໍຖາມວ່າ
ຂ້າພະເຈົ້າຈະຮູ້ຈັກທ່ານໄດ້ແນວໃດ?”

ສະນັງກຸມາຣະພົມຕັດຕອບດ້ວຍຄາຖາວ່າ

“ເທບທັງປວງຮູ້ຈັກເຮົາດີວ່າ
ເປັນກຸມານຕະຫຼອດການຢູ່ໃນພົມມະໂລກ
ທ່ານຈົ່ງຮູ້ເອົາໄວ້ແນວນີ້ເທີ້ນໂຄວິນທະ”

ທ່ານໂຄວິນທະພາມຂາບທູນດ້ວຍຄາຖາວ່າ

“ຂ້າພະເຈົ້າຂໍຖວາຍຂອງມີຄ່າເຫຼົ່ານີ້ແກ່ທ່ານ
ຄືອາສະນະນ້ຳດື່ມນ້ຳມັນທາຕີນ
ນ້ຳຕານຊ້ຽວແດ່ພຣະພົມ
ຂໍທ່ານຜູ້ຈະເລີນຈົ່ງຮັບຂອງມີຄ່າຂອງຂ້າພະເຈົ້າໄວ້ແດ່ເທີ້ນ”

ສະນັງກຸມາຣະພົມຕັດຕອບດ້ວຍຄາຖາວ່າ

“ທ່ານໂຄວິນທະເຮົາຍອມຮັບຂອງມີຄ່າຂອງທ່ານ

ທີ່ທ່ານເວົ້າເຖິງ ເຮົາໃຫ້ໂອກາດທ່ານແລ້ວ
ຈົ່ງຖາມເລື່ອງໃດກໍໄດ້ທີ່ທ່ານປາຖະໜາຈະຖາມ
ເພື່ອປະໂຫຍດເກື້ອກູນໃນປະຈຸບັນ ແລະ ເພື່ອຄວາມສຸກໃນອະນາຄົດ"

[໓໑໙] ທ່ານຜູ້ຈະເລີນທັງຫຼາຍ ທ່ານມະຫາໂຄວິນທະພາມມີຄວາມຄິດແນວນີ້ວ່າ "ສະນັງກຸມາຣະພົມໃຫ້ໂອກາດແລ້ວ ເຮົາຄວນຖາມປະໂຫຍດໃນປະຈຸບັນ ຫຼື ປະໂຫຍດໃນອະນາ ຄົດກັບທ່ານແນວໃດນໍ?" ຄິດຕໍ່ໄປອີກວ່າ "ເຮົາເປັນຜູ້ສະຫຼາດເລື່ອງປະໂຫຍດໃນປະຈຸບັນແມ່ນຊົນເຫຼົ່າອື່ນກໍຖາມປະໂຫຍດໃນປະຈຸບັນກັບເຮົາ ທາງທີ່ດີເຮົາຄວນຖາມເຖິງປະໂຫຍດໃນອະນາຄົດກັບສະນັງກຸມາຣະພົມ" ຈຶ່ງຂາບທູນສະນັງກຸມາຣະພົມດ້ວຍຄາຖາວ່າ

"ຂ້າພະເຈົ້າ ມີຄວາມສົງໄສຈະຂໍຖາມທ່ານສະນັງກຸມາຣະພົມ
ຜູ້ບໍ່ມີຄວາມສົງໄສໃນບັນຫາທີ່ຜູ້ອື່ນສົງໄສວ່າ
ສັດຜູ້ຕັ້ງຢູ່ໃນທຳອັນໃດ? ສຶກສາຢູ່ໃນທຳອັນໃດ?
ຈຶ່ງຈະເຂົ້າເຖິງພົມມະໂລກອັນເປັນອະມະຕະໄດ້"

ສະນັງກຸມາຣະພົມຕັດຕອບດ້ວຍພຣະຄາຖາ ວ່າ

"ພາມໃນໝູ່ມະນຸດ
ສັດຜູ້ລະຄວາມຍຶດຖືວ່າເປັນຂອງເຮົາ
ເປັນຜູ້ຢູ່ຜູ້ດຽວຜູ້ນ້ອມໃຈໄປໃນກະລຸນາ
ຜູ້ບໍ່ມີກິ່ນຊົ່ວຮ້າຍ ເວັ້ນຈາກການເສບການ
ສັດຜູ້ຕັ້ງຢູ່ໃນທຳນີ້ ແລະ ສຶກສາຢູ່ໃນທຳນີ້
ຈຶ່ງຈະເຂົ້າເຖິງພົມມະໂລກອັນເປັນອະມະຕະໄດ້"

[໓໒໐] ທ່ານຜູ້ຈະເລີນທັງຫຼາຍ ມະຫາໂຄວິນທະພາມຂາບທູນວ່າ "ຄຳຂອງທ່ານທີ່ວ່າ "ລະຄວາມຍຶດຖືວ່າເປັນຂອງເຮົາ" ຂ້າພະເຈົ້າເຂົ້າໃຈວ່າ "ບຸກຄົນບາງຄົນໃນໂລກນີ້ລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ລະເຄືອຍາດມິດສະຫາຍທັງຫຼາຍ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນໄປບວດເປັນບັນພະຊິດ" ຄຳຂອງທ່ານທີ່ວ່າ "ລະຄວາມຍຶດຖືວ່າເປັນຂອງເຮົາ" ຂ້າພະເຈົ້າເຂົ້າໃຈດັ່ງຕໍ່ໄປນີ້

ຄຳຂອງທ່ານທີ່ວ່າ "ເປັນຜູ້ຢູ່ຜູ້ດຽວ" ຂ້າພະເຈົ້າເຂົ້າໃຈວ່າ "ບຸກຄົນບາງຄົນໃນໂລກນີ້ອາໄສເສນາສະນະອັນສະຫງັດ ຄື ປ່າ ເຫງົ້າໄມ້ ພູຜາ ຊ່ອມຜາ ຖ້ຳ ປ່າຊ້າ ປ່າຕຶບ ກາງແຈ້ງ ກອງເຟືອງ" ຄຳຂອງທ່ານທີ່ວ່າ "ເປັນຜູ້ຢູ່ຜູ້ດຽວ" ຂ້າພະເຈົ້າເຂົ້າໃຈດັ່ງວ່າມານີ້

ຄຳຂອງທ່ານທີ່ວ່າ "ຜູ້ນ້ອມໃຈໄປໃນກະລຸນາ" ຂ້າພະເຈົ້າເຂົ້າໃຈວ່າ "ບຸກຄົນບາງຄົນໃນໂລກນີ້ ມີກະລຸນາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງສຽງ ແຜ່ໄປຕະຫຼອດທົ່ວໂລກ ທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍກະລຸນາຈິດອັນໄພບູນເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່" ຄຳຂອງທ່ານທີ່ວ່າ "ຜູ້ນ້ອມໃຈໄປໃນກະລຸນາ" ຂ້າພະເຈົ້າເຂົ້າໃຈດັ່ງວ່າມານີ້

ອັນໜຶ່ງ ເມື່ອທ່ານຜູ້ຈະເລີນເວົ້າເຖິງກິ່ນຊົ່ວຮ້າຍຢູ່ ຂ້າພະເຈົ້າບໍ່ຮູ້ຈັກ (ກິ່ນນັ້ນ)"

ມະຫາໂຄວິນທະພາມທູນຖາມດ້ວຍຄາຖາ ວ່າ

"ຂ້າແດ່ ພົມບັນດາມະນຸດ
ພວກໃດມີກິ່ນຊົ່ວຮ້າຍ
ຂ້າພະເຈົ້າບໍ່ຮູ້ຈັກພວກນັ້ນ
ຂໍທ່ານຜູ້ເປັນນັກປາດຈົ່ງບອກມາໃຫ້ຮູ້ໃນບ່ອນນີ້ເທີ້ນ
ແມ່ນຫຍັງ? ຮ້ອຍຮັດໝູ່ສັດຈຶ່ງມີກິ່ນເໝັນເນົ່າຟຸ້ງກະຈາຍຢູ່
ຕ້ອງໄປອະບາຍ ປິດກັ້ນພົມມະໂລກແລ້ວ"

ສະນັງກຸມາຣະພົມຕັດຕອບດ້ວຍຄາຖາວ່າ

"ໂກທະ (ຄວາມໂກດເຄືອງ) ໂມສະວັດຊະ (ການເວົ້າຕົວະ)
ນິກະຕິ (ການໂກງ) ໂທພະລະ (ການປະທຸດຮ້າຍມິດ)
ກະທະຣິຍະຕາ (ຄວາມຂີ້ຖີ່) ອະຕິມານະ (ຄວາມດູໝິ່ນ)
ອຸສຸຍາ (ຄວາມຢ້ານລື່ນ) ອິດສາ (ຄວາມປາຖະໜາ)
ວິຈິກິດສາ (ຄວາມລັງເລສົງໄສ) ປະຣະເຫຖະນາ (ການບຽດບຽນຜູ້ອື່ນ)
ໂລພະ (ຄວາມຢາກໄດ້ຫຼາຍ) ໂທສະ (ຄວາມຄິດປະທຸດຮ້າຍ)
ມະທະ (ຄວາມມົວເມົາ) ໂມຫະ (ຄວາມຫຼົງ)
ສັດຜູ້ປະກອບດ້ວຍກິເລດເຫຼົ່ານີ້
ຈັດວ່າເປັນຜູ້ມີກິ່ນຊົ່ວຮ້າຍ
ຕ້ອງໄປອະບາຍ ປິດກັ້ນພົມມະໂລກແລ້ວ"

ມະຫາໂຄວິນທະພາມຂາບທູນວ່າ "ເມື່ອທ່ານຜູ້ຈະເລີນຕັດບອກກິ່ນຊົ່ວຮ້າຍ ຂ້າພະເຈົ້າຈຶ່ງຮູ້ຈັກກິ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ທ່ານຜູ້ຈະເລີນ ຂ້າພະເຈົ້າ ຈະອອກຈາກເຮືອນໄປບວດເປັນບັນພະຊິດ" ສະນັງກຸມາຣະພົມຕັດວ່າ "ໂຄວິນທະຂໍທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

## ຖວາຍບັງຄົມລາພຣະເຈົ້າເຣນຸ

[໓໔໑] ທ່ານຜູ້ຈະເລີນທັງຫຼາຍ ຕໍ່ມາ ທ່ານມະຫາໂຄວິນທະພາມ ເຂົ້າໄປເຝົ້າພຣະເຈົ້າເຣນຸເຖິງບ່ອນປະທັບ ໄດ້ຂາບທູນແນວນີ້ວ່າ "ບັດນີ້ຂໍໄດ້ໂຜດສະແຫວງຫາປຸໂລຫິດຄົນອື່ນ ຜູ້ຈະຖວາຍຄຳເປີກສາຣາດຊະກິດ ແດ່ພຣະອົງເທີ້ນ ຂ້ານ້ອຍ ຂ້າພຣະອົງປາຖະໜາຈະອອກຈາກເຮືອນໄປບວດເປັນບັນພະຊິດ ຍ້ອນວ່າຂ້າພຣະອົງໄດ້ຟັງເລື້ອງກິ່ນຊົ່ວຮ້າຍທີ່ພຣະພົມຕັດບອກ ກິ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

(ທ່ານມະຫາໂຄວິນທະພາມຂາບທູນດ້ວຍຄາຖາວ່າ)

"ຂ້າພຣະອົງຂໍຖວາຍບັງຄົມລາ
ພຣະເຈົ້າເຣນຸຜູ້ເປັນພຣະເຈົ້າແຜ່ນດິນ
ຂໍພຣະອົງຊົງຮູ້ພຣະຣາດຊະກິດ
ຂ້າພຣະອົງບໍ່ຍິນດີໃນຕຳແໜ່ງປຸໂລຫິດ"

(ພຣະເຈົ້າເຣນຸຕັດຕອບດ້ວຍຄາຖາວ່າ)

"ຖ້າທ່ານຍັງບົກພ່ອງດ້ວຍສິ່ງທີ່ໜ້າປາຖະໜາ
ເຮົາຈະຕື່ມໃຫ້ເຕັມ
ຜູ້ໃດບຽດບຽນທ່ານ
ເຮົາຜູ້ເປັນເຈົ້າແຜ່ນດິນຈະຫ້າມຜູ້ນັ້ນເອງ"

(ທ່ານມະຫາໂຄວິນທະພາມທູນຕອບວ່າ)

"ຂ້າພຣະອົງບໍ່ບົກພ່ອງດ້ວຍສິ່ງທີ່ໜ້າປາຖະໜາ
ບໍ່ມີໃຜບຽດບຽນຂ້າພຣະອົງ
ແຕ່ເພາະໄດ້ຟັງຄຳຂອງຜູ້ບໍ່ແມ່ນມະນຸດ
ຂ້າພຣະອົງຈຶ່ງບໍ່ຍິນດີການຢູ່ຄອງເຮືອນ"

(ພຣະເຈົ້າເຣນຸຕັດຖາມວ່າ)

"ທ່ານຜູ້ບໍ່ແມ່ນມະນຸດມີວັນນະແນວໃດ?
ບອກຫຍັງເຊິ່ງທ່ານຟັງແລ້ວ
ຍອມປະຖິ້ມທັງຢ້າວເຮືອນຂອງພວກເຮົາ
ທັງພວກເຮົາ ແລະ ຊາວຊົມພູທະວີບທັ້ງໝົດ"

(ທ່ານມະຫາໂຄວິນທະພາມທູນຕອບວ່າ)

"ເມື່ອຂ້າພຣະອົງຢູ່ພຽງລຳພັງຜູ້ດຽວ
ເມື່ອກ່ອນຕ້ອງການຈະບວງສວງບູຊາ
ຈຶ່ງສຸມໄຟໃຫ້ລຸກເປັນແປວດ້ວຍຫຍ້າຄາ
ແຕ່ທັນໃດນັ້ນ ສະນັງກຸມາຣະພົມຜູ້ເປັນພົມຕະຫຼອດການ
ມາຈາກພົມມະໂລກຜາກົດແກ່ຂ້າພຣະອົງ
ພຣະພົມຕອບບັນຫາແກ່ຂ້າພຣະອົງ
ເພາະໄດ້ຟັງຄຳຕອບ
ຂ້າພຣະອົງ ຈຶ່ງບໍ່ຍິນດີໃນການຢູ່ຄອງເຮືອນ"

(ພຣະເຈົ້າເຣນຸຕັດຖາມວ່າ)

"ທ່ານໂຄວິນທະ ຂ້າພະເຈົ້າເຊື່ອຄຳທີ່ທ່ານບອກ
ທ່ານຟັງຄຳຂອງຜູ້ບໍ່ແມ່ນມະນຸດແລ້ວ
ຈະປະພຶດເປັນຢ່າງອື່ນໄດ້ແນວໃດ
ເຮົາຈະປະພຶດຕາມທ່ານ ທ່ານໂຄວິນທະເປັນຄູຂອງເຮົາ
ພວກເຮົາຈັກປະພຶດໃຫ້ບໍລິສຸດ
ຕາມຄຳສັ່ງສອນຂອງທ່ານໂຄວິນທະ
ປຽບເໝືອນ ແກ້ວໄພທູນບໍ່ມີຮອຍເປື້ອນ ບໍ່ມົວໝອງ ສົດໃສ ງົດງາມ ສັນນັ້ນ"

(ພຣະເຈົ້າເຣນຸຕັດວ່າ)

"ຖ້າທ່ານໂຄວິນທະຈະອອກຈາກເຮືອນ ບວດເປັນບັນພະຊິດ ເຮົາກໍຈະອອກຈາກເຮືອນໄປບວດເປັນບັນພະຊິດຄືກັນ ທ່ານມີຄະຕິແນວໃດ ເຮົາກໍຈະມີຄະຕິແນວນັ້ນນຳ"

## ຖວາຍບັງຄົມລາກະສັດ ໖ ພຣະອົງ

[໓໔໔] ທ່ານຜູ້ຈະເລີນທັງຫຼາຍ ຕໍ່ມາທ່ານມະຫາໂຄວິນທະພາມ ເຂົ້າໄປເຝົ້າກະສັດທັງ ໖ ພຣະອົງເຖິງບ່ອນປະທັບ ໄດ້ຂາບທູນແນວນີ້ວ່າ "ບັດນີ້ ຂໍໄດ້ໂຜດສະແຫວງຫາປຸໂລຫິດຄົນອື່ນ ຜູ້ຈະຖວາຍໃຫ້ຄຳເປີກສາຣາດຊະກິດແດ່ພຣະອົງເທີ້ນ ຂ້ານ້ອຍ, ຂ້າພຣະອົງ ປາຖະໜາຈະອອກຈາກເຮືອນໄປບວດເປັນບັນພະຊິດ ຍ້ອນວ່າ ຂ້າພຣະອົງໄດ້ຟັງເລື້ອງກິ່ນຊົ່ວຮ້າຍທີ່ພຣະພົມຕັດບອກ ກິ່ນອັນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

ລຳດັບນັ້ນ ກະສັດທັງ ໖ ພຣະອົງຊົງລັງງໄປດ້ານໜຶ່ງ ຊົງຄິດກັນວ່າ "ທຳມະດາພານ ເຫຼົ່ານີ້ມັກໄດ້ຊັບ ທາງທີ່ດີເຮົາຄວນກ້ຽວກ່ອມມະຫາໂຄວິນທະພານດ້ວຍຊັບ" ແລ້ວສະເດັດເຂົ້າໄປຫາມະຫາໂຄວິນທະພານຕັດແນວນີ້ວ່າ "ໃນຣາດອານາຈັກທັງ ໗ ນີ້ ມີຊັບສົມບັດຫຼາຍພໍທີ່ເຮົາຈະຂົນມາໃຫ້ຕາມທີ່ທ່ານຕ້ອງການ"

ທ່ານມະຫາໂຄວິນທະພານຂາບທູນວ່າ "ຢ່າເລີຍ ຂ້ານ້ອຍ ຊັບຂອງຂ້າພຣະອົງນີ້ມີຫຼາຍທໍ່ກັນກັບຊັບຂອງພຣະອົງ ຂ້າພຣະອົງຈະປະຖິ້ມຊັບທັ້ງໝົດອອກຈາກເຮືອນ ບວດເປັນບັນພະຊິດ ຍ້ອນວ່າ ຂ້າພຣະອົງໄດ້ຟັງເລື້ອງກິ່ນຊົ່ວຮ້າຍ ທີ່ພຣະພົມຕັດບອກ ກິ່ນຊົ່ວຮ້າຍເຫຼົ່ານັ້ນບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

ລຳດັບນັ້ນ ກະສັດທັງ ໖ ພຣະອົງຊົງລັງງໄປດ້ານໜຶ່ງ ຊົງຄິດກັນວ່າ "ທຳມະດາພານເຫຼົ່ານີ້ມັກຢາກໄດ້ສະຕີ ທາງທີ່ດີເຮົາຄວນກ້ຽວກ່ອມມະຫາໂຄວິນທະພານດ້ວຍສະຕີງາມ" ແລ້ວສະເດັດເຂົ້າໄປຫາມະຫາໂຄວິນທະພານ ຕັດແນວນີ້ວ່າ "ໃນຣາດອານາຈັກທັງ ໗ ນີ້ມີ ສະຕີງາມເປັນຈຳນວນຫຼວງຫຼາຍ ເຮົາຈະນຳສະຕີມາໃຫ້ຕາມທີ່ທ່ານຕ້ອງການ"

ທ່ານມະຫາໂຄວິນທະພານຂາບທູນວ່າ "ຢ່າເລີຍ ຂ້ານ້ອຍ ຂ້າພຣະອົງມີພັນລະຍາຖານະທໍ່ກັນເຖິງ ໔໐ ຄົນ ຂ້າພຣະອົງຈະປະຖິ້ມພັນລະຍາທຸກ ໆ ຄົນ ອອກຈາກເຮືອນໄປບວດເປັນບັນພະຊິດຍ້ອນວ່າ ຂ້າພຣະອົງໄດ້ຟັງເລື້ອງກິ່ນຊົ່ວຮ້າຍທີ່ພຣະພົມຕັດບອກ ກິ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

[໓໔໑] ກະສັດທັງ ໖ ພຣະອົງຕັດວ່າ "ຖ້າທ່ານໂຄວິນທະຈະອອກຈາກເຮືອນໄປບວດເປັນບັນພະຊິດ ພວກເຮົາກໍຈະອອກຈາກເຮືອນໄປບວດເປັນບັນພະຊິດຄືກັນ ທ່ານມີຄະຕິແນວໃດພວກເຮົາກໍຈະມີຄະຕິແນວນັ້ນ ຄືກັນກັບທ່ານ"

ທ່ານມະຫາໂຄວິນທະພານຂາບທູນວ່າ

"ຫາກພຣະອົງຈະຊົງລະສິ່ງທີ່ໜ້າປາຖະໜາ
ອັນເປັນທີ່ຂ້ອງຢູ່ຂອງປຸຖຸຊົນ
ຂໍຈົ່ງຜາຣົບຄວາມພຽນ
ຊົງປະກອບດ້ວຍກຳລັງຂັນຕິຈະເລີນໃຫ້ໝັ້ນຢູ່
ທາງນີ້ເປັນທາງກົງບໍ່ມີທາງອື່ນດີກວ່າ
ນີ້ເປັນພຣະສັດທຳທີ່ສັດຕະບຸລຸດຖືຮັກສາໄວ້

ເພື່ອໄປເກີດໃນພົມມະໂລກ"

ກະສັດທັງ ໖ ພຣະອົງຕັດວ່າ "ຖ້າເປັນແນວນັ້ນ ທ່ານມະຫາໂຄວິນທະ ຂໍຈົ່ງລໍຖ້າກ່ອນ ຈັກ ໗ ປີ ເມື່ອເວລາລ່ວງເລີຍໄປແລ້ວ ໗ ປີ ພວກເຮົາຈະອອກຈາກເຮືອນໄປບວດເປັນບັນພະຊິດ ທ່ານມີຄະຕິແນວໃດ ພວກເຮົາກໍຈະມີຄະຕິແນວນັ້ນຄືກັນ"

ທ່ານມະຫາໂຄວິນທະພາມຂາບທູນວ່າ "ຂ້າແດ່ ພຣະອົງຜູຈະເລີນ ເວລາ ໗ ປີ ດົນເກີນໄປ ຂ້າພຣະອົງບໍ່ອາດຄອຍຖ້າຢູ່ໄດ້ເຖິງ ໗ ປີ ກໍໃຜຈະຮູ້ (ຊະຕາ) ຊີວິດໄດ້ວ່າຈະຢູ່ຮອດຫຼືບໍ່ ແມ່ນມື້ອື່ນກໍບໍ່ສາມາດຮູ້ໄດ້ ບຸກຄົນທຸກຄົນເກີດມາແລ້ວ ລ້ວນແຕ່ອວ່າຍໜ້າໄປສູ່ຄວາມຕາຍກັນໝົດທຸກຄົນ ບັນດິດຈຶ່ງຄວນກຳນົດຮູ້ດ້ວຍປັນຍາ ຄວນທຳກຸສົນ ຄວນປະພຶດພົມມະຈັນ ຜູ້ເກີດມາແລ້ວບໍ່ຕາຍບໍ່ມີ ຂ້າພຣະອົງໄດ້ຟັງເລື້ອງກິ່ນຊົ່ວຮ້າຍ ທີ່ພຣະພົມຕັດບອກ ກິ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

ກະສັດທັງ ໖ ພຣະອົງຕັດວ່າ "ຖ້າເປັນແນວນັ້ນ ທ່ານໂຄວິນທະ ຂໍຈົ່ງລໍຖ້າຢູ່ກ່ອນຈັກ ໖ ປີ ຯລຯ ຂໍຈົ່ງລໍຖ້າຈັກ ໕ ປີ ຯລຯ ຂໍຈົ່ງລໍຖ້າຈັກ ໔ ປີ ຯລຯ ຂໍຈົ່ງລໍຖ້າຈັກ ໓ ປີ ຯລຯ ຂໍຈົ່ງລໍຖ້າຈັກ ໒ ປີ ຯລຯ ຂໍຈົ່ງລໍຖ້າຈັກ ໑ ປີ ເມື່ອເວລາລ່ວງໄປ ໑ ປີ ພວກເຮົາຈະອອກຈາກເຮືອນບວດເປັນບັນພະຊິດ ທ່ານມີຄະຕິແນວໃດ ພວກເຮົາກໍຈະມີຄະຕິແນວນັ້ນຄືກັນ"

ທ່ານໂຄວິນທະພາມຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເວລາ ໑ ປີ ກໍຍັງດົນເກີນໄປ ຂ້າພຣະອົງບໍ່ອາດລໍຖ້າພຣະອົງຢູ່ໄດ້ເຖິງ ໑ ປີ ກໍໃຜຈະຮູ້ (ຊະຕາ) ຊີວິດໄດ້ວ່າຈະຢູ່ຮອດຫຼືບໍ່? ແມ່ນມື້ອື່ນກໍບໍ່ສາມາດຮູ້ໄດ້ ບຸກຄົນທຸກຄົນເກີດມາແລ້ວ ລ້ວນແຕ່ອວ່າຍໜ້າໄປສູ່ຄວາມຕາຍກັນໝົດທຸກຄົນ ບັນດິດຈຶ່ງຄວນກຳນົດຮູ້ດ້ວຍປັນຍາ ຄວນທຳກຸສົນ ຄວນປະພຶດພົມມະຈັນ ຜູ້ເກີດມາແລ້ວບໍ່ຕາຍບໍ່ມີ ຂ້າພຣະອົງໄດ້ຟັງເລື້ອງກິ່ນຊົ່ວຮ້າຍ ທີ່ພຣະພົມຕັດບອກ ກິ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

ກະສັດທັງ ໖ ພຣະອົງຕັດວ່າ "ຖ້າເປັນແນວນັ້ນ ທ່ານໂຄວິນທະ ຂໍຈົ່ງລໍຖ້າກ່ອນຈັກ ໗ ເດືອນ ເມື່ອເວລາຜ່ານໄປ ໗ ເດືອນແລ້ວ ພວກເຮົາຈະອອກຈາກເຮືອນໄປບວດເປັນບັນພະຊິດ ທ່ານມີຄະຕິແນວໃດ ພວກເຮົາກໍຈະມີຄະຕິແນວນັ້ນຄືກັນ"

ທ່ານໂຄວິນທະພາມຂາບທູນວ່າ "ຂ້າແດ່ພຣະອົງຜູຈະເລີນ ເວລາ ໗ ເດືອນດົນເກີນໄປ ຂ້າພຣະອົງບໍ່ອາດລໍຖ້າພຣະອົງຢູ່ໄດ້ເຖິງ ໗ ເດືອນ ກໍໃຜຈະຮູ້ (ຊະຕາ) ຊີວິດໄດ້ວ່າຈະຢູ່ຮອດຫຼືບໍ່? ແມ່ນມື້ອື່ນກໍບໍ່ສາມາດຮູ້ໄດ້ ບຸກຄົນທຸກຄົນເກີດມາແລ້ວ ລ້ວນແຕ່ອວ່າຍໜ້າໄປສູ່ຄວາມ

ຕາຍກັນໝົດທຸກຄົນ ບັນດິດຈຶ່ງຄວນກຳນົດຮູ້ດ້ວຍປັນຍາ ຄວນທຳກຸສົນ ຄວນປະພຶດພົມມະຈັນ ຜູ້ເກີດມາແລ້ວບໍ່ຕາຍບໍ່ມີ ຂ້າພຣະອົງໄດ້ຟັງເລື້ອງກົ່ນຊົ່ວຮ້າຍ ທີ່ພຣະພົມຕັດບອກ ກົ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

ກະສັດທັງ ໗ ພຣະອົງຕັດວ່າ "ຖ້າເປັນແນວນັ້ນທ່ານໂຄວິນທະ ຂໍຈົ່ງລໍຖ້າຈັກ ໗ ເດືອນ ຯລຯ ຂໍຈົ່ງລໍຖ້າຄອຍຖ້າຈັກ ໕ ເດືອນ ຯລຯ ຂໍຈົ່ງລໍຖ້າຄອຍຖ້າຈັກ ໔ ເດືອນ ຯລຯ ຂໍຈົ່ງລໍຖ້າຄອຍຖ້າຈັກ ໓ ເດືອນ ຯລຯ ຂໍຈົ່ງລໍຖ້າຄອຍຖ້າຈັກ ໒ ເດືອນ ຯລຯ ຂໍຈົ່ງລໍຖ້າຄອຍຖ້າຈັກ ໑ ເດືອນ ຯລຯ ຂໍຈົ່ງລໍຖ້າຄອຍຖ້າຈັກເຄິ່ງເດືອນເມື່ອເວລາລ່ວງໄປເຄິ່ງເດືອນ ພວກເຮົາຈະອອກຈາກເຮືອນໄປບວດເປັນບັນພະຊິດ ທ່ານມີຄະຕິໃດພວກເຮົາກໍຈະມີຄະຕິນັ້ນດ້ວຍ"

ທ່ານໂຄວິນທະພາມຂາບທູນວ່າ "ຂ້າແດ່ ພຣະອົງຜູຈະເລີນ ເວລາເຄິ່ງເດືອນດົນເກີນໄປ ຂ້າພຣະອົງບໍ່ອາດຖ້າພຣະອົງຢູ່ໄດ້ເຖິງເຄິ່ງເດືອນ ກໍໃຜຈະຮູ້ (ຊະຕາ) ຊີວິດໄດ້ວ່າຈະຢູ່ຮອດຫຼືບໍ່ແມ່ນມື້ອື່ນກໍບໍ່ສາມາດຮູ້ໄດ້ ບຸກຄົນທຸກຄົນເກີດມາແລ້ວ ລ້ວນແຕ່ອວ່າຍໜ້າໄປສູ່ຄວາມຕາຍກັນໝົດທຸກຄົນ ບັນດິດຈຶ່ງຄວນກຳນົດຮູ້ດ້ວຍປັນຍາ ຄວນທຳກຸສົນ ຄວນປະພຶດພົມມະຈັນ ຜູ້ເກີດມາແລ້ວບໍ່ຕາຍບໍ່ມີ ຂ້າພຣະອົງໄດ້ຟັງເລື້ອງກົ່ນຊົ່ວຮ້າຍ ທີ່ພຣະພົມຕັດບອກ ກົ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ຂ້າພຣະອົງຈະອອກຈາກເຮືອນໄປບວດເປັນບັນພະຊິດ ຂ້ານ້ອຍ"

ກະສັດທັງ ໗ ພຣະອົງຕັດວ່າ "ຖ້າເປັນແນວນັ້ນ ທ່ານໂຄວິນທະ ຂໍຈົ່ງລໍຖ້າຈັກ ໗ ວັນພໍໃຫ້ພວກເຮົາໄດ້ສັ່ງສອນຣາດຊະກິດແກ່ບຸດ ແລະອ້າຍນ້ອງຊາຍຂອງພວກເຮົາເສຍກ່ອນ ເມື່ອເວລາລ່ວງໄປ ໗ ວັນ ພວກເຮົາຈະອອກຈາກເຮືອນໄປບວດເປັນບັນພະຊິດ ທ່ານມີຄະຕິແນວໃດ ພວກເຮົາກໍຈະມີຄະຕິແນວນັ້ນຄືກັນ"

ທ່ານໂຄວິນທະພາມຂາບທູນວ່າ "ຂ້າແດ່ ພຣະອົງຜູຈະເລີນ ເວລາ ໗ ວັນບໍ່ດົນເກີນໄປ ຂ້າພຣະອົງຈັກລໍຖ້າ ໗ ວັນໄດ້ຢູ່"

## ບອກລາພາມມະນະມະຫາສານ

[໓໔໔ ] ທ່ານຜູ້ຈະເລີນທັງຫຼາຍ ຕໍ່ມາທ່ານມະຫາໂຄວິນທະພາມເຂົ້າໄປຫາພາມມະນະມະຫາສານ ໗ ຄົນ ແລະ ພາມນະຫາດົກ ໗໐໐ ຄົນ ເຖິງບ່ອນຢູ່ແລ້ວບອກວ່າ "ບັດນີ້ພວກທ່ານຈົ່ງສະແຫວງຫາອາຈານອື່ນ ຜູ້ຈະສອນມົນແກ່ພວກທ່ານ ເຮົາປາດຖະໜາຈະອອກຈາກເຮືອນໄປບວດເປັນບັນພະຊິດ ເຮົາໄດ້ຟັງເລື້ອງກົ່ນຊົ່ວຮ້າຍທີ່ພຣະພົມຕັດບອກ ກົ່ນຊົ່ວຮ້າຍເຫຼົ່ານັ້ນບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ເຮົາຈະອອກຈາກເຮືອນໄປບວດເປັນບັນພະຊິດ"

ພວກພາມມະນະມະຫາສານ ແລະ ພາມນະຫາດົກກ່າວວ່າ "ທ່ານໂຄວິນທະຢ່າອອກຈາກເຮືອນໄປບວດເປັນບັນພະຊິດເລີຍ ບັນພະຊາມີສັກນ້ອຍແລະມີລາບສັກກາຣະໜ້ອຍ ຄວາມເປັນພາມມີສັກໃຫຍ່ ແລະ ມີລາບສັກກາຣະຫຼາຍ" ທ່ານມະຫາໂຄວິນທະພາມຕອບວ່າ "ພວກທ່ານຢ່າເວົ້າແນວນີ້ວ່າ "ບັນພະຊາມີສັກນ້ອຍ ແລະ ມີລາບສັກກາຣະໜ້ອຍ ຄວາມເປັນພາມມີສັກໃຫຍ່ ແລະ ມີລາບສັກກາຣະຫຼາຍ" ຜູ້ໃດເດ ທີ່ມີສັກໃຫຍ່ກວ່າ ຫຼື ມີລາບສັກກາຣະຫຼາຍກວ່າເຮົາ ເວລານີ້ເຮົາເປັນ ຄື ພຣະຣາຊາຂອງພຣະຣາຊາທັງຫຼາຍ ເປັນ ຄື ພຣະພົມຂອງພວກພາມເປັນ ຄື ເທວະດາຂອງພວກຄະຫະບໍດີ ເຮົາຈະປະຖິ້ມທຸກສິ່ງທຸກຢ່າງອອກຈາກເຮືອນໄປບວດເປັນບັນພະຊິດ ຍ້ອນວ່າເຮົາໄດ້ຟັງເລື້ອງກິ່ນຊົ່ວຮ້າຍທີ່ພຣະພົມຕັດບອກ ກິ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ເຮົາຈະອອກຈາກເຮືອນໄປບວດເປັນບັນພະຊິດ"

ພວກພາມມະນະມະຫາສານ ແລະ ພາມນະຫາດົກກ່າວວ່າ "ຖ້າທ່ານໂຄວິນທະຈະອອກຈາກເຮືອນໄປບວດເປັນບັນພະຊິດ ແມ່ນພວກເຮົາກໍຈະອອກຈາກເຮືອນໄປບວດເປັນບັນພະຊິດ ທ່ານມີຄະຕິແນວໃດ ພວກເຮົາກໍຈະມີຄະຕິແນວນັ້ນຄືກັນ"

## ບອກລາພັນລະຍາ

[໓໔໕] ທ່ານຜູ້ຈະເລີນທັງຫຼາຍ ຕໍ່ມາທ່ານມະຫາໂຄວິນທະພາມ ເຂົ້າໄປຫາພັນລະຍາຜູ້ມີຖານະທໍ່ກັນທັງ ໔໐ ຄົນ ເຖິງບ່ອນຢູ່ແລ້ວບອກວ່າ "ນາງທັງຫຼາຍ ຜູ້ໃດປາຖະໜາຈະກັບຄືນໄປສູ່ຕະກູນແຫ່ງຍາດຂອງຕົນກໍກັບຄືນໄດ້ ຫຼື ຈະຫາຜົວໃໝ່ກໍໄດ້ ເຮົາປາຖະໜາຈະອອກຈາກເຮືອນໄປບວດເປັນບັນພະຊິດ ເພາະວ່າເຮົາໄດ້ຟັງເລື້ອງກິ່ນຊົ່ວຮ້າຍທີ່ພຣະພົມຕັດບອກ ກິ່ນຊົ່ວຮ້າຍເຫຼົ່ານັ້ນ ບໍ່ແມ່ນສິ່ງທີ່ຜູ້ຢູ່ຄອງເຮືອນຈະກຳຈັດໄດ້ງ່າຍ ເຮົາຈະອອກຈາກເຮືອນໄປບວດເປັນບັນພະຊິດ"

ພັນລະຍາເຫຼົ່ານັ້ນກ່າວວ່າ "ທ່ານທໍ່ນັ້ນ ທີ່ເປັນຍາດຂອງພວກເຮົາ ຜູ້ຕ້ອງການຍາດເປັນຜົວຂອງພວກເຮົາ ຜູ້ຕ້ອງການຜົວ ຖ້າທ່ານຈະອອກຈາກເຮືອນໄປບວດເປັນບັນພະຊິດ ພວກເຮົາກໍຈະອອກຈາກເຮືອນໄປບວດເປັນບັນພະຊິດຄືກັນ ທ່ານມີຄະຕິແນວໃດ ພວກເຮົາກໍຈະມີຄະຕິແນວນັ້ນຄືກັນ"

## ມະຫາໂຄວິນທະພາມອອກບວດ

[໓໔໖] ທ່ານຜູ້ຈະເລີນທັງຫຼາຍ ເມື່ອເວລາລ່ວງໄປ ៗ ວັນ ທ່ານມະຫາໂຄວິນທະພາມແຖຜົມ ແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອທ່ານບວດແລ້ວໄດ້ມີຜູ້ແຖຜົມ ແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນໄປບວດເປັນ

ບັນພະຊິດຕາມອີກເປັນຈຳນວນຫຼາຍ ໄດ້ແກ່ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ໗ ພຣະອົງ ພາມມະນະມະຫາສານ ໗ ຄົນ ພາມນະຫາດົກ ໗໐໐ ຄົນ ພັນລະຍາຜູ້ມີຖານະທັ່ງກັນທັງ ໔໐ ຄົນ ກະສັດພາມຄະຫະບໍດີ ແລະ ຍິງຮັບໃຊ້ອີກຫຼາຍພັນຄົນ ໄດ້ຮູ້ວ່າທ່ານມະຫາໂຄວິນທະພາມມີບໍລິສັດນັ້ນຫ້ອມລ້ອມ ຈາຣິກໄປໃນຫມູ່ບ້ານ ນິຄົມ ແລະ ຣາດຊະທານີທັງຫຼາຍ ເມື່ອທ່ານເຂົ້າໄປສູ່ໝູ່ບ້ານ ຫຼື ນິຄົມໃດ ກໍເປັນ ຄື ພຣະຣາຊາຂອງພຣະຣາຊາທັງຫຼາຍ ເປັນຄືພຣະພົມຂອງພວກພາມ ເປັນຄືເທວະດາຂອງພວກຄະຫະບໍດີ ໃນຫມູ່ບ້ານ ຫຼື ນິຄົມນັ້ນ ເວລານັ້ນຊາວບ້ານຜູ້ມີຄວາມຫຼື້ອມໃສພາກັນເວົ້າແບບນີ້ວ່າ "ຂໍນອບນ້ອມແດ່ ທ່ານມະຫາໂຄວິນທະພາມ ຂໍນອບນ້ອມແດ່ທ່ານປຸໂລຫິດ ຂອງພຣະເຈົ້າແຜ່ນດິນທັງ ໗ ພຣະອົງ"

## ຈະເລີນພົມວິຫານ ໔ ປະການ

[໓໔໗] ມະຫາໂຄວິນທະພາມມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດບໍ່ມີເວນບໍ່ມີຄວາມບຽດບຽນຢູ່

ມີກະລຸນາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍກະລຸນາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ມີມຸທິຕາຈິດ ແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍມຸທິຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນບໍ່ ມີຄວາມບຽດບຽນຢູ່

ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍອຸເປກຂາຈິດ ອັນໄພບູນ ເປັນມະຫັຄຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ມະຫາໂຄວິນທະພາມ ສະແດງຫົນທາງ ແຫ່ງຄວາມເປັນຜູ້ຢູ່ຮ່ວມກັບພຣະພົມ ໃນພົມມະໂລກແກ່ເຫຼົ່າສາວົກ

[໓໒໗] ສະໄໝນັ້ນ ເຫຼົ່າສາວົກຂອງມະຫາໂຄວິນທະພາມ ຜູ້ຮູ້ຄຳສັ່ງສອນທົ່ວທັງໝົດຫຼັງຈາກຕາຍໄປ ຈະໄປເກີດໃນສຸກຄະຕິພົມມະໂລກ ສ່ວນເຫຼົ່າສາວົກຜູ້ບໍ່ຮູ້ຄຳສັ່ງສອນທົ່ວທັງໝົດຫຼັງຈາກຕາຍໄປ ລາງພວກເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທບ ຊັ້ນປະຣະນິມມິຕະວະສະວັດຕີ ລາງພວກເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທບຊັ້ນນິມມານະຣະດີ ລາງພວກເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທບຊັ້ນດຸສິດ ລາງພວກເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທບຊັ້ນຍາມາ ບາງພວກເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທບຊັ້ນຕາວະຕິງສາ ລາງພວກເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທບຊັ້ນຈາຕຸມະຫາຣາດ ຜູ້ທີ່ໄດ້ຮັບຜົນຢ່າງຕ່ຳກວ່ານັ້ນກໍໄດ້ເປັນໝູ່ຄັນທັບພະ

ການບວດຂອງກຸນລະບຸດເຫຼົ່ານັ້ນທັງໝົດ ຈຶ່ງບໍ່ເປັນໂມຄະ ບໍ່ເປັນໝັນ ມີຜົນມີກຳໄຣດ້ວຍປະການດັ່ງນີ້ແລ

[໓໒໘] ປັນຈະສິຂະຄັນທັບພະບຸດທູນຖາມວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງລະນຶກເຖິງເລື້ອງນັ້ນໄດ້ຢູ່ບໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ປັນຈະສິຂະ ເຮົາຍັງລະນຶກໄດ້ ສະໄໝນັ້ນເຮົາເປັນມະຫາໂຄວິນທະພາມ ໄດ້ສະແດງທາງແຫ່ງຄວາມເປັນຜູ້ຢູ່ຮ່ວມກັບພົມໃນພົມມະໂລກແກ່ສາວົກເຫຼົ່ານັ້ນ ແຕ່ພົມມະຈັນນັ້ນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍຄວາມກຳໜັດເພື່ອດັບ ເພື່ອສະຫງົບ ລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ ເປັນໄປພຽງເພື່ອໄປເກີດໃນພົມມະໂລກເທົ່ານັ້ນ

ສ່ວນພົມມະຈັນຂອງເຮົານີ້ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ພົມມະຈັນທີ່ເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍຄວາມກຳໜັດ ເພື່ອດັບເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານນັ້ນຄືຫຍັງ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ຄິດຖືກ)
໓. ສຳມາວາຈາ (ເວົ້າຈາຖືກ)
໔. ສຳມາກຳມັນຕະ (ກະທຳຖືກ)
໕. ສຳມາອາຊີວະ (ລ້ຽງຊີບຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)

ໆ. ສຳມາສະຕິ (ຣະນຶກຖືກ)

໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ດູຣາ ປັນຈະສິຂະ ນີ້ແລ ຄືພົມມະຈັນທີ່ເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍຄວາມກຳໜັດ ເພື່ອດັບ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

[໓໓໐] ດູຣາ ປັນຈະສິຂະ ເຫຼົ່າສາວົກຂອງເຮົາ ຜູ້ຮູ້ຄຳສັ່ງສອນທົ່ວທັງໝົດເຮັດໃຫ້ແຈ້ງ ເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ເຫຼົ່າສາວົກຜູ້ບໍ່ຮູ້ຄຳສັ່ງສອນທົ່ວທັງໝົດ ລາງພວກເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ປະຣິນິບພານໃນພົບນັ້ນ ບໍ່ຕ່າວຄືນມາຈາກໂລກນັ້ນອີກ ບາງພວກເປັນພຣະສະກະທາຄາມີ ເພາະສັງໂຍດ ໓ ປະການສິ້ນໄປ ແລະ ເພາະຣາຄະ ໂທສະ ໂມຫະ ເບົາບາງ ມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະທຳທີ່ສຸດແຫ່ງຄວາມທຸກໄດ້ ບາງພວກເປັນພຣະໂສດາບັນ ເພາະສັງໂຍດ ໓ ປະການສິ້ນໄປ ບໍ່ມີທາງຕ່ຳຕ້ອຍມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ ການບວດຂອງກຸນລະບຸດເຫຼົ່ານີ້ທັງໝົດ ຈຶ່ງບໍ່ເປັນໂມຄະບໍ່ເປັນໝັນ ມີຜົນ ມີກຳໄຣ ດ້ວຍປະການດັ່ງນີ້ແລ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ປັນຈະສິຂະຄັນທັບພະບຸດມີໃຈຍິນດີ ຊົມຊື່ນອະນຸໂມທະນາພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນ ແລ້ວຫາຍໄປຈາກບ່ອນນັ້ນເອງ

**ມະຫາໂຄວິນທະສູດທີ ໖ ຈົບ**

# ໆ. ມະຫາສະມະຍະສູດ

## ວ່າດ້ວຍການປະຊຸມຄັ້ງໃຫຍ່ຂອງເທວະດາ

[໓໓໑] ຂ້າພະເຈົ້າໄດ້ຟັງມາແນວນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປ່າມະຫາວັນ ເຂດເມືອງກະບິນລະພັດ ແຄວັນສັກກະ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ເຊິ່ງລ້ວນເປັນພຣະອະຣະຫັນມີ ເຫຼົ່າເທວະດາຈຳນວນຫຼາຍຈາກ ໑໐ ໂລກກະທາດມາປະຊຸມກັນ ເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ແລະຢ້ຽມຢາມພິກຂຸສົງ ເທບຊັ້ນສຸດທາວາດ ໔ ອົງ ໄດ້ມີຄວາມຄິດແນວນີ້ວ່າ “ພຣະຜູ້ມີພຣະພາກເຈົ້າ ພຣະອົງນີ້ ປະທັບຢູ່ທີ່ປ່າມະຫາວັນ ເຂດເມືອງກະບິນລະພັດ ແຄວັນສັກກະ ພ້ອມ

ດ້ວຍພິກຂຸສົງໝູ່ໃຫຍ່ ປະມານ ໕໐໐ ອົງ ເຊິ່ງລ້ວນເປັນພຣະອະຣະຫັນ ມີເຫຼົ່າເທວະດາຈຳນວນຫຼາຍຈາກ ໑໐ ໂລກກະທາດມາປະຊຸມກັນ ເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ແລະ ຢ້ຽມພິກຂຸສົງ ທາງທີ່ດີເຮົາກໍຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ແລ້ວກ່າວຄາຖາອົງລະຄາຖາໃນສຳນັກພຣະຜູ້ມີພຣະພາກເຈົ້າ”

[໓໓໘] ລຳດັບນັ້ນ ເທບເຫຼົ່ານັ້ນຫາຍໄປຈາກເທວະໂລກຊັ້ນສຸດທາວາດ ມາຜາກົດໂຕຢູ່ເບື້ອງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ຄືບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວຢືນຢູ່ບ່ອນສົມຄວນ ເທບອົງໜຶ່ງໄດ້ກ່າວຄາຖານີ້ຂຶ້ນມາວ່າ

“ການປະຊຸມຄັ້ງໃຫຍ່ໃນປ່າໃຫຍ່
ມີໝູ່ເທບມາປະຊຸມກັນ
ພວກເຮົາພາກັນມາສູ່ທຳສະໄໝນີ້
ກໍເພື່ອໄດ້ຢ້ຽມຢາມພຣະສົງຜູ້ບໍ່ປຣາໄຊ”

ຈາກນັ້ນ ເທບອີກອົງໜຶ່ງໄດ້ກ່າວຄາຖານີ້ວ່າ

“ດູຣາ ພິກຂຸທັງຫຼາຍໃນທີ່ປະຊຸມນັ້ນ
ມີຈິດໝັ້ນຄົງທຳຈິດຂອງຕົນໃຫ້ຊື່
ພິກຂຸຜູ້ເປັນບັນດິດຍ່ອມຖືຮັກສາອິນຊີໄວ້
ຄືສາຣະຖີຜູ້ກຸມບັງຫຽນຂັບລົດມ້າໄປ”

ເທບອີກອົງໜຶ່ງໄດ້ກ່າວຄາຖານີ້ວ່າ

“ພິກຂຸເຫຼົ່ານັ້ນຕັດກິເລດດັ່ງຖອນຕະປູ
ຕັດກິເລດດັ່ງຫຼີ້ມໄລ ຖອນກິເລດດັ່ງເສົາເຂື່ອນໄດ້ແລ້ວ
ເປັນຜູ້ບໍ່ຫວັ່ນໄຫວບໍລິສຸດສະອາດຢູ່
ເປັນຜູ້ປາສະຈາກມົນທິນຫ່ຽວໄປ
ເປັນຜູ້ອັນພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸຊົງເຝິກດີແລ້ວ
ຄືຊ້າງໜຸ່ມ ສັນນັ້ນ”

ເທບອີກອົງໜຶ່ງໄດ້ກ່າວຄາຖານີ້ວ່າ

“ເຫຼົ່າຊົນຜູ້ນັບຖືພຣະພຸດທະເຈົ້າເປັນສະຣະນະ
ຈັກບໍ່ໄປສູ່ອະບາຍຍະພູມເມື່ອລະກາຍມະນຸດແລ້ວ
ຈັກເຮັດໃຫ້ໝູ່ເທບຈະເລີນເຕັມທີ່”

## ການປະຊຸມຂອງເທວະດາ

[໓໓໓] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາ ພິກຂຸທັງຫຼາຍ ພວກເທວະດາຈຳນວນຫຼາຍໃນ ໑໐ ໂລກກະທາດ ມາປະຊຸມກັນເພື່ອຢ້ຽມຢາມ ຕະຖາຄົດ ແລະ ພິກຂຸສົງ ດູຣາ ພິກຂຸທັງຫຼາຍ ພວກເທວະດາທີ່ເຂົ້າມາເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫຼາຍ ໃນອະດີດຕະການ ທີ່ມາປະຊຸມກັນເທື່ອທີມີຈຳນວນ ຫຼາຍສຸດ ກໍທໍ່ກັນກັບພວກເທວະດາທີ່ເຂົາມາເຝົ້າເຮົາໃນເວລານີ້ ພວກເທວະດາທີ່ຈະເຂົ້າໄປ ເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສັມພຸດທະເຈົ້າທັງຫຼາຍ ໃນອະນະຄົດຕະການທີ່ມາ ປະຊຸມກັນເທື່ອທີມີຈຳນວນຫຼາຍສຸດ ກໍມີທໍ່ກັບພວກເທວະດາທີ່ເຂົ້າມາເຝົ້າເຮົາໃນເວລານີ້ຄືກັນ ເຮົາຈັກບອກຊື່ຂອງໝູ່ເທບ ຈັກລະບຸຊື່ຂອງໝູ່ເທບ ຈັກສະແດງຊື່ຂອງໝູ່ເທບ ທ່ານຈົ່ງຟັງ ຈົ່ງ ໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ

[໓໓໔] ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດແນວນີ້ວ່າ

"ເຮົາ໌ ຈະກ່າວເປັນຄາຖາ
ເຫຼົ່າພຸມມະເທວະດາອາໄສຢູ່ໃນບ່ອນໃດ
ເຫຼົ່າພິກຂຸກໍອາໄສຢູ່ໃນບ່ອນນັ້ນ
ພິກຂຸເຫຼົ່າໃດອາໄສຊ່ອມຜາ
ມີຈິດມຸ້ງໝັ້ນ ມີຈິດຕັ້ງໝັ້ນ
ພວກທ່ານມີຈຳນວນຫຼາຍຫຼີກລີ້ຢູ່ຄືຣາດຊະສີ
ຂົ່ມຄວາມຮູ້ສຶກຢ້ານຂົນຫົວລຸກໄດ້
ມີຈິດສະອາດໝົດຈົດຜ່ອງໃສບໍ່ຂຸ່ນມົວ
ພຣະສາດສະດາຊົງຮູ້ວ່າມີພິກຂຸກວ່າ ໕໐໐ ອົງ
ຜູ້ຢູ່ໃນປ່າໃນເຂດເມືອງກະບິນລະພັດ
ຈຶ່ງຮັບສັ່ງຮຽກພຣະສາວົກຜູ້ຍິນດີໃນສາດສະໜາມາຕັດວ່າ
"ດູຣາ ພິກຂຸທັງຫຼາຍໝູ່ເທບມຸ່ງໜາມາກັນແລ້ວ
ພວກທ່ານຈົ່ງຮູ້ຈັກເທບເຫຼົ່ານັ້ນ"
ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ
ພາກັນທຳຄວາມພຽນ"
ຈຶ່ງມີຍານອັນເປັນເຫດໃຫ້ເຫັນພວກອະມະນຸດຜາກົດຂຶ້ນ
ພິກຂຸລາງພວກເຫັນອະມະນຸດ ໑໐໐ ຕົນ
ບາງພວກເຫັນ ໑,໐໐໐ ຕົນ
ບາງພວກເຫັນ ໗໐,໐໐໐ ຕົນ

ບາງພວກເຫັນ ໑໐໐,໐໐໐ ຕົນ
ບາງພວກເຫັນຫຼວງຫຼາຍບໍ່ມີທີ່ສຸດສັງງ
ອະມະນຸດຢູ່ຢາຍໄປທົ່ວທຸກທິດ
ພຣະສາດສະດາຜູ້ມີພຣະຈັກຂຸ
ຊົງຮູ້ເຫດທັງໝົດຊົງກຳນົດແລ້ວ
ຈຶ່ງຮັບສັ່ງຮຽກພຣະສາວົກຜູ້ຍິນດີໃນສາດສະໜາມາຕັດວ່າ
"ດູຣາພິກຂຸທັງຫຼາຍ ໝູ່ເທບມຸ່ງໜ້າມາກັນແລ້ວ
ທ່ານທັງຫຼາຍຈົ່ງຮູ້ຈັກໝູ່ເທບເຫຼົ່ານັ້ນ
ເຮົາຈະບອກທ່ານທັງຫຼາຍດ້ວຍວາຈາຕາມລຳດັບ

[໓໓໕] ຍັກ ໗,໐໐໐ ຕົນທີ່ເປັນພຸມມະເທວະດາຢູ່ໃນເມືອງກະບິນລະພັດ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ຍັກ ໖,໐໐໐ ຕົນຢູ່ທີ່ພູຫິມະພານ
ມີຜິວພັນຫຼາຍຫຼາກ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ຍັກ ໓,໐໐໐ ຕົນຢູ່ທີ່ພູສາຕາຄີຣີ
ມີຜິວພັນຫຼາຍຫຼາກ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ຍັກເຫຼົ່ານັ້ນລວມເປັນ ໑໖,໐໐໐ ຕົນ
ມີຜິວພັນຫຼາຍຫຼາກ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ຍັກ ໕໐໐ ຕົນຢູ່ທີ່ພູເວດສາມິດ
ມີຜິວພັນຫຼາຍຫຼາກ
ມີລິດມີຄວາມຮຸ່ງເຮືອງ

ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ກຸມພິນຍັກຜູ້ຖືຮັກສາເມືອງຣາດຊະຄຶຢູ່ທີ່ພູເວປຸນລະ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ

[໓໓໖] ທ້າວທະຕະຣະຖະປົກຄອງທິດຕາເວັນອອກ
ເປັນຫົວໜ້າຂອງພວກຄັນທັບພະ
ເປັນມະຫາຣາດຜູ້ມີຍົດ
ບຸດຂອງທ່ານມີຈຳນວນຫຼາຍ
ຕ່າງມີກຳລັງຫຼາຍ (ແລະ) ມີຊື່ວ່າອິນທະ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ທ້າວວິຣຸນລະຫົກປົກຄອງທິດໃຕ້
ເປັນຫົວໜ້າຂອງພວກກຸມພັນ
ເປັນມະຫາຣາດຜູ້ມີຍົດ
ແມ່ນບຸດຂອງທ່ານມີຈຳນວນຫຼາຍ
ຕ່າງມີພະລັງຫຼາຍ (ແລະ) ມີຊື່ວ່າອິນທະ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ທ້າວວິຣູປັກຂະປົກຄອງທິດຕາເວັນຕົກ
ເປັນຫົວໜ້າຂອງພວກນາກ
ເປັນມະຫາຣາດຜູ້ມີຍົດ
ແມ່ນບຸດຂອງທ່ານມີຈຳນວນຫຼາຍ
ຕ່າງມີພະລັງຫຼາຍ (ແລະ) ມີຊື່ວ່າອິນທະ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ທ້າວກຸເວນປົກຄອງທິດເໜືອ

ເປັນຫົວໜ້າຂອງພວກຍັກ
ເປັນມະຫາຣາດຜູ້ມີຍົດ
ແມ່ນບຸດຂອງທ່ານມີຈຳນວນຫຼາຍ
ຕ່າງມີພະລັງຫຼາຍ (ແລະ) ມີຊື່ວ່າອິນທະ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ທ້າວທະຕະຣະຖະຢູ່ທາງທິດຕາເວັນອອກ
ທ້າວວິຣຸນລະຫົກຢູ່ທາງທິດໃຕ້
ທ້າວວິຣູປັກຂະຢູ່ທາງທິດຕາເວັນຕົກ
ທ້າວກຸເວນຖ້າຢູ່ທາງທິດເໜືອ
ທ້າວຈາຕຸມະຫາຣາດນັ້ນ
ມີແສງສະຫວ່າງສ່ອງໄປໂດຍຮອບທົ່ວທັງ ໔ ທິດ
ສະຖິດຢູ່ໃນປ່າເຂດເມືອງກະບິນລະພັດ

[໖໓] ພວກຜູ້ຮັບໃຊ້ຂອງທ້າວຈາຕຸມະຫາຣາດເຫຼົ່ານັ້ນ
ເປັນພວກມີມາຍາຫຼອກລວງໂອ້ອວດກໍມານຳ
ພວກຜູ້ຮັບໃຊ້ທີ່ມີມາຍາ ຄື
ກຸເຕນດຸ ເວເຕນດຸ ວິຕູ ວິຕຸຕະ
ຈັນທະນະ ກາມະເສດຖະ ກິນນຸຄັນດຸ ແລະ ນິຄັນດຸ ກໍມານຳ
ປະນາທະ ໂອປະມັນຍະ ມາຕະລີ ຜູ້ເປັນເທບສາຣະຖີ
ຈິດຕະເສນະ ນະໂລຣາຊະ ຊະໂນສະພະ ປັນຈະສິຂະ
ຕິມະພະຣຸ (ຄັນທັບພະເທວຣາຊາ)
ແລະ ສຸຣິຍະວັດສາ (ຄັນທັບພະເທວະທິດາ) ກໍມານຳ
ເທວະຣາດເຫຼົ່ານັ້ນ ແລະ ຄັນທັບພະ ອື່ນ ໆ ທີ່ມາພ້ອມເທວະຣາດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ

[໖໔] ອັນໜຶ່ງ ໝູ່ນາກທີ່ຢູ່ໃນສະນາພະສະ
ແລະ ທີ່ຢູ່ໃນເມືອງເວສາລີ ມາພ້ອມດ້ວຍພວກນາກ ຕັດສະກະ
ນາກກຳພົນ ແລະ ນາກອັດສະດອນ ກໍມານຳ
ແລະ ນາກທີ່ຢູ່ໃນທ່າ ປາຍາຄະ ກໍມາພ້ອມດ້ວຍໝູ່ຍາດ
ນາກຜູ້ຢູ່ໃນແມ່ນ້ຳຍະມຸນາ

ແລະ ນາກທີ່ເກີດໃນຕະກູນທະຕະຣະຖະ ຜູ້ມີຍົດກໍມານຳ
ພະຍາຊ້າງເອຣາວັນ ກໍມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ

ເຫຼົ່າຄຸດຜູ້ເປັນທິບມີດວງຕາບໍລິສຸດ
ຜູ້ສາມາດຈັບນາກຄະຣາດໄດ້ໄວ
ຜູ້ບິນມາທາງອາກາດເຖິງກາງປ່າ
ມີຊື່ວ່າຈິຣະສຸບັນ

ເວລານັ້ນພວກນາກຄະຣາດບໍ່ມີຄວາມຢ້ານກົວ
(ເພາະ) ພຣະພຸດທະເຈົ້າຊົງກະທຳໃຫ້ປອດໄພຈາກຄຸດ
ນາກກັບຄຸດເຈຣະຈາກັນ ດ້ວຍວາຈາອັນມ່ອນ
ຕ່າງມີພຣະພຸດທະເຈົ້າເປັນສະຣະນະ

[໓໓໙] ອະສູນພວກທີ່ອາໄສຢູ່ໃນມະຫາສະໝຸດ
ເປັນຜູ້ປຣາໄຊຕໍ່ພຣະອິນຜູ້ຖືວະຊິຣາວຸດ
ອະສູນເຫຼົ່ານັ້ນມີລິດ ມີຍົດ
ເປັນພີ່ນ້ອງຂອງທ້າວວາສະວະ

ພວກອະສູນກາລະກັນຊະ ມີຮູບຮ່າງເປັນຕາຢ້ານຫຼາຍ
ພວກອະສູນທານະເວຄະສະ ອະສູນເວປະຈິດຕິ
ອະສູນສຸຈິດຕິ ອະສູນປະຫາຣາທະ
ແລະ ພະຍາມານນະມຸຈິ ກໍມານຳ

ບຸດຂອງພະລິອະສູນ ໑໐໐ ຕົນ ທີ່ຊື່ວ່າເວໂຣຈະ
ທຸກຕົນຕ່າງໃສ່ເສື້ອເກາະເຂັ້ມແຂງ ເຂົ້າໄປໃກ້ ຣາຫູຈອມອະສູນ
ແລ້ວກ່າວວ່າ “ຂໍຄວາມຈະເລີນຈົ່ງມີແກ່ທ່ານ
ບັດນີ້ເຖິງເວລາທີ່ທ່ານຄວນເຂົ້າໄປ
ສູ່ປ່າທີ່ປະຊຸມຂອງພິກຂຸທັງຫຼາຍ”

[໓໔໐] ເວລານັ້ນເທບ (໑໐ ໝູ່) ຄື
ອາໂປ ປະຫະວີ ເຕໂຊ ວາໂຍ
ວະຣຸນະ ວາຣຸນະ ໂສມະ ຍົດສະ
ເມດຕາ ແລະ ກະລຸນາ ເປັນຜູ້ມີຍົດກໍມານຳ

ເທບທັງ ໑໐ ໝູ່ນີ້ແບ່ງເປັນ ໑໐ ພວກ
ທັງໝົດລ້ວນມີຜິວພັນຫຼາກຫຼາຍ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມມີຍົດ

ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ

ເທບ (໑໐ ໝູ່) ຄື

ເວນດຸ ສະຫະລີ ແລະ ເທບ ໔ ໝູ່ ຄື ອະສະມະ ແລະ ຍະມະ ກໍມານໍາ

ເທບຜູ້ອາໄສພຣະຈັນ ມີພຣະຈັນນໍາໜ້າມາ

ເທບຜູ້ອາໄສພຣະອາທິດ ມີພຣະອາທິດນໍາໜ້າມາ

ເທບພວກມັນທະວະລາຫະກະ ມີພຣະນັກສັດນໍາໜ້າມາ

ພຣະອິນຜູ້ເປັນທ້າວສັກກະ

ຜູ້ເປັນທ້າວປຸຣິນທະທະ ທ້າວວາສະວະ

ປະເສີດກວ່າເຫຼົ່າເທບວະສຸກໍມານໍາ

ເທບທັງ ໑໐ ໝູ່ນີ້ແບ່ງເປັນ ໑໐ ພວກ

ທັງໝົດລ້ວນມີຜິວພັນຫຼາຍຫຼາກ

ມີລິດມີຄວາມຮຸ່ງເຮືອງ

ມີຜິວພັນງົດງາມມີຍົດ

ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ

ເທບອີກ (໑໐ ໝູ່) ຄື

ສະຫະພູຜູ້ຮຸ່ງເຮືອງດັ່ງແປວໄຟ

ອະຣິດຖະກະ ໂຣຊະ ຜູ້ມີຣັດສະໝີດັ່ງສີດອກຜັກຕົບ

ວະຣຸນະ ສະຫະທໍາ ອັດຈຸຕະ ອະເນຊະກະ

ສຸໄລຍະ ຣຸຈິຣະ ແລະ ວາສະວະເນສີ ກໍມາ

ເທບທັງ ໑໐ ໝູ່ນີ້ ແບ່ງເປັນ ໑໐ ພວກ

ທັງໝົດລ້ວນມີຜິວພັນຫຼາກຫຼາຍ

ມີລິດມີຄວາມຮຸ່ງເຮືອງ

ມີຜິວພັນງົດງາມ ມີຍົດ

ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ

ເທບອີກ (໑໐ ໝູ່) ຄື

ສະມານະ ມະຫາສະມານະ ມານຸສະ

ມານຸສຸດຕະມະ ຂິດດາປະທູສິກະ ມະໂນປະທູສິກະ

ຫະຣິ ໂລຫິຕະວາສີ ປາຣະຄະ ແລະ ມະຫາປາຣະຄະ ຜູ້ມີຍົດກໍມາ

ເທບທັງ ໑໐ ໝູ່ນີ້ແບ່ງເປັນ ໑໐ ພວກ

ທັງໝົດລ້ວນມີຜິວພັນຫຼາກຫຼາຍ

ມີລິດມີຄວາມຮຸ່ງເຮືອງ

ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ເທບອີກ (໑໐ ໝູ່) ຄື
ສຸກກະ ກະຣຸມຫະ ອະຣຸນະ ເວຄະນະສະ
ໂອທາຕະໄຄຫະຜູ້ເປັນຫົວໜ້າ ວິຈັກຂະນະ
ສະທາມັດຕະ ຫາຣະຄະຊະ ມິດສະກະຜູ້ມີຍົດ
ແລະ ປະຊຸນນະເທວະຣາດ ຜູ້ບັນດານຝົນໃຫ້ຕົກທົ່ວທຸກທິດກໍມາ
ເທບທັງ ໑໐ ໝູ່ນີ້ ແບ່ງເປັນ ໑໐ ພວກ
ທັງໝົດລ້ວນມີຜິວພັນຫຼາກຫຼາຍ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ເທບອີກ (໑໐ໝູ່) ຄື
ເທບພວກເຂມິຍະ ເທບຊັ້ນດຸສິດ ເທບຊັ້ນຍາມາ
ເທບພວກກັດທະກະຜູ້ມີຍົດ ເທບພວກລໍາພິຕະກະ
ເທບພວກລາມະເສດຖະ ເທບພວກໂຊຕິອາສະວະ
ເທບຊັ້ນນິມມານະຣະດີ ແລະ ເທບຊັ້ນປະຣະນິມມິຕະວະສະວັດຕີກໍມາ
ເທບທັງ ໑໐ ໝູ່ນີ້ ແບ່ງເປັນ ໑໐ ພວກ
ທັງໝົດລ້ວນມີຜິວພັນຫຼາກຫຼາຍ
ມີລິດມີຄວາມຮຸ່ງເຮືອງ
ມີຜິວພັນງົດງາມ ມີຍົດ
ຕ່າງຍິນດີມຸ່ງໜ້າມາຍັງປ່າທີ່ປະຊຸມຂອງພິກຂຸທັງຫຼາຍ
ເທບທັງໝົດ ໖໐ ໝູ່
ລ້ວນມີຜິວພັນຫຼາກຫຼາຍມາແລ້ວຕາມກໍານົດ
ຊື່ໝູ່ເທບ ແລະ ເທບພວກອື່ນ
ຜູ້ມີຜິວພັນ ແລະ ຊື່ແນວນັ້ນກໍມາ (ດ້ວຍຄິດ) ວ່າ
"ພວກເຮົາຈະເຂົ້າພົບພຣະນາຄະ
ຜູ້ບໍ່ມີການເກີດບໍ່ມີກິເລດດັ່ງຕະປູ
ຜູ້ຂ້າມໂອຄະໄດ້ແລ້ວບໍ່ມີອາສະວະ
ຜູ້ພົ້ນໂອຄະໄດ້ແລ້ວລ່ວງພົ້ນທໍາດໍາ
ດັ່ງດວງຈັນພົ້ນຈາກເມກສະນັ້ນ

[໓໔໑] ສຸພົມ ແລະປະຣະມັດຕະພົມ
ຜູ້ເປັນບຸດຂອງພຣະຜູ້ຊົງລິດກໍມາດ້ວຍ
ສະນັງກຸມາຣະພົມ ແລະ ຕິດສະພົມກໍມາຍັງປ່າທີ່ປະຊຸມ
ທ້າວມະຫາພົມ ໑,໐໐໐ ອົງ ປົກຄອງພົມມະໂລກ
ທ້າວມະຫາພົມນັ້ນອຸບັດຂຶ້ນໃນພົມມະໂລກ
ມີຄວາມຮຸ່ງເຮືອງມີກາຍໃຫຍ່ ມີຍົດກໍມາ
ມີພົມ ໑໐ ອົງຜູ້ເປັນໃຫຍ່ກວ່າພົມ ໑,໐໐໐ ອົງ
ມີອຳນາດສະເພາະອົງລະຢ່າງກໍມາ
ມະຫາພົມຊື່ຫາລິຕະມີບໍລິວານຫ້ອມລ້ອມ
ມາຢູ່ທ່າມກາງພົມ ໑,໐໐໐ ອົງນັ້ນ"

[໓໔໔] ເມື່ອເສນາມານມາເຖິງ
ພຣະສາດສະດາໄດ້ຕັດກັບພວກເທບທັງໝົດເຫຼົ່ານັ້ນ
ພ້ອມທັງພຣະອິນ ແລະ ພຣະພົມຜູ້ປະຊຸມກັນຢູ່
ຈົ່ງເບິ່ງຄວາມໂງ່ຈ້າຂອງກັນທະມານ
ມະຫາເສນາມານໄດ້ສັ່ງເສນາມານໄປ
ໃນທີ່ປະຊຸມໃຫຍ່ຂອງເຫຼົ່າເທບດ້ວຍຄຳວ່າ
"ພວກທ່ານຈົ່ງໄປຈັບໝູ່ເທບຜູກໄວ້
ພວກທ່ານຈົ່ງຜູກໄວ້ດ້ວຍຣາຄະເທີ້ນ
ຈົ່ງລ້ອມໄວ້ທຸກດ້ານ
ໃຜໆຢ່າໄດ້ປ່ອຍໃຫ້ຜູ້ໃດຫຼຸດພົ້ນໄປ"
ແລ້ວກໍເອົາຝ່າມືຕົບແຜ່ນດິນເຮັດສຽງເປັນຕາຢ້ານ
(ແຕ່) ໃນເວລານັ້ນ ບໍ່ອາດເຮັດໃຫ້ໃຜຕົກຢູ່ໃນອຳນາດໄດ້
ຈຶ່ງກັບໄປທັງທີ່ໂກດເຄືອງ
ຄືເມກຝົນທີ່ບັນດານໃຫ້ຝົນຕົກຟ້າຮ້ອງຟ້າແມບສັນນັ້ນ

[໓໔໕] ພຣະສາດສະດາຜູ້ມີພຣະຈັກຂຸ
ຊົງຮູ້ເຫດທັງໝົດຊົງກຳນົດແລ້ວ
ຈຶ່ງຮັບສັ່ງຮຽກພຣະສາວົກຜູ້ຍິນດີໃນສາດສະໜາມາຕັດວ່າ
"ດູຣາພິກຂຸທັງຫຼາຍ ເສນາມານມຸ່ງໜ້າມາກັນແລ້ວ
ພວກທ່ານຈົ່ງຮູ້ຈັກພວກເຂົາ"
ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ
ພາກັນທຳຄວາມພຽນ

ເສນາມານຫຼີກໄປຈາກເຫຼົ່າພິກຂຸຜູ້ປາສະຈາກຣາຄະ
ບໍ່ອາດແມ່ນທຳຂົນຂອງພິກຂຸເຫຼົ່ານັ້ນໃຫ້ໄຫວໄດ້
(ພະຍາມານກ່າວສັນລະເສີນວ່າ)
"ໝູ່ພຣະສາວົກຂອງພຣະພຸດທະເຈົ້າ
ຊະນະສົງຄາມແລ້ວທັງໝົດລ່ວງພົ້ນຄວາມຢ້ານກົວ
ມີຍົດຜາກົດຢູ່ໃນໝູ່ຊົນ
ເບີກບານຢູ່ກັບພູຕະທັງຫຼາຍ"

**ມະຫາສະມະຍະສູດທີ ໗ ຈົບ**

# ໘. ສັກກະປັນຫະສູດ

## ວ່າດ້ວຍບັນຫາຂອງທ້າວສັກກະ

[໓໔໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນຖ້ຳອິນທະສາລະທີ່ພູເວທິຍະກະ ທາງທິດເໜືອຂອງຫມູ່ບ້ານພາມຊື່ ອຳພະສັນ ເຊິ່ງຕັ້ງຢູ່ທາງທິດຕາເວັນອອກແຫ່ງເມືອງຣາດຊະຄຶແຄວັນມະຄົດ ເວລານັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບຊົງເກີດຄວາມຂົນຂວາຍເພື່ອຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຊົງມີຄວາມຄິດແນວນີ້ວ່າ "ບັດນີ້ ພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ປະທັບຢູ່ບ່ອນໃດນໍ?" ທອດພຣະເນດເຫັນພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນຖ້ຳອິນທະສາລະທີ່ພູເວທິຍະກະ ທາງທິດເໜືອຂອງຫມູ່ບ້ານພາມຊື່ ອຳພະສັນ ເຊິ່ງຕັ້ງຢູ່ທາງທິດຕາເວັນອອກແຫ່ງເມືອງຣາດຊະຄຶແຄວັນມະຄົດ ຈຶ່ງຮັບສັ່ງຮຽກພວກເທບຊັ້ນຕາວະຕຶງສາມາຕັດວ່າ "ທ່ານຜູ້ນິຣະທຸກທັງຫຼາຍ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນຖ້ຳອິນທະສາລະທີ່ພູເວທິຍະກະ ທາງທິດເໜືອຂອງຫມູ່ບ້ານພາມຊື່ ອຳພະສັນ ເຊິ່ງຕັ້ງຢູ່ທາງທິດຕາເວັນອອກແຫ່ງເມືອງຣາດຊະຄຶແຄວັນມະຄົດ ທາງທີ່ດີພວກເຮົາຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນກັນເທີ້ນ" ພວກເທບຊັ້ນຕາວະຕຶງສາ ທູນຮັບສະໜອງພຣະດຳຣັດແລ້ວ

[໓໔໕] ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບຮັບສັ່ງຮຽກປັນຈະສິຂະ ຄັນທັບພະບຸດມາຕັດວ່າ "ທ່ານປັນຈະສິຂະ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນຖ້ຳອິນທະສາລະ ທີ່ພູເວທິ

ຍະກະທາງທິດເໜືອຂອງໝູ່ບ້ານພາມຊື່ ອຳພະສັນ ເຊິ່ງຕັ້ງຢູ່ທາງທິດຕາເວັນອອກແຫ່ງເມືອງຣາດຊະຄຶແຄວັນມະຄິດ ທາງທີ່ດີພວກເຮົາຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ"

ປັນຈະສິຂະຄັນທັບພະບຸດ ທູນຮັບສະໜອງພຣະດຳຣັດແລ້ວ ຖືພິນສີເຫຼືອງດັ່ງໜ່ວຍໝາກຕູມ ຕາມສະເດັດທ້າວສັກກະຜູ້ເປັນຈອມແຫ່ງເທບມາ

[໓໕໖] ຕໍ່ມາທ້າວສັກກະຜູ້ເປັນຈອມແຫ່ງເທບ ຜູ້ມີເຫຼົ່າເທບຊັ້ນຕາວະຕິງສາ ຫ້ອມລ້ອມມີປັນຈະສິຂະຄັນທັບພະບຸດນຳສະເດັດ ໄດ້ຊົງຫາຍໄຕຈາກ (ພົບ) ຊັ້ນຕາວະຕິງສາ ໄປຜາກົດຢູ່ທີ່ພູເວທິຍະກະ ທາງທິດເໜືອຂອງໝູ່ບ້ານພາມຊື່ອຳພະສັນ ຄື ບຸຣຸດມີກຳລັງຢຽດແຂນອອກ ຫຼືຄູ້ແຂນເຂົ້າສັນນັ້ນ ເວລານັ້ນພູເວທິຍະກະ ແລະ ໝູ່ບ້ານພາມຊື່ອຳພະສັນ ສະຫວ່າງສະໄຫວຢ່າງຍິ່ງ ດ້ວຍເທວານຸພາບຂອງເຫຼົ່າເທບ ຊາວບ້ານໃກ້ເຮືອນຄຽງອ້ອມແອ້ມກ່າວກັນແນວນີ້ວ່າ "ມື້ນີ້ ພູເວທິຍະກະຖືກໄຟເຜົາໄໝ້ລຸກຮຸ່ງເປັນແປວ ເປັນຫຍັງນໍ? ມື້ນີ້ ພູເວທິຍະກະແລະໝູບ້ານພາມຊື່ອຳພະສັນ ຈຶ່ງສະຫວ່າງສະໄຫວປານນັ້ນ" ພາກັນຕົກໃຈຂົນຫົວລຸກ

[໓໕໗] ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຮັບສັ່ງຮຽກປັນຈະສິຂະຄັນທັບພະບຸດມາຕັດວ່າ "ປັນຈະສິຂະ ພຣະຕະຖາຄົດເຈົ້າ ຊົງເຂົ້າຊານ ຊົງພໍພຣະທະໄທໃນຊານລະຫວ່າງທີ່ພຣະອົງປະທັບຫຼີບຫຼີກຢູ່ ຄົນເຊັ່ນເຮົາຍາກທີ່ຈະເຂົ້າໄປເຝົ້າໄດ້ ທາງທີ່ດີຄວນເຮັດໃຫ້ພຣະອົງຊົງພໍພຣະທະໄທກ່ອນ ຫຼັງຈາກນັ້ນພວກເຮົາຈຶ່ງຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ"

ປັນຈະສິຂະຄັນທັບພະບຸດທູນຮັບສະໜອງພຣະດຳຣັດແລ້ວ ຈຶ່ງຖືພິນສີເຫຼືອງດັ່ງໜ່ວຍໝາກຕູມເຂົ້າໄປຈົນເຖິງຖ້ຳອິນທະສາລະ ແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນຄະເນເບິ່ງວ່າ "ໄລຍະທີ່ນີ້ພຣະຜູ້ມີພຣະພາກເຈົ້າປະທັບຢູ່ບໍ່ໄກຫຼາຍ ບໍ່ໃກ້ຫຼາຍຈາກເຮົາ ແລະ ຊົງໄດ້ຍິນສຽງຂອງເຮົາ"

## ເພງຂັບກ່ອມຂອງປັນຈະສິຂະຄັນທັບພະບຸດ

[໓໕໘] ປັນຈະສິຂະຄັນທັບພະບຸດຢືນຢູ່ໃນບ່ອນສົມຄວນ ໄດ້ດີດພິນສີເຫຼືອງດັ່ງໜ່ວຍໝາກຕູມ ແລະ ກ່າວຄາຖາອັນກ່ຽວເນື່ອງດ້ວຍພຣະພຸດ ກ່ຽວເນື່ອງດ້ວຍພຣະທຳ ກ່ຽວເນື່ອງດ້ວຍພຣະສົງ ກ່ຽວເນື່ອງດ້ວຍພຣະອະຣະຫັນ ແລະ ກ່ຽວເນື່ອງດ້ວຍການເຫຼົ້ານີ້ ວ່າ

"ນາງພັນທາສຸຣິຍະ ວັດສະສາເອີຍ[๑]
ເຮົາຂໍຂາບທ່ານຕິມພະຣຸບິດາຂອງນາງ
ໂດຍເຫດທີ່ນາງເກີດມາງົດງາມເຮັດໃຫ້ເຮົາພໍໃຈ

ຄື ສາຍລົມ ຍ່ອມເປັນທີ່ປາຖະໜາຂອງຜູ້ມີເຫື່ອ
ຫຼື ຄືນ້ຳເປັນທີ່ປາຖະໜາຂອງຜູ້ຫິວ
ທ່ານຜູ້ໄສໄລເປັນທີ່ຮັກຂອງເຮົາ
ຄື ທຳເປັນທີ່ຮັກຂອງພຣະອະຣະຫັນ
ທ່ານຈຶ່ງຊ່ອຍດັບຄວາມຮ້ອນຮົນ
ຄື ຊ່ອຍວາງຢາແກ້ໄຂ້ໃນຜູ້ສັ່ນໄຊເຊ
ຄື ໃຫ້ອາຫານແກ່ຜູ້ຫິວ
ຫຼື ຄື ໃຊ້ນ້ຳມອດໄຟທີ່ພວມລຸກໄໝ້ຢູ່
ຂໍໃຫ້ເຮົາໄດ້ຊຸກລົງໃສ່ນົມ ແລະ ທ້ອງຂອງນາງ
ຄື ຊ້າງທີ່ຮ້ອນຫຼາຍໃນຄັ້ງຮ້ອນ
ຢັ່ງລົງສູ່ສະໂບກຂະຣະນີ ມີນ້ຳເຢັນ
ປົນດ້ວຍລະອອງເກສອນດອກບົວ
ເຮົາມຶນງົງເພາະ (ເຫັນ) ຊ່ວງຂາທີ່ງາມສົມສ່ວນ
ບໍ່ຮັບຮູ້ເຫດການ (ຫຍັງໆ)
ຄື ຊ້າງເຫຼືອຂໍເພາະຖືວ່າເຮົາຊະນະໄດ້ແລ້ວ
ເຮົາມີໃຈຈົດຈໍ່ກັບນາງ ບໍ່ອາດກັບໃຈທີ່ຜັນແປໄປ
ຄື ປາທີ່ກືນເບັດເຂົ້າໄປ
ນາງຜູ້ຈະເລີນ ນາງຈົ່ງເອົາຂາຊ້າຍກອດເຮົາໄວ້
ນາງຜູ້ມີສາຍຕາຫວານຍ້ອຍ ຈົ່ງກອດຮັດເຮົາໄວ້ເທີ້ນ
ນາງຜູ້ງົດງາມຈົ່ງສວມກອດເຮົາໄວ້
ສິ່ງນີ້ ຄື ສິ່ງທີ່ເຮົາປາຖະໜາຫຼາຍແທ້
ຄວາມຮັກໃຄ່ຂອງເຮົາຕໍ່ນາງຜູ້ມີຜົມງາມສະລວຍ
ເຖິງມີໜ້ອຍກໍເກີດຜົນຫຼາຍ
ຄື ທັກສິນາທີ່ຖວາຍແດ່ພຣະອະຣະຫັນ
ນາງຜູ້ງົດງາມທົ່ວເລົາຄີງ
ບຸນທີ່ເຮົາໄດ້ທຳໄວ້ໃນພຣະອະຣະຫັນຜູ້ຄົງທີ່ນັ້ນ
ຈົ່ງອຳນວຍຜົນແກ່ເຮົາພ້ອມກັບນາງ
ນາງຜູ້ງົດງາມທົ່ວເລົາຄີງ
ບຸນທີ່ເຮົາໄດ້ທຳໄວ້ໃນປະຖະພີມົນທົນນີ້
ຈົ່ງອຳນວຍຜົນແກ່ເຮົາພ້ອມກັບນາງ
ນາງ (ພັດທາ) ສຸຣິຍະວັດສະສາເຮົາໃຝ່ຝັນຫານາງ

ຄື ພຣະສະມະນະສັກກະຍະບຸດຜູ້ຊົງເຂົ້າຊານຢູ່ຜູ້ດຽວ
ຜູ້ມີປັນຍາຄອງຕົນມີສະຕິ
ເປັນມຸນີສະແຫວງຫາອະມະຕະທຳ
ນາງຜູ້ຄົນງາມ ຖ້າເຮົາໄດ້ຢູ່ຮ່ວມກັບນາງກໍຈະໄດ້ຊົມຊື່ນ
ຄື ພຣະມຸນີບັນລຸສຳໂພທິຍານ ອັນສູງສຸດເພິ່ງຊົມຊື່ນສັນນັ້ນ
ຫາກທ້າວສັກກະຜູ້ເປັນໃຫຍ່ແຫ່ງຕາວະຕິງສາ
ຈະປະທານພອນແກ່ເຮົາ
ເຮົາກໍຈະຕ້ອງເລືອກເອົານາງເປັນແນ່ແທ້
ຄວາມປາຖະໜາຂອງເຮົາໝັ້ນຄົງຢູ່ແນວນີ້
ນາງຜູ້ສະຫຼາດສະຫຼຽວ
ເຮົາຂໍນ້ອມໄຫວ້ບິດາຂອງນາງຜູ້ມີທິດາງາມແນວນີ້
ຄືຕົ້ນສາລະທີ່ປົ່ງດອກໃໝ່ໆ ສັນນັ້ນ"

[໓໔໙] ເມື່ອປັນຈະສິຂະຄັນທັບພະບຸດ ຂາບທູນແນວນີ້ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບປັນຈະສິຂະຄັນທັບພະບຸດ ແນວນີ້ວ່າ "ດູຣາ ປັນຈະສິຂະ ສຽງສາຍພິນຂອງທ່ານທຽບໄດ້ກັບສຽງຂັບຮ້ອງ ແລະ ສຽງຂັບຮ້ອງທຽບໄດ້ກັບສຽງສາຍພິນ ສຽງສາຍພິນຂອງທ່ານບໍ່ເກີນສຽງຂັບຮ້ອງແລະສຽງຂັບຮ້ອງກໍບໍ່ເກີນສຽງສາຍພິນ ຄາຖາອັນກ່ຽວເນື່ອງດ້ວຍພຣະພຸດ ກ່ຽວເນື່ອງດ້ວຍພຣະທຳ ກ່ຽວເນື່ອງດ້ວຍພຣະສົງ ກ່ຽວເນື່ອງດ້ວຍພຣະອະຣະຫັນ ແລະ ກ່ຽວເນື່ອງດ້ວຍກາມເຫຼົ່ານີ້ທ່ານປະພັນໄວ້ເມື່ອໃດ"

ປັນຈະສິຂະຄັນທັບພະບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ປະພັນຄາຖາເຫຼົ່ານີ້ໄວ້ ເມື່ອສະໄໝທີ່ພຣະຜູ້ມີພຣະພາກເຈົ້າ ຕັດສະຣູ້ໃນເທື່ອທຳອິດ ປະທັບຢູ່ກ້ອງຕົ້ນອະຊະປາລະນິໂຄດ ແຄມຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ຂ້າພຣະອົງ ຫຼົງຮັກພັນທາສຸຣິຍະ ວັດສະສາ ທິດາຂອງທ້າວຕິມພະຣຸ ຄັນທັບພະຣາດ ແຕ່ນາງຮັກຜູ້ອື່ນ ຄື ຫຼົງຮັກສິຂັນດີ ບຸດຂອງມາຕະລີ ສັງຄາຫະກະເທບພະບຸດ ເມື່ອຂ້າພຣະອົງບໍ່ໄດ້ນາງດ້ວຍວິທີໜຶ່ງຈຶ່ງຖືເອົາພິນສີເຫຼືອງເໝືອນດັ່ງໜ່ວຍໝາກຕູມ ເຂົ້າໄປສູ່ນິເວດຂອງທ້າວຕິມພະຣຸ ຄັນທັບພະຣາດແລ້ວດີດພິນຂຶ້ນກ່າວຄາຖາອັນກ່ຽວເນື່ອງດ້ວຍພຣະພຸດ ກ່ຽວເນື່ອງດ້ວຍພຣະທຳກ່ຽວເນື່ອງດ້ວຍພຣະສົງ ກ່ຽວເນື່ອງດ້ວຍພຣະອະຣະຫັນ ແລະ ກ່ຽວເນື່ອງດ້ວຍກາມເຫຼົ່ານີ້ວ່າ

"ແມ່ພັນທາສຸຣິຍະວັດສະສາ
ເຮົາຂໍຂາບທ່ານຕິມະພະຣຸບິດາຂອງທ່ານ
ໂດຍເຫດທີ່ທ່ານເກີດມາງົດງາມເຮັດໃຫ້ເຮົາພໍໃຈ

ນາງຜູ້ສະຫຼຽວສະຫຼາດ
ເຮົາຂໍນ້ອມໄຫວ້ບິດາຂອງນາງຜູ້ມີທິດາງາມແນວນີ້
ຄື ຕົ້ນສາລະທີ່ປົ່ງດອກໃໝ່ໆ ສັນນັ້ນ"

ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງກ່າວແນວນີ້ ນາງພັນທາສຸຣິຍະວັດສະສາກ່າວຕອບວ່າ "ທ່ານຜູ້ນິຣະທຸກ ເຮົາບໍ່ເຄີຍເຫັນພຣະຜູ້ມີພຣະພາກເຈົ້າໃນບ່ອນສະເພາະພຣະພັກ ເປັນແຕ່ເຄີຍໄດ້ຍິນມາ ເມື່ອເຂົ້າໄປຟ້ອນໃນສຸທຳມາເທວະສະພາ ຂອງເຫຼົ່າເທບຊັ້ນຕາວະຕິງສາທີ່ນັ້ນ ເນື່ອງຈາກທ່ານໄດ້ກ່າວສັນລະເສີນພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນໄດ້ ກໍຈົ່ງມາສະມາຄົມກັບພວກເຮົາໃນບັດນີ້" ຂ້າພຣະອົງ ຈຶ່ງໄດ້ຮ່ວມສະມາຄົມກັບນາງ ແລະ ບໍ່ແມ່ນເທື່ອນີ້ທີ່ນັ້ນ ຫຼັງຈາກນັ້ນມາຂ້າພຣະອົງກໍໄດ້ສະມາຄົມກັນອີກ"

## ທ້າວສັກກະຜູ້ເປັນຈອມແຫ່ງເທບເຂົ້າເຝົ້າ

[໓໕໐] ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງມີຄວາມຄິດແນວນີ້ວ່າ "ປັນຈະສິຂະຄັນທັບພະບຸດ ໄດ້ທູນປາໄສກັບພຣະຜູ້ມີພຣະພາກເຈົ້າ ແລະ ພຣະຜູ້ມີພຣະພາກເຈົ້າ ກໍຊົງປາໄສກັບປັນຈະສິຂະ" ຈຶ່ງຮັບສັ່ງຮຽກປັນຈະສິຂະຄັນທັບພະບຸດມາຕັດວ່າ "ປັນຈະສິຂະ ທ່ານຈົ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ຕາມຄຳຂອງເຮົາວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ້າວສັກກະຜູ້ເປັນຈອມແຫ່ງເທບພ້ອມດ້ວຍອຳມາດ ພ້ອມດ້ວຍບໍລິສັດ ຂໍຖວາຍອະພິວາດພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍພຣະສຽນ" ປັນຈະສິຂະຄັນທັບພະບຸດ ທູນຮັບສະໜອງພຣະດຳຣັດແລ້ວ ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ຕາມຮັບສັ່ງວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ພ້ອມດ້ວຍອຳມາດ ພ້ອມດ້ວຍບໍລິສັດ ຂໍຖວາຍອະພິວາດ ພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍພຣະສຽນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດູຣາປັນຈະສິຂະ ຂໍໃຫ້ທ້າວສັກກະຜູ້ເປັນຈອມແຫ່ງເທບພ້ອມດ້ວຍອຳມາດ ພ້ອມດ້ວຍບໍລິສັດ ຈົ່ງມີຄວາມສຸກເທີ້ນ ເພາະວ່າມີພວກເທວະດາ ມະນຸດ ອະສູນ ນາກ ຄົນທັບ ແລະ ສັດເຫຼົ່າອື່ນອີກຈຳນວນຫຼາຍ ຕ່າງກໍປາຖະໜາຄວາມສຸກ"

[໓໕໑] ພຣະຕະຖາຄົດເຈົ້າທັງຫຼາຍ ຍ່ອມປະທານພອນແກ່ເທບຜູ້ມີສັກໃຫຍ່ແນວນີ້ແລ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຜູ້ອັນພຣະຜູ້ມີພຣະພາກເຈົ້າ ປະທານພອນແລ້ວ ໄດ້ສະເດັດເຂົ້າໄປສູ່ຖ້ຳອິນທະສາລະຂອງພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດແລ້ວຢືນຢູ່ໃນບ່ອນສົມ ຄວນ ແມ່ນພວກເທບຊັ້ນຕາວະຕິງສາ ກໍເຂົ້າໄປສູ່ຖ້ຳອິນທະສາລະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ ແມ່ນປັນຈະສິຂະຄັນທັບພະບຸດ ກໍເຂົ້າໄປສູ່ຖ້ຳອິນທະສາລະ ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ

ເວລານັ້ນ ຖ້ຳອິນທະສາລະ ເຊິ່ງມີພື້ນບໍ່ຮາບພຽງ ກໍຮາບພຽງ ທີ່ຄັບແຄບກໍກັບກວ້າງຂວາງຂະຫຍາຍອອກ ຄວາມມືດໃນຖ້ຳຫາຍໄປ ເກີດຄວາມສະຫວ່າງຂຶ້ນ ເພາະເທວານຸພາບຂອງເຫຼົ່າເທບ

[໓໕໘] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ້າວສັກກະຜູ້ເປັນຈອມແຫ່ງເທບແນວນີ້ວ່າ "ນີ້ເປັນເຫດໜ້າອັດສະຈັນ ເປັນຕາງຶດແທ້ໆ ບໍ່ເຄີຍຜາກົດມີມາທີ່ທ້າວໂກສີມີກິດຫຼາຍມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍສະເດັດມາເຖິງບ່ອນນີ້ໄດ້"

ທ້າວສັກກະຜູ້ເປັນຈອມແຫ່ງເທບຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງປາຖະໜາຈະມາເຝົ້າພຣະຜູ້ມີພຣະພາກເຈົ້າຕັ້ງແຕ່ດົນແລ້ວ ແຕ່ມົວສາລະວົນດ້ວຍກິດໜ້າທີ່ຂອງພວກເທບຊັ້ນຕາວະຕຶງສາ ຈຶ່ງບໍ່ສາມາດມາເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ ຄັ້ງໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ສະລະລາຄານ ເຂດເມືອງສາວັດຖີ ຂ້າພຣະອົງໄດ້ໄປສູ່ເມືອງສາວັດຖີເພື່ອຈະເຂົ້າເຝົ້າພຣະອົງ ແຕ່ໃນຂະນະນັ້ນ ພຣະອົງປະທັບເຂົ້າສະມາທິຢູ່ ມີນາງປະຣິຈາລິກາຂອງທ້າວເວດສະວັນມະຫາຣາດຊື່ວ່າ ພຸຊະຄີ ຄອຍຖ້າອຸປັດຖາກ ນາງຢືນປະນົມມືຖວາຍນະມັດສະການຢູ່ຂະນະນັ້ນ ຂ້າພຣະອົງກ່າວກັບນາງວ່າ "ນາງ ເຈົ້າຈົ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າຕາມຄຳຂອງເຮົາດ້ວຍຄຳວ່າ "ທ້າວສັກກະຜູ້ເປັນຈອມແຫ່ງເທບ ພ້ອມດ້ວຍອຳມາດ ພ້ອມດ້ວຍບໍລິສັດ ຂໍຖວາຍອະພິວາດພຣະບາດ ຂອງພຣະຜູ້ມີພຣະພາກເຈົ້າດ້ວຍພຣະສຽນ" ເມື່ອຂ້າພຣະອົງກ່າວແນວນີ້ ນາງຕອບຂ້າພຣະອົງແນວນີ້ວ່າ "ທ່ານຜູ້ນິຣະທຸກ ເວລານີ້ບໍ່ແມ່ນເວລາທີ່ຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຫຼີບຫຼີກພຽງລຳພັງຢູ່ຜູ້ດຽວ" ຂ້າພຣະອົງຈຶ່ງສັ່ງວ່າ "ນາງຖ້າເປັນແນວນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິ ເຈົ້າຈົ່ງຖວາຍອະພິວາດພຣະອົງຕາມຄຳຂອງເຮົາວ່າ "ທ້າວສັກກະຜູ້ເປັນຈອມແຫ່ງເທບ ພ້ອມດ້ວຍອຳມາດ ພ້ອມດ້ວຍບໍລິສັດ ຂໍຖວາຍອະພິວາດ ພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍພຣະສຽນ" ນາງໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າຫຼືບໍ່? ພຣະອົງຊົງລະນຶກເຖິງຄຳຂອງນາງໄດ້ຢູ່ບໍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທ່ານໄຫວ້ເຮົາແລ້ວ ເຮົາລະນຶກເຖິງຄຳຂອງທ່ານໄດ້ ແລະ ເຮົາອອກຈາກສະມາທິເພາະສຽງໝາກຄີງລໍ້ລົດຂອງພຣະອົງ"

ທ້າວສັກກະຜູ້ເປັນຈອມແຫ່ງເທບຂາບທູນວ່າ "ຂ້າພຣະອົງໄດ້ສະດັບ ຮັບມາສະເພາະໜ້າພວກເທບ ຜູ້ເກີດໃນໝູ່ເທບຊັ້ນຕາວະຕຶງສາກ່ອນພວກຂ້າພຣະອົງວ່າ "ເມື່ອຄັ້ງທີ່ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ໝູ່ເທບຈະເລີນເຕັມທີ່ໝູ່ອະສູນເສື່ອມຖອຍລົງ" ຂໍ້ນີ້ ຂ້າພຣະອົງໄດ້ເຫັນປະຈັກແລ້ວວ່າ ເມື່ອພຣະຕະຖາຄົດອະຣະ

ທັນຕະສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ໝູ່ເທບຈະເລີນເຕັມທີ່ ໝູ່ອະສູນເສື່ອມຖອຍລົງ"

## ເລື້ອງໂຄປະກະເທບພະບຸດ

[໓໕໓] ຂ້າແດ່ ພຣະອົງຜູ້ຈະເລີນ ໃນເມືອງກະບິນລະພັດນີ້ ໄດ້ມີສາກະຍະທິດານາມວ່າ ໂຄປີກາ ຜູ້ເຫຼື້ອມໃສໃນພຣະພຸດ ເຫຼື້ອມໃສໃນພຣະທຳ ເຫຼື້ອມໃສໃນພຣະສົງ ຜູ້ຖືຮັກສາສິນໃຫ້ບໍລິບູນ ເບື່ອໜ່າຍຄວາມຮູ້ສຶກເປັນຍິງ ອົບຮົມຄວາມຮູ້ສຶກເປັນຊາຍ ຫຼັງຈາກຕາຍແລ້ວ ໄດ້ໄປເກີດໃນສຸກຄະຕິໂລກສະຫວັນ ໄດ້ຢູ່ຮ່ວມກັບພວກເທບຊັ້ນຕາວະຕິງສາ ໄດ້ເປັນບຸດຂອງຂ້າພຣະອົງໃນບ່ອນນັ້ນ ພວກເທບຮູ້ຈັກທ່ານແບວນີ້ວ່າ "ໂຄປະກະເທບພະບຸດ" ພິກຂຸອື່ນອີກ ໓ ອົງ ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ໄປເກີດໃນໝູ່ຄົນທັບ ເຊິ່ງເປັນຊັ້ນຕ່ຳ ພວກຄັນທັບພະນັ້ນອີ່ມອົກອີ່ມໃຈພັ່ງພ້ອມ ໄດ້ຮັບການບົວຣະບັດຢູ່ດ້ວຍກາມມະຄຸນ ໕ ມາສູ່ທີ່ບົວຣະບັດຂອງຂ້າພຣະອົງ ໂຄປະກະເທບພະບຸດກ່າວເຕືອນ ພວກຄັນທັບພະ ຜູ້ມາຍັງທີ່ບົວຣະບັດຂອງຂ້າພຣະອົງວ່າ "ທ່ານຜູ້ນິຣະທຸກທັງຫຼາຍ ພວກທ່ານອວ່າຍໜ້າໄປທາງໃດ ທັງທີ່ໄດ້ຟັງພຣະທຳຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນແລ້ວ ເຮົາເປັນແມ່ຍິງ ເຫຼື້ອມໃສໃນພຣະພຸດ ເຫຼື້ອມໃສໃນພຣະທຳ ເຫຼື້ອມໃສໃນພຣະສົງ ຖືຮັກສາ ສິນໃຫ້ບໍລິບູນ ໜ່າຍຄວາມຮູ້ສຶກເປັນຍິງ ອົບຮົມຄວາມຮູ້ສຶກເປັນຊາຍ ຫຼັງຈາກຕາຍແລ້ວ ໄດ້ມາເກີດໃນສຸກຄະຕິໂລກສະຫວັນ ໄດ້ຢູ່ຮ່ວມກັບພວກເທບຊັ້ນຕາວະຕິງສາ ເປັນບຸດຂອງທ້າວສັກກະ ຜູ້ເປັນຈອມແຫ່ງເທບ ໃນບ່ອນນີ້ ພວກເທບຮູ້ຈັກເຮົາແບວນີ້ວ່າ "ໂຄປະກະເທບພະບຸດ" ສ່ວນພວກທ່ານປະພຶດພົມມະຈັນ ໃນພຣະຜູ້ມີພຣະພາກເຈົ້າ ມາເກີດໃນໝູ່ຄົນທັບ ເຊິ່ງເປັນຊັ້ນຕ່ຳ ພວກເຮົາໄດ້ເຫັນຜູ້ຮ່ວມປະພຶດທຳ ທີ່ມາເກີດໃນໝູ່ຄົນທັບ ເຊິ່ງເປັນຊັ້ນຕ່ຳ ນັບວ່າໄດ້ເຫັນຮູບທີ່ບໍ່ໜ້າເບິ່ງເລີຍ" ເມື່ອພວກຄັນທັບພະ ໓ ຕົນຖືກໂຄປະກະເທບພະບຸດຕັກເຕືອນມີເທບ ໔໔ ອົງ ກັບໄດ້ສະຕິໃນປະຈຸບັນທັນທີແລ້ວໄປເກີດໃນພົມມະໂລກຊັ້ນພົມປຸໂຣຫິຕາ ສ່ວນເທບອີກອົງໜຶ່ງຍັງຄົງຢູ່ໃນກາມມະພົບ

[໓໕໔] ໂຄປະກະເທບພະບຸດກ່າວ ວ່າ

"ເຮົາມີນາມວ່າ "ໂຄປີກາ"
ເປັນອຸປາສິກາຂອງພຣະພຸດທະເຈົ້າ ຜູ້ມີພຣະຈັກຂຸ
ເຮົາເຫຼື້ອມໃສຢ່າງຍິ່ງໃນພຣະພຸດ ພຣະທຳ
ແລະ ມີຈິດເຫຼື້ອມໃສ ບົວຣະບັດພຣະສົງ

ເພາະຄວາມດີຂອງພຣະທຳ ຂອງພຣະພຸດທະເຈົ້າ ພຣະອົງນັ້ນ
ເຮົາໄດ້ເປັນບຸດຂອງທ້າວສັກກະມີອານຸພາບຫຼາຍ
ມີຄວາມຮຸ່ງເຮືອງຫຼາຍ ມາເກີດໃນເທວະໂລກຊັ້ນຕາວະຕິງສາ
ແມ່ນໃນບ່ອນນີ້ພວກເທບຮູ້ຈັກເຮົາວ່າ "ໂຄປະກະເທບພະບຸດ"

ເຮົາໄດ້ມາເຫັນພວກພິກຂຸຜູ້ເປັນສາວົກຂອງພຣະໂຄດົມ
ຜູ້ເກີດຢູ່ໃນໝູ່ຄົນທັນ
ເຊິ່ງເຮົາເຄີຍເຫັນມາແລ້ວເມື່ອຄັ້ງເປັນມະນຸດ
ຍັງໄດ້ເຄີຍບົວຣະບັດຕົນ໌ ໃນເຮືອນຂອງຕົນ
ແລ້ວອຸປັດຖາກດ້ວຍເຂົ້າ ແລະ ນ້ຳ
ທ່ານເຫຼົ່ານີ້ອວ່າຍໜ້າໄປທາງໃດ
ຈຶ່ງບໍ່ໄດ້ຮັບພຣະທຳ ຂອງພຣະພຸດທະເຈົ້າ
ພຣະທຳ ທີ່ວິນຍູຊົນເພິ່ງຮູ້ສະເພາະຕົນ
ທີ່ພຣະພຸດທະເຈົ້າ ຜູ້ມີພຣະຈັກຂຸຕັດສະຮູ້ແລ້ວ ຊົງສະແດງໄວ້ດີແລ້ວ
ແມ່ນເຮົາກໍເຂົ້າໄປຫາພວກທ່ານໄດ້ຟັງສຸພາສິດຂອງພຣະອະຣິຍະເຈົ້າ
ໄດ້ເປັນບຸດຂອງທ້າວສັກກະມີອານຸພາບຫຼາຍ
ມີຄວາມຮຸ່ງເຮືອງຫຼາຍມາເກີດໃນເທວະໂລກຊັ້ນຕາວະຕິງສາ
ສ່ວນພວກທ່ານເຂົ້າໄປນັ່ງໃກ້ພຣະພຸດທະເຈົ້າຜູ້ປະເສີດ
ປະພຶດພົມມະຈັນໃນພຣະພຸດທະເຈົ້າຜູ້ຍອດຢ້ຽມ
ແຕ່ກັບມາເກີດໃນໝູ່ເທບຊັ້ນຕ່ຳ
ການເກີດຂອງພວກທ່ານບໍ່ສົມຄວນ
ເຮົາໄດ້ມາເຫັນຜູ້ຮ່ວມປະພຶດທຳ
ມາເກີດໃນໝູ່ເທບຊັ້ນຕ່ຳນັບວ່າໄດ້ເຫັນຮູບທີ່ບໍ່ໜ້າເບິ່ງເລີຍ
ພວກທ່ານມາເກີດໃນໝູ່ຄົນທັນ
ຍັງຕ້ອງມາສູ່ທີ່ບົວຣະບັດ ຂອງພວກເທບ
ຂໍໃຫ້ທ່ານຈົ່ງເບິ່ງຄວາມວິເສດອັນນີ້ຂອງເຮົາຜູ້ຢູ່ຄອງເຮືອນເທີ້ນ
ເຮົາເປັນແມ່ຍິງແຕ່ມື້ນີ້ເປັນເທບພະບຸດ
ຜູ້ພ້ຽບພ້ອມດ້ວຍກາມມະຄຸນອັນເປັນທິບ"
ຄົນທັນພວກນັ້ນ ພ້ອມກັນມາພົບໂຄປະກະເທບພະບຸດ
ຖືກເທບພະບຸດຜູ້ເປັນສາວົກຂອງພຣະໂຄດົມຕັກເຕືອນແລ້ວ
ຈຶ່ງເກີດຄວາມສັງເວດວ່າ
"ເອີາເທີ້ນ ພວກເຮົາຈະພຽນພະຍາຍາມ
ຢ່າໄດ້ເປັນຄົນຮັບໃຊ້ຂອງຜູ້ອື່ນອີກເລີຍ"
ບັນດາຄົນທັນເຫຼົ່ານັ້ນ
ມີຄົນທັນ ໘ ຕົນລະນຶກເຖິງຄຳສອນຂອງພຣະໂຄດົມໄດ້
ຈຶ່ງໄດ້ເລີ່ມຕັ້ງຄວາມພຽນໜ່າຍຄວາມຄິດໃນພົບນີ້

ເຫັນໂທດໃນການ ຕັດການສັງໂຍດ ແລະ ການມະພັນ໌
ອັນເປັນໂຍຄະ ທີ່ລະໄດ້ຍາກຂອງມານຜູ້ມີບາບ
ກ້າວລ່ວງເຫຼົ່າເທບຊັ້ນຕາວະຕິງສາ
ເພາະຕັດກາມມະຄຸນອັນມີຢູ່ໄດ້
ຄືກັນກັບຊ້າງຕັດບ່ວງບາດໄດ້
ເທບທັງໝົດພ້ອມທັງພຣະອິນ ແລະ ພຣະປະຊາບໍດີ
ເຂົ້າໄປນັ່ງປະຊຸມກັນໃນສຸທຳມາເທວະສະພາ
ເຊິ່ງລ້ວນແຕ່ເປັນຜູ້ກ້າ ປາສະຈາກຣາຄະ
ກຳລັງພໍ່າເພັງທຳ ທີ່ປາສະຈາກຄວາມກຳໜັດ
ໄດ້ກ້າວລ່ວງເທບພວກນັ້ນທີ່ນັ່ງຢູ່
ທ້າວວາສະວະຜູ້ເປັນໃຫຍ່ກວ່າເທບ
ທອດພຣະເນດເທບເຫຼົ່ານັ້ນ
ທ່າມກາງໝູ່ເທບແລ້ວຊຶ່ງສັງເວດວ່າ
"ເທບເຫຼົ່ານັ້ນ ມາເກີດໃນໝູ່ເທບຊັ້ນຕໍ່າກວ່າ
ເວລານີ້ກັບກ້າວລ່ວງ ພວກເທບຊັ້ນຕາວະຕິງສາໄດ້"
ໂຄປະກະເທບພະບຸດນັ້ນ ພິຈາລະນາຖ້ອຍຄຳຂອງທ້າວສັກກະ
ຜູ້ຊຶ່ງເກີດຄວາມສັງເວດ ແລ້ວຂາບທູນທ້າວວາສະວະວ່າ
"ມີພຣະພຸດທະເຈົ້າ ຜູ້ຊຶ່ງເປັນຈອມຄົນ ຢູ່ໃນມະນຸດໂລກ
ຊຶ່ງຄອບງຳກາມ ໄດ້ພຣະນາມວ່າ ພຣະສາກະຍະມຸນີ
ເທບພວກນັ້ນເປັນບຸດ ຂອງພຣະພຸດທະເຈົ້າ ພຣະອົງນັ້ນ
ເປັນຜູ້ເສື່ອມຈາກສະຕິ໌ ຖືກຂ້າພຣະອົງຕັກເຕືອນແລ້ວ ຈຶ່ງກັບໄດ້ສະຕິ"
ບັນດາທ່ານທັງ ໓ ເຫຼົ່ານັ້ນ
ຜູ້ໜຶ່ງຄົງເກີດໃນໝູ່ຄົນທັນຢູ່ໃນພົບນີ້
ອີກ ໒ ທ່ານດຳເນີນຕາມທາງສຳໂພທິ
ເພາະເປັນຜູ້ມີຈິດໝັ້ນຄົງ ຍ່ອມເຍາະເຍີ້ຍເທວະໂລກໄດ້
ການປະກາດທຳ ໃນພຣະສາດສະໜານີ້ເປັນແນວນີ້
ບໍ່ມີພຣະສາວົກອົງໃດຈະສົງໄສຫຍັງ
ໃນການປະກາດທຳນັ້ນເລີຍ
ພວກຂ້າພຣະອົງ ຂໍນອບນ້ອມພຣະຊິນນະພຸດທະເຈົ້າ
ຜູ້ຊຶ່ງເປັນຈອມຄົນ ຊຶ່ງຂ້າມໂອຄະໄດ້
ຊຶ່ງຕັດຄວາມສົງໄສໄດ້ແລ້ວ

ບັນດາຄົນທັນ ໓ ຕົນນັ້ນ
໔ ຕົນຮູ້ທຳອັນໃດ ຂອງພຣະອົງແລ້ວ
ເຖິງຄວາມເປັນຜູ້ວິເສດ ໄປເກີດໃນໝູ່ພົມຊັ້ນພົມປຸໂຣຫິຕາ
ບັນລຸຄຸນວິເສດແລ້ວ
ທ່ານຜູ້ນິຣະທຸກ ຂໍປະທານອະໂຣກາດ
ເຖິງພວກຂ້າພຣະອົງ ກໍມາເພື່ອບັນລຸທຳນັ້ນ
ຫາກພຣະຜູ້ມີພຣະພາກເຈົ້າ ຊົງປະທານອະໂຣກາດ
ກໍຈະຂໍທູນຖາມບັນຫາ"

[໓໕໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິວ່າ "ທ້າວສັກກະຊົງເປັນຜູ້ບໍລິສຸດມາດົນນານ ຈະຕັດຖາມບັນຫາກັບເຮົາ ກໍຈະຕັດຖາມທຸກຢ່າງ ທີ່ປະກອບດ້ວຍປະໂຫຍດຈະບໍ່ຕັດຖາມບັນຫາ ທີ່ບໍ່ປະກອບດ້ວຍປະໂຫຍດ ແລະ ພຣະອົງຈະຊົງເຂົ້າໃຈທີ່ເຮົາຕອບໄດ້ທັນທີ"

[໓໕໖] ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ້າວສັກກະຜູ້ເປັນຈອມແຫ່ງເທບເປັນພຣະຄາຖາວ່າ

"ດູຣາ ວາສະວະ ພຣະອົງຊົງປາຖະໜາສິ່ງໃດໄວ້ ໃນພຣະຫະໄທ
ກໍໂຜດຖາມບັນຫານັ້ນ ກັບອາດຕະມາເທີ້ນ
ອາດຕະມາ ຈະແກ້ບັນຫານັ້ນ ໃຫ້ເຖິງທີ່ສຸດແດ່ພຣະອົງ"

**ພານະວານທີ ໑ ຈົບ**

[໓໕໗] ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງປະທານພຣະອະໂຣກາດແລ້ວ ທ້າວສັກກະຜູ້ເປັນຈອມແຫ່ງເທບ ໄດ້ທູນຖາມບັນຫາຂໍ້ທີ ໑ ນີ້ວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ພວກເທບມະນຸດອະສູນ ນາກ ຄົນທັນ ແລະ ສັດເຫຼົ່າອື່ນອີກຈຳນວນຫຼາຍ ຕ່າງກໍມີຄວາມປາຖະໜາແນວນີ້ວ່າ "ຂໍພວກເຮົາຈົ່ງເປັນຜູ້ບໍ່ມີເວນ ຈົ່ງເປັນຜູ້ບໍ່ຕ້ອງຖືກລົງໂທດ ຈົ່ງເປັນຜູ້ບໍ່ມີສັດຕູ ຈົ່ງເປັນຜູ້ບໍ່ຖືກບຽດບຽນ ຈົ່ງເປັນຜູ້ບໍ່ຈອງເວນກັນຢູ່ເທີ້ນ" ແຕ່ ເພາະມີຫຍັງເປັນເຄື່ອງຜູກມັດ ພວກເຂົາຈຶ່ງຍັງຕ້ອງມີເວນ ຕ້ອງຖືກລົງໂທດ ມີສັດຕູ ຖືກບຽດບຽນ ຍັງຈອງເວນກັນຢູ່" ພຣະອົງໄດ້ທູນຖາມບັນຫາແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ພວກເທບ ມະນຸດ ອະສູນ ນາກຄົນທັນ ແລະ ສັດເຫຼົ່າອື່ນອີກເປັນຈຳນວນຫຼາຍ ຕ່າງມີຄວາມປາຖະໜາແນວນີ້ວ່າ "ຂໍພວກເຮົາຈົ່ງເປັນຜູ້ບໍ່ມີເວນ ຈົ່ງເປັນຜູ້ບໍ່ຖືກລົງໂທດ ຈົ່ງເປັນຜູ້ບໍ່ມີສັດຕູ ຈົ່ງເປັນຜູ້ບໍ່ຖືກບຽດບຽນ ຈົ່ງເປັນ

ຜູ້ບໍ່ຈອງເວນກັນຢູ່ເທີ້ນ" ແຕ່ ເພາະມີອິດສາ (ຄວາມຣິດສະຫຍາ) ແລະ ມັດສະຣິຍະ (ຄວາມຂີ້ຖີ່) ເປັນເຄື່ອງຜູກມັດໃຈໄວ້ຢູ່ ພວກເຂົາ ຈຶ່ງຍັງຄົງມີເວນ ຕ້ອງຖືກລົງໂທດ ມີສັດຕູ ຖືກບຽດບຽນ ຈອງເວນກັນຢູ່"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຕອບບັນຫາ ທີ່ທ້າວສັກກະຜູ້ເປັນຈອມແຫ່ງເທບທູນຖາມແນວນີ້ແລ້ວ ທ້າວສັກກະຜູ້ເປັນຈອມແຫ່ງເທບ ມີພຣະຫະໄທຍິນດີ ຊົມຊື່ນ ອະນຸໂມທະນາພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າພຣະອົງບໍ່ມີຄວາມສົງໄສໃນເລື້ອງນີ້ ໝົດຄວາມສົງໄສໃຈແລ້ວ ເພາະໄດ້ຟັງການຕັດຕອບບັນຫາຂອງພຣະຜູ້ມີພຣະພາກເຈົ້າ"

[໓໕໗] ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງຊົມຊື່ນອະນຸໂມທະນາ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າດັ່ງນີ້ແລ້ວ ໄດ້ທູນຖາມບັນຫາໃຫ້ຍິ່ງຂຶ້ນໄປວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ອິດສາ ແລະ ມັດສະຣິຍະ ມີຫຍັງເປັນຕົ້ນເຫດ ມີຫຍັງເປັນເຫດເກີດ ມີຫຍັງເປັນກຳເນີດມີຫຍັງເປັນແດນເກີດ ເມື່ອມີຫຍັງຈຶ່ງມີອິດສາ ແລະ ມັດສະຣິຍະ ເມື່ອບໍ່ມີຫຍັງຈຶ່ງບໍ່ມີອິດສາ ແລະ ມັດສະຣິຍະ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ອິດສາ ແລະ ມັດສະຣິຍະມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກເປັນຕົ້ນເຫດ ມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກເປັນເຫດເກີດມີ ອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກເປັນກຳເນີດ ມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກເປັນແດນເກີດ ເມື່ອມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກ ຈຶ່ງມີອິດສາ ແລະ ມັດສະຣິຍະ ເມື່ອບໍ່ມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກ ຈຶ່ງບໍ່ມີອິດສາ ແລະ ມັດສະຣິຍະ"

ພຣະອົງທູນຖາມວ່າ "ອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກມີຫຍັງເປັນຕົ້ນເຫດມີຫຍັງເປັນເຫດເກີດ ມີຫຍັງເປັນກຳເນີດ ມີຫຍັງເປັນແດນເກີດ ເມື່ອມີຫຍັງຈຶ່ງມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກ ເມື່ອບໍ່ມີຫຍັງຈຶ່ງບໍ່ມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກມີສັນທະເປັນຕົ້ນເຫດ ມີສັນທະເປັນເຫດເກີດ ມີສັນທະເປັນກຳເນີດ ມີສັນທະເປັນແດນເກີດ ເມື່ອມີສັນທະຈຶ່ງມີອາລົມອັນເປັນທີ່ຮັກ ແລະ ບໍ່ເປັນທີ່ຮັກ ເມື່ອບໍ່ມີສັນທະ ຈຶ່ງບໍ່ມີອາລົມອັນເປັນທີ່ຮັກແລະ ບໍ່ເປັນທີ່ຮັກ"

ພຣະອົງທູນຖາມວ່າ "ສັນທະ ມີຫຍັງເປັນຕົ້ນເຫດ ມີຫຍັງເປັນເຫດເກີດ ມີຫຍັງເປັນກຳເນີດ ມີຫຍັງເປັນແດນເກີດ ເມື່ອມີຫຍັງຈຶ່ງມີສັນທະ ເມື່ອບໍ່ມີຫຍັງຈຶ່ງບໍ່ມີສັນທະ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສັນທະມີວິຕົກເປັນຕົ້ນເຫດ ມີວິຕົກເປັນເຫດເກີດມີວິຕົກເປັນກຳເນີດ ມີວິຕົກເປັນແດນເກີດ ເມື່ອມີວິຕົກຈຶ່ງມີສັນທະ ເມື່ອບໍ່ມີວິຕົກຈຶ່ງບໍ່ມີສັນທະ"

ພຣະອິງທູນຖາມວ່າ "ວິຕົກມີຫຍັງເປັນຕົ້ນເຫດ ມີຫຍັງເປັນເຫດເກີດ ມີຫຍັງເປັນກຳເນີດ ມີຫຍັງເປັນແດນເກີດ ເມື່ອມີຫຍັງຈຶ່ງມີວິຕົກ ເມື່ອບໍ່ມີຫຍັງຈຶ່ງບໍ່ມີວິຕົກ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວິຕົກມີແງ່ຕ່າງແຫ່ງປະປັນຈະສັນຍາ ເປັນຕົ້ນເຫດມີແງ່ຕ່າງແຫ່ງປະປັນຈະສັນຍາເປັນເຫດເກີດ ມີແງ່ຕ່າງແຫ່ງປະປັນຈະສັນຍາເປັນກຳເນີດ ມີແງ່ຕ່າງແຫ່ງ ປະປັນຈະສັນຍາເປັນແດນເກີດ ເມື່ອມີແງ່ຕ່າງແຫ່ງປະປັນຈະສັນຍາ ຈຶ່ງມີວິຕົກເມື່ອບໍ່ມີແງ່ຕ່າງແຫ່ງ ປະປັນຈະສັນຍາ ຈຶ່ງບໍ່ມີວິຕົກ"

ພຣະອິງທູນຖາມວ່າ "ຂ້າແດ່ ພຣະອິງຜູ້ນິຣະທຸກ ພິກຂຸປະຕິບັດແນວໃດ ຈຶ່ງຈະຊື່ວ່າປະຕິບັດຕາມຂໍ້ປະຕິບັດອັນສົມຄວນ ແລະ ດຳເນີນໄປສູ່ຄວາມດັບແງ່ຕ່າງແຫ່ງປະປັນຈະສັນຍາ"

## ເລື້ອງເວທະນາກັມມັດຖານ

[໓໕໙] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາຈອມເທບ ເຮົາກ່າວໂສມະນັດໄວ້ ໒ ຢ່າງ ຄື ໂສມະນັດທີ່ຄວນເສບ ແລະ ໂສມະນັດທີ່ບໍ່ຄວນເສບ ກ່າວໂທມະນັດໄວ້ ໒ ຢ່າງ ຄື ໂທມະນັດທີ່ຄວນເສບ ແລະ ໂທມະນັດທີ່ບໍ່ຄວນເສບ ແລະ ກ່າວອຸເປກຂາໄວ້ ໒ ຢ່າງ ຄືອຸເປກຂາທີ່ຄວນເສບ ແລະ ອຸເປກຂາທີ່ບໍ່ຄວນເສບ

[໓໖໐] ເຮົາກ່າວໄວ້ແນວນີ້ແລວ່າ "ດູຣາ ຈອມເທບ ເຮົາກ່າວໂສມະນັດໄວ້ ໒ ຢ່າງ ຄື ໂສມະນັດທີ່ຄວນເສບ ແລະ ໂສມະນັດທີ່ບໍ່ຄວນເສບ" ເພາະອາໄສເຫດຫຍັງເຮົາຈຶ່ງກ່າວໄວ້ແນວນັ້ນ ບັນດາໂສມະນັດແນວນັ້ນ ໂສມະນັດໃດບຸກຄົນຮູ້ວ່າ "ເມື່ອເຮົາເສບໂສມະນັດນີ້ແລອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ" ໂສມະນັດແນວນີ້ເປັນໂສມະນັດທີ່ບໍ່ຄວນເສບ ບັນດາໂສມະນັດ ໒ ຢ່າງນັ້ນ ໂສມະນັດໃດບຸກຄົນຮູ້ວ່າ "ເມື່ອເຮົາເສບໂສມະນັດນີ້ແລ ອະກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ໂສມະນັດແນວນີ້ເປັນໂສມະນັດທີ່ຄວນເສບ ໃນໂສມະນັດນັ້ນ ໂສມະນັດໃດມີວິຕົກ ມີວິຈານ ແລະ ໂສມະນັດໃດບໍ່ມີວິຕົກ ບໍ່ມີວິຈານ ບັນດາໂສມະນັດ ໒ ຢ່າງນັ້ນ ໂສມະນັດທີ່ບໍ່ມີວິຕົກ ບໍ່ມີວິຈານປະນີດກວ່າ"

ຂໍ້ທີ່ເຮົາກ່າວວ່າ "ດູຣາ ຈອມເທບ ເຮົາກ່າວໂສມະນັດໄວ້ ໒ ຢ່າງ ຄື ໂສມະນັດທີ່ຄວນເສບ ແລະ ໂສມະນັດທີ່ບໍ່ຄວນເສບ" ເຮົາກ່າວເພາະອາໄສເຫດນີ້ແລ

[໓໖໑] ເຮົາກ່າວໄວ້ແນວນີ້ແລ ວ່າ "ດູຣາ ຈອມເທບ ເຮົາກ່າວໂທມະນັດໄວ້ ໒ ຢ່າງ ຄື ໂທມະນັດທີ່ຄວນເສບ ແລະ ໂທມະນັດທີ່ບໍ່ຄວນເສບ" ເພາະອາໄສເຫດຫຍັງ ເຮົາຈຶ່ງກ່າວໄວ້

ແນວນັ້ນ ບັນດາໂທມະນັດ ໒ ຢ່າງນັ້ນ ໂທມະນັດໃດບຸກຄົນຮູ້ວ່າ "ເມື່ອເຮົາເສບໂທມະນັດນີ້ແລ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ" ໂທມະນັດແນວນີ້ເປັນໂທມະນັດທີ່ບໍ່ຄວນເສບ ບັນດາໂທມະນັດ ໒ ຢ່າງນັ້ນ ໂທມະນັດໃດບຸກຄົນຮູ້ວ່າ "ເມື່ອເຮົາເສບໂທມະນັດນີ້ແລ ອະກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ໂທມະນັດແນວນີ້ເປັນໂທມະນັດທີ່ຄວນເສບ ໃນໂທມະນັດນັ້ນ ໂທມະນັດໃດມີວິຕົກມີວິຈານ ແລະໂທມະນັດໃດບໍ່ມີວິຕົກບໍ່ມີວິຈານ ບັນດາໂທມະນັດ ໒ ຢ່າງນັ້ນ ໂທມະນັດທີ່ບໍ່ມີວິຕົກບໍ່ມີວິຈານປະນີດກວ່າ ຂໍ້ທີ່ເຮົາກ່າວວ່າ "ດູຣາ ຈອມເທບ ເຮົາກ່າວໂທມະນັດໄວ້ ໒ ຢ່າງ ຄື ໂທມະນັດທີ່ຄວນເສບ ແລະໂທມະນັດທີ່ບໍ່ຄວນເສບ" ເຮົາກ່າວເພາະອາໄສເຫດນີ້

[໓໖໒] ເຮົາກ່າວໄວ້ແນວນີ້ແລວ່າ "ດູຣາ ຈອມເທບ ເຮົາກ່າວອຸເປກຂາໄວ້ ໒ ຢ່າງ ຄືອຸເປກຂາທີ່ຄວນເສບ ແລະ ອຸເປກຂາທີ່ບໍ່ຄວນເສບ" ເພາະອາໄສເຫດຫຍັງ ເຮົາຈຶ່ງກ່າວໄວ້ແນວນັ້ນ ບັນດາອຸເບກຂາ ໒ ຢ່າງນັ້ນ ອຸເປກຂາໃດບຸກຄົນຮູ້ວ່າ "ເມື່ອເຮົາເສບອຸເປກຂານີ້ແລ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ" ອຸເປກຂາແນວນີ້ ເປັນອຸເປກຂາທີ່ບໍ່ຄວນເສບ ບັນດາອຸເບກຂາ ໒ ຢ່າງນັ້ນ ອຸເປກຂາໃດບຸກຄົນຮູ້ວ່າ "ເມື່ອເຮົາເສບອຸເປກຂານີ້ ອະກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ອຸເປກຂາແນວນີ້ເປັນອຸເປກຂາທີ່ຄວນເສບ ໃນອຸເປກຂານັ້ນ ອຸເປກຂາໃດມີວິຕົກມີວິຈານ ແລະ ອຸເປກຂາໃດບໍ່ມີວິຕົກບໍ່ມີວິຈານ ບັນດາອຸເບກຂາ ໒ ຢ່າງນັ້ນ ອຸເປກຂາທີ່ບໍ່ມີວິຕົກບໍ່ມີວິຈານປະນີດກວ່າ" ຂໍ້ທີ່ເຮົາກ່າວໄວ້ວ່າ "ດູຣາ ຈອມເທບ ເຮົາກ່າວອຸເປກຂາໄວ້ ໒ ຢ່າງ ຄື ອຸເປກຂາທີ່ຄວນເສບ ແລະ ອຸເປກຂາທີ່ບໍ່ຄວນເສບ" ເຮົາກ່າວເພາະອາໄສເຫດນີ້ແລ

[໓໖໓] ດູຣາຈ ອມເທບ ພິກຂຸປະຕິບັດແນວນີ້ແລ ຈຶ່ງຈະຊື່ວ່າປະຕິບັດຕາມຂໍ້ປະຕິບັດອັນສົມຄວນ ແລະ ດຳເນີນໄປສູ່ຄວາມດັບແງ່ຕ່າງແຫ່ງປະປັນຈະສັນຍາ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຕອບບັນຫາ ທີ່ທ້າວສັກກະຜູ້ເປັນຈອມແຫ່ງເທບທູນຖາມແນວນີ້ແລ້ວ ທ້າວສັກກະຜູ້ເປັນຈອມແຫ່ງເທບມີພຣະທະໄທຍິນດີ ຊົມຊື່ນ ອະນຸໂມທະນາພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າພຣະອົງ ບໍ່ມີຄວາມສົງໄສໃນເລື້ອງນີ້ ໝົດຄວາມສົງໄສໃນໃຈແລ້ວ ເພາະໄດ້ຟັງການຕັດຕອບບັນຫາຂອງພຣະຜູ້ມີພຣະພາກເຈົ້າ"

# ປາຕິໂມກຂະສັງວອນ

## (ສັງລວມໃນປາຕິໂມກ)

[໓໖໔] ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງຊົມຊື່ນອະນຸໂມທະນາ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ້ວ ໄດ້ທູນຖາມບັນຫາໃຫ້ຍິ່ງຂຶ້ນໄປວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ພິກຂຸປະຕິບັດແນວໃດ? ຈຶ່ງຈະຊື່ວ່າ ປະຕິບັດເພື່ອສັງລວມໃນປາຕິໂມກ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ເຮົາກ່າວກາຍະສະມາຈານ (ຄວາມປະພຶດທາງກາຍ) ໄວ້ ໒ ຢ່າງ ຄື ກາຍະສະມາຈານທີ່ຄວນເສບ ແລະ ກາຍສະມາຈານທີ່ບໍ່ຄວນເສບ ກ່າວວະຈີສະມາຈານ (ຄວາມປະພຶດທາງວາຈາ) ໄວ້ ໒ ຢ່າງ ຄື ວະຈີສະມາຈານທີ່ຄວນເສບ ແລະ ວະຈີສະມາຈານທີ່ບໍ່ຄວນເສບ ແລະ ກ່າວປະຣິເຍສະນາ (ການສະແຫວງຫາ) ໄວ້ ໒ ຢ່າງ ຄື ປະຣິເຍສະນາທີ່ຄວນເສບ ແລະ ປະຣິເຍສະນາທີ່ບໍ່ຄວນເສບ ເຮົາກ່າວໄວ້ແນວນີ້ແລວ່າ" ດູຣາ ຈອມເທບ ເຮົາກ່າວກາຍສະມາຈານໄວ້ ໒ ຢ່າງ ຄື ກາຍະ ສະມາຈານທີ່ຄວນເສບ ແລະ ກາຍສະມາຈານທີ່ບໍ່ຄວນເສບ" ເພາະອາໄສເຫດຫຍັງ? ເຮົາຈຶ່ງກ່າວໄວ້ແນວນັ້ນ ບັນດາກາຍສະມາຈານ ໒ ຢ່າງນັ້ນ ກາຍສະມາຈານໃດບຸກຄົນຮູ້ວ່າ "ເມື່ອເຮົາເສບກາຍສະມາຈານນີ້ແລ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ" ກາຍສະມາຈານແນວນີ້ ເປັນກາຍສະມາຈານທີ່ບໍ່ຄວນເສບ ບັນດາກາຍສະມາຈານ ໒ ຢ່າງນັ້ນ ກາຍສະມາຈານໃດບຸກຄົນຮູ້ວ່າ "ເມື່ອເຮົາເສບກາຍສະມາຈານນີ້ແລ້ວ ອະກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ກາຍສະມາຈານແນວນີ້ເປັນກາຍສະມາຈານທີ່ຄວນເສບ

ຂໍ້ທີ່ເຮົາກ່າວວ່າ "ດູຣາ ຈອມເທບ ເຮົາກ່າວກາຍສະມາຈານໄວ້ ໒ ຢ່າງ ຄື ກາຍສະມາຈານທີ່ຄວນເສບ ແລະ ກາຍສະມາຈານທີ່ບໍ່ຄວນເສບ" ເຮົາກ່າວເພາະອາໄສເຫດນີ້ ເຮົາກ່າວໄວ້ແນວນີ້ແລວ່າ "ດູຣາ ຈອມເທບ ເຮົາກ່າວວະຈີສະມາຈານໄວ້ ໒ ຢ່າງ ຄື ວະຈີສະມາຈານທີ່ຄວນເສບ ແລະ ວະຈີສະມາຈານທີ່ບໍ່ຄວນເສບ" ເພາະອາໄສເຫດຫຍັງເຮົາຈຶ່ງກ່າວໄວ້ແນວນັ້ນ ບັນດາວະຈີສະມາຈານ ໒ ຢ່າງນັ້ນ ວະຈີສະມາຈານໃດບຸກຄົນຮູ້ວ່າ "ເມື່ອເຮົາເສບວະຈີສະມາຈານນີ້ແລ້ວ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ" ວະຈີສະມາຈານແນວນີ້ເປັນວະຈີສະມາຈານທີ່ບໍ່ຄວນເສບ ບັນດາວະຈີສະມາຈານ ໒ ຢ່າງນັ້ນ ວະຈີສະມາຈານໃດບຸກຄົນຮູ້ວ່າ "ເມື່ອເຮົາເສບວະຈີສະມາຈານນີ້ແລ້ວ ອະກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ວະຈີສະມາຈານແນວນີ້ ເປັນວະຈີສະມາຈານທີ່ຄວນເສບ

ຂໍ້ທີ່ເຮົາກ່າວວ່າ "ດູຣາ ຈອມເທບ ເຮົາກ່າວວະຈີສະມາຈານໄວ້ ໒ ຢ່າງ ຄື ວະຈີສະມາຈານທີ່ຄວນເສບ ແລະ ວະຈີສະມາຈານທີ່ບໍ່ຄວນເສບ" ເຮົາກ່າວເພາະອາໄສເຫດນີ້ ເຮົາກ່າວໄວ້

ແນວນີ້ແລວ່າ "ດູຣາ ຈອມເທບ ເຮົາກ່າວປະຣິເຍສະນາໄວ້ ໒ ຢ່າງ ຄືປະຣິເຍສະນາທີ່ຄວນເສບ ແລະ ປະຣິເຍສະນາທີ່ບໍ່ຄວນເສບ" ເພາະອາໄສເຫດຫຍັງ? ເຮົາຈຶ່ງກ່າວໄວ້ແນວນັ້ນ ບັນດາປະຣິເຍສະນາ ໒ ຢ່າງນັ້ນ ປະຣິເຍສະນາໃດບຸກຄົນຮູ້ວ່າ "ເມື່ອເຮົາເສບປະຣິເຍສະນານີ້ແລ້ວ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ" ປະຣິເຍສະນານີ້ເປັນປະຣິເຍສະນາທີ່ບໍ່ຄວນເສບ ບັນດາປະຣິເຍສະນາ ໒ ຢ່າງນັ້ນ ປະຣິເຍສະນາໃດບຸກຄົນຮູ້ວ່າ "ເມື່ອເຮົາເສບປະຣິເຍສະນານີ້ແລ້ວ ອະກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ປະຣິເຍສະນາແນວນີ້ເປັນປະຣິເຍສະນາທີ່ຄວນເສບ

ຂໍ້ທີ່ເຮົາກ່າວວ່າ "ດູຣາ ຈອມເທບ ເຮົາກ່າວປະຣິເຍສະນາໄວ້ ໒ ຢ່າງ ຄື ປະຣິເຍສະນາທີ່ຄວນເສບ ແລະ ປະຣິເຍສະນາທີ່ບໍ່ຄວນເສບ" ເຮົາກ່າວເພາະອາໄສເຫດນີ້

ດູຣາ ຈອມເທບພິກຂຸປະຕິບັດແນວນີ້ແລ ຈຶ່ງຈະຊື່ວ່າປະຕິບັດເພື່ອສັງລວມໃນປາຕິໂມກ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຕອບບັນຫາ ທີ່ທ້າວສັກກະຜູ້ເປັນຈອມແຫ່ງເທບທູນຖາມແນວນີ້ແລ້ວ ທ້າວສັກກະຜູ້ເປັນຈອມແຫ່ງເທບ ມີພຣະຫະໄທຍິນດີ ຊົມຊື່ນ ອະນຸໂມທະນາພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ" ຂ້າພຣະອົງ ບໍ່ມີຄວາມສົງໄສໃນເລື້ອງນີ້ ໝົດຄວາມສົງໄສໃນໃຈແລ້ວ ເພາະໄດ້ຟັງການຕັດຕອບບັນຫາຂອງພຣະຜູ້ມີພຣະພາກເຈົ້າ"

## ອິນຊີສັງວອນ

### (ສັງລວມອິນຊີ)

[໓໖໕] ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງຊົມຊື່ນອະນຸໂມທະນາພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ້ວ ໄດ້ທູນຖາມບັນຫາໃຫ້ຍິ່ງຂຶ້ນໄປວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ພິກຂຸປະຕິບັດແນວໃດ ຈຶ່ງຈະຊື່ວ່າປະຕິບັດເພື່ອສັງລວມອິນຊີ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ເຮົາກ່າວຣູບທີ່ເພິ່ງຮູ້ແຈ້ງທາງຕາໄວ້ ໒ ຢ່າງ ຄື ຣູບທີ່ຄວນເສບ ແລະ ຣູບທີ່ບໍ່ຄວນເສບ ກ່າວສຽງທີ່ເພິ່ງຮູ້ແຈ້ງທາງຫູໄວ້ ໒ ຢ່າງ ຄື ສຽງທີ່ຄວນເສບ ແລະ ສຽງທີ່ບໍ່ຄວນເສບ ກ່າວກິ່ນທີ່ເພິ່ງຮູ້ແຈ້ງທາງດັງໄວ້ ໒ ຢ່າງ ຄື ກິ່ນທີ່ຄວນເສບ ແລະ ກິ່ນທີ່ບໍ່ຄວນເສບ ກ່າວຣົດທີ່ເພິ່ງຮູ້ແຈ້ງທາງລີ້ນໄວ້ ໒ ຢ່າງ ຄື ຣົດທີ່ຄວນເສບ ແລະ ຣົດທີ່ບໍ່ຄວນເສບ ກ່າວໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍໄວ້ ໒ ຢ່າງ ຄື ໂຜດຖັບພະທີ່ຄວນເສບ ແລະ ໂຜດຖັບພະທີ່ບໍ່ຄວນເສບ ກ່າວທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈໄວ້ ໒ ຢ່າງ ຄື ທຳມາຣົມທີ່ຄວນເສບ ແລະ ທຳມາຣົມທີ່ບໍ່ຄວນເສບ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ທ້າວສັກກະຈອມເທບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງ ຍ່ອມຮູ້ຊັດແຈ້ງເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຊົງຕັດໄວ້ໂດຍຫຍໍ້ນີ້ ໄດ້ໂດຍພິດສະດານແນວນີ້ວ່າ "ເມື່ອບຸກຄົນເສບຮູບທີ່ເພິ່ງຮູ້ແຈ້ງທາງຕາ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ ຮູບທີ່ເພິ່ງຮູ້ແຈ້ງທາງຕາແນວນີ້ເປັນຮູບທີ່ບໍ່ຄວນເສບ ເມື່ອບຸກຄົນເສບຮູບທີ່ເພິ່ງຮູ້ແຈ້ງທາງຕາ ກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ຮູບທີ່ເພິ່ງຮູ້ແຈ້ງທາງຕາແນວນີ້ເປັນຮູບທີ່ຄວນເສບ ເມື່ອບຸກຄົນເສບສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯລฯ ເມື່ອບຸກຄົນເສບກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ฯລฯ ເມື່ອບຸກຄົນເສບຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ ເມື່ອບຸກຄົນເສບໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ฯລฯ ເມື່ອບຸກຄົນເສບທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ฯລฯ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມລົງ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈແນວນີ້ເປັນທຳມາຣົມທີ່ບໍ່ຄວນເສບ ເມື່ອບຸກຄົນເສບທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ກຸສົນທຳທັງຫຼາຍເສື່ອມລົງ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເປັນທຳມາຣົມທີ່ຄວນເສບ" ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍ່ອມຮູ້ຊັດແຈ້ງ ເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຊົງຕັດໄວ້ໂດຍຫຍໍ້ນີ້ ໄດ້ໂດຍພິດສະດານແນວນີ້ແລ ຈຶ່ງບໍ່ມີຄວາມສົງໄສໃນເລື້ອງນີ້ ໝົດຄວາມສົງໄສໃນໃຈແລ້ວ ເພາະໄດ້ຟັງການຕັດຕອບບັນຫາຂອງພຣະຜູ້ມີພຣະພາກເຈົ້າ"

[໓໖໖] ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊື່ນຊົມ ອະນຸໂມທະນາ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າດັ່ງນີ້ແລ້ວ ໄດ້ທູນຖາມບັນຫາໃຫ້ຍິ່ງຂຶ້ນໄປວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກສະມະນະພາມທັງໝົດມີວາທະ (ຫຼັກການ) ຢ່າງດຽວກັນ ມີສິນ (ຂໍ້ປະຕິບັດ) ຢ່າງດຽວກັນ ມີສັນທະ (ລັດທິ) ຢ່າງດຽວກັນ ມີອັດໄຊສານະ (ຈຸດໝາຍ) ຢ່າງດຽວກັນບໍ່ນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ສະມະນະພາມທັງໝົດ ບໍ່ມີວາທະຢ່າງດຽວກັນ ບໍ່ມີສິນຢ່າງດຽວກັນ ບໍ່ມີສັນທະຢ່າງດຽວກັນ ບໍ່ມີອັດໄຊສານະຢ່າງດຽວກັນ"

ພຣະອົງທູນຖາມວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ເພາະເຫດໃດ ສະມະນະພາມທັງໝົດຈຶ່ງບໍ່ມີວາທະຢ່າງດຽວກັນ ບໍ່ມີສິນຢ່າງດຽວກັນ ບໍ່ມີສັນທະຢ່າງດຽວກັນ ບໍ່ມີອັດໄຊສານະຢ່າງດຽວກັນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ໂລກມີທາດຫຼາຍຢ່າງ ມີທາດຕ່າງກັນ ໃນໂລກທີ່ມີທາດຫຼາຍຢ່າງ ມີທາດຕ່າງກັນນັ້ນ ເຫຼົ່າສັດຍຶດໝັ້ນທາດໃດ ໆ ຢູ່ ກໍຍ່ອມຍຶດໝັ້ນທາດນັ້ນ ໆ ດ້ວຍແຮງ ແລະ ຄວາມຍຶດໝັ້ນຢູ່ວ່າ "ນີ້ທີ່ນັ້ນຈິງແທ້ ຢ່າງອື່ນບໍ່ຈິງ" ເພາະ

ເຫດນັ້ນ ສະມະນະພາມທັງໝົດ ຈຶ່ງບໍ່ມີວາທະຢ່າງດຽວກັນ ບໍ່ມີສີນຢ່າງດຽວກັນ ບໍ່ມີສັນທະຢ່າງດຽວກັນ ບໍ່ມີອັດໄຊສານະຢ່າງດຽວກັນ"

ພຣະອົງທູນຖາມວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ສະມະນະພາມທັງໝົດມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີບ່ອນສິ້ນສຸດ ອັນສູງສຸດຫຼືບໍ່?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ສະມະນະພາມທັງໝົດບໍ່ມີຄວາມສຳເລັດສູງສຸດ ບໍ່ມີຄວາມກະເສມຈາກໂຍຄະສູງສຸດ ບໍ່ປະພຶດພົມມະຈັນເຖິງທີ່ສຸດ ບໍ່ມີບ່ອນສິ້ນສຸດອັນສູງສຸດ"

ພຣະອົງທູນຖາມວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ເພາະເຫດໃດ? ສະມະນະພາມທັງໝົດ ຈຶ່ງບໍ່ມີຄວາມສຳເລັດສູງສຸດ ບໍ່ມີຄວາມກະເສມຈາກໂຍຄະສູງສຸດ ບໍ່ປະພຶດພົມມະຈັນເຖິງທີ່ສຸດ ບໍ່ມີບ່ອນສິ້ນສຸດ ອັນສູງສຸດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ດູຣາ ຈອມເທບ ພິກຂຸທັງຫຼາຍຜູ້ຫຼຸດພົ້ນເພາະສັງຕັນຫາທໍ່ນັ້ນ ຈຶ່ງຈະມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີບ່ອນສິ້ນສຸດ ອັນສູງສຸດ ເພາະເຫດນັ້ນ ສະມະນະພາມທັງໝົດ ຈຶ່ງບໍ່ມີຄວາມສຳເລັດສູງສຸດ ບໍ່ມີຄວາມກະເສມຈາກໂຍຄະສູງສຸດ ບໍ່ປະພຶດພົມມະຈັນເຖິງທີ່ສຸດ ບໍ່ມີບ່ອນສຸດອັນສູງສຸດ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຕອບບັນຫາ ທີ່ທ້າວສັກກະຜູ້ເປັນຈອມແຫ່ງເທບທູນຖາມແນວນີ້ແລ້ວ ທ້າວສັກກະຜູ້ເປັນຈອມແຫ່ງເທບມີພຣະທະໄທຍິນດີ ຊື່ນຊົມ ອະນຸໂມທະນາພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າພຣະອົງບໍ່ມີຄວາມສົງໄສໃນເລື້ອງນີ້ ໝົດຄວາມສົງໄສໃນໃຈແລ້ວ ເພາະໄດ້ຟັງການຕັດຕອບບັນຫາຂອງພຣະຜູ້ມີພຣະພາກເຈົ້າ"

[໓໕໗] ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງຊື່ນຊົມ ອະນຸໂມທະນາພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຄວາມຫວັ່ນໄຫວເປັນພະຍາດ ຄວາມຫວັ່ນໄຫວເປັນຫົວຝີ ຄວາມຫວັ່ນໄຫວເປັນລູກສອນ ຕັນຍ່ອມລາກແກ່ບຸຣຸດຜູ້ເປັນຢູ່ແນວນີ້ ໄປເພື່ອບັງເກີດໃນພົບນັ້ນ ໆ ສະນັ້ນ ບຸຣຸດນີ້ຈຶ່ງເຖິງຖານະສູງແດ່ ຕ່ຳແດ່

ບັນຫາທີ່ຂ້າພຣະອົງຫາຄຳຕອບບໍ່ໄດ້ ແມ່ນຈະຖາມໃນສະມະນະພາມເຫຼົ່າອື່ນ ນອກພຣະທຳວິໄນນີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບແກ່ຂ້າພຣະອົງແລ້ວ ແລະ ໄດ້ຊົງຖອນລູກ

ສອນ ຄື ຄວາມສົງໄສ ແລະ ຄວາມເຄືອບແຄງທີ່ນອນເນື່ອງຢູ່ໃນໃຈຂອງຂ້າພຣະອົງມາໂດນນານແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ດູຣາ ຈອມເທບ ພຣະອົງຊົງຈຳໄດ້ຫຼືບໍ່ວ່າ ບັນຫາຂໍ້ນີ້ໄດ້ ຕັດຖາມສະມະນະພາມເຫຼົ່າອື່ນມາແດ່ແລ້ວ"

ພຣະອົງທູນຕອບວ່າ "ຂ້າພຣະອົງຍັງຈຳໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ທ່ານເຫຼົ່ານັ້ນ ຕອບວ່າແນວໃດ ຫາກບໍ່ໜັກພຣະທະໄທເຊີນພຣະອົງຕັດເທີ້ນ"

ພຣະອົງທູນຕອບວ່າ "ໃນສະຖານທີ່ທີ່ມີພຣະຜູ້ມີພຣະພາກເຈົ້າ ຫຼື ຜູ້ປຽບດັ່ງພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຂ້ານ້ອຍບໍ່ໜັກໃຈເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ເຊີນພຣະອົງຕັດເທີ້ນຈອມເທບ"

ພຣະອົງທູນຕອບວ່າ "ຂ້າພຣະອົງ ເຂົ້າໄປຫາສະມະນະພາມທີ່ເຂົ້າໃຈວ່າ "ເປັນຜູ້ຢູ່ປ່າຢູ່ໃນເສນາສະນະອັນສະຫງັດ" ແລ້ວຖາມບັນຫາເຫຼົ່ານີ້ ທ່ານເຫຼົ່ານັ້ນ ເມື່ອຖືກຖາມກໍຕອບບໍ່ໄດ້ ກັບຍ້ອນຖາມຂ້າພຣະອົງວ່າ "ທ່ານຊື່ຫຍັງ" ເມື່ອຖືກຍ້ອນຖາມ ຂ້າພຣະອົງຈຶ່ງຕອບວ່າ "ເຮົາຊື່ທ້າວສັກກະຜູ້ເປັນຈອມແຫ່ງເທບ"

ທ່ານເຫຼົ່ານັ້ນ ກໍຍັງຖາມຕໍ່ໄປອີກວ່າ "ທ່ານທຳກຳຫຍັງໄວ້ ຈຶ່ງເຖິງຖານະອັນນີ້ນໍ" ຂ້າພຣະອົງ ຈຶ່ງສະແດງທຳຕາມທີ່ໄດ້ຟັງ ທີ່ໄດ້ຮຽນມາ ທ່ານເຫຼົ່ານັ້ນມີໃຈຍິນດີດ້ວຍເຫດພຽງທໍ່ນີ້ວ່າ "ພວກເຮົາໄດ້ເຫັນທ້າວສັກກະຜູ້ເປັນຈອມແຫ່ງເທບ ແລະ ພຣະອົງໄດ້ຕັດຕອບບັນຫາທີ່ພວກເຮົາຖາມ"

ທ່ານເຫຼົ່ານັ້ນ ຍອມເປັນສາວົກຂອງຂ້າພຣະອົງ ສ່ວນຂ້າພຣະອົງບໍ່ຍອມເປັນສາວົກຂອງທ່ານເຫຼົ່ານັ້ນ ແຕ່ບັດນີ້ ຂ້າພຣະອົງເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນພຣະໂສດາບັນບໍ່ມີທາງຕ່ຳຕ້ອຍ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ"

## ເລື້ອງການໄດ້ໂສມະນັດ

[໓໖໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ດູຣາ ຈອມເທບ ພຣະອົງຍັງຊົງຈຳການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້ກ່ອນນີ້ໄດ້ຫຼືບໍ່?"

ພຣະອົງທູນຕອບວ່າ "ຂ້າພຣະອົງຍັງຈຳການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້ກ່ອນນີ້ໄດ້ຢູ່ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພຣະອົງຍັງຊົງຈຳການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້ ກ່ອນນີ້ໄດ້ວ່າແນວໃດ?"

ພຣະອົງຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງເຄີຍມີມາແລ້ວ ເມື່ອຄັ້ງເກີດສົງຄາມລະຫວ່າງເທບກັບອະສູນ ເຖິງຂັ້ນຮົບເຂົ້າໃກ້ໃນສົງຄາມນັ້ນ ພວກເທບຊະນະ ພວກອະສູນປຣາໄຊ ເມື່ອຂ້າພຣະອົງຊະນະສົງຄາມ ຈຶ່ງມີຄວາມຄິດວ່າ "ບັດນີ້ພວກເທບໃນເທວະໂລກຈະບໍລິໂພກໂອຊາ (ຣົດ) ໒ ປະການຄື ທິບພະຍະໂອຊາ ແລະ ອະສູນໂອຊາ" ການໄດ້ຄວາມຍິນດີການໄດ້ໂສມະນັດ ຂອງຂ້າພຣະອົງນັ້ນ ເປັນທາງມາແຫ່ງທັນຖາວຸດ ເປັນທາງມາແຫ່ງສາດຕາວຸດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະຫງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ ສ່ວນການໄດ້ຄວາມຍິນດີ ການໄດ້ໂສມະນັດຂອງຂ້າພຣະອົງ ເພາະໄດ້ຟັງທຳຂອງພຣະຜູ້ມີພຣະພາກເຈົ້ານັ້ນ ບໍ່ເປັນທາງນຳມາແຫ່ງທັນຖາວຸດ ບໍ່ເປັນທາງນຳມາເຊິ່ງສາດຕາວຸດເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ"

[໓໖໙] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ດູຣາ ຈອມເທບ ພຣະອົງຊົງພິຈາລະນາເຫັນອຳນາດປະໂຫຍດຫຍັງ ຈຶ່ງຊົງປະກາດການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້"

ພຣະອົງຂາບທູນວ່າ "ຂ້າພຣະອົງ ພິຈາລະນາເຫັນອຳນາດປະໂຫຍດ ໖ ປະການຈຶ່ງໄດ້ປະກາດການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້

ຂ້າພຣະອົງ ພິຈາລະນາເຫັນອຳນາດປະໂຫຍດປະການທີ ໑ ນີ້ ວ່າ

"ເມື່ອຂ້າພຣະອົງເກີດເປັນເທບ ດຳຣົງຢູ່ໃນບ່ອນນີ້
ຂ້າພຣະອົງກັບໄດ້ອາຍຸເພີ່ມຂຶ້ນອີກ
ຂ້າແດ່ ພຣະອົງຜູ້ນິຣະທຸກ
ຂໍພຣະອົງຊົງຮູ້ແນວນີ້ເທີ້ນ"

ຈຶ່ງປະກາດການໄດ້ຄວາມຍິນດີການໄດ້ໂສມະນັດແນວນີ້

ຂ້າພຣະອົງ ພິຈາລະນາເຫັນອຳນາດປະໂຫຍດປະການທີ ໒ ນີ້ ວ່າ

"ເມື່ອຂ້າພຣະອົງຈຸຕິຈາກກາຍທິບ
ລະອາຍຸຂອງອະມະນຸດເປັນຜູ້ບໍ່ຫຼົງ
ຈະເກີດໃນຕະກູນທີ່ຂ້າພຣະອົງມີໃຈຍິນດີ"

ຈຶ່ງປະກາດການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້

ຂ້າພຣະອົງ ພິຈາລະນາເຫັນອຳນາດປະໂຫຍດປະການທີ ໓ ນີ້ ວ່າ

"ເມື່ອຂ້າພຣະອົງນັ້ນ ຍິນດີໃນສາດສະໜາ
ຂອງພຣະຜູ້ມີພຣະພາກເຈົ້າ ຜູ້ມີປັນຍາບໍ່ລຸ່ມຫຼົງ
ຂ້າພຣະອົງມີສຳປະຊັນຍະ
ມີສະຕິຢູ່ໂດຍທຳ"

ຈຶ່ງປະກາດການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້

ຂ້າພຣະອົງພິຈາລະນາເຫັນອຳນາດປະໂຫຍດປະການທີ ໔ ນີ້ ວ່າ

"ເມື່ອຂ້າພຣະອົງ ປະພຶດໂດຍທຳກໍຈັກມີສຳໂພທິ
ຂ້າພຣະອົງຈະຮູ້ທົ່ວເຖິງຢູ່
ນັ້ນແລ ຈະເປັນທີ່ສຸດຂອງຂ້າພຣະອົງ"

ຈຶ່ງປະກາດການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້

ຂ້າພຣະອົງພິຈາລະນາເຫັນອຳນາດປະໂຫຍດປະການທີ ໕ ນີ້ ວ່າ

"ເມື່ອຂ້າພຣະອົງ ຈຸຕິຈາກກາຍມະນຸດ
ລະອາຍຸຂອງມະນຸດແລ້ວ ຈັກເກີດເປັນເທບອີກ
ຂ້າພຣະອົງຈະເປັນຜູ້ສູງສຸດໃນເທວະໂລກ"

ຈຶ່ງປະກາດການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້

ຂ້າພຣະອົງພິຈາລະນາເຫັນອຳນາດປະໂຫຍດປະການທີ ໖ ນີ້ ວ່າ

"ເທບເຫຼົ່ານັ້ນ ຊັ້ນອະກະນິດຖະພົບ
ເປັນຜູ້ປະນີດກວ່າ ເປັນຜູ້ມີຍົດ
ໃນພົບສຸດທ້າຍທີ່ດຳເນີນໄປຢູ່
ອະກະນິດຖະພົບນັ້ນ ຈະເປັນບ່ອນຢູ່ຂອງຂ້າພຣະອົງ"

ຈຶ່ງປະກາດການໄດ້ຄວາມຍິນດີ ການໄດ້ໂສມະນັດແນວນີ້

ຂ້າພຣະອົງ ພິຈາລະນາເຫັນອຳນາດປະໂຫຍດ ໓ ປະການນີ້ແລ ຈຶ່ງປະກາດການໄດ້ຄວາມຍິນດີການໄດ້ໂສມະນັດແນວນີ້.

[໓໗໐] ຂ້າພຣະອົງມີຄວາມຄິດຍັງບໍ່ເຖິງທີ່ສຸດ
ມີຄວາມສົງໄສເຄືອບແຄງຢູ່
ທ່ຽວສະແຫວງຫາພຣະຕະຖາຄົດເຈົ້າຢູ່ສັງງການລະນານ
ຂ້າພຣະອົງເຂົ້າໄປຫາສະມະນະ
ທີ່ເຂົ້າໃຈວ່າເປັນຜູ້ຢູ່ງຽບສະຫງົບ
ສຳຄັນວ່າ "ເປັນພຣະສຳມາສຳພຸດທະເຈົ້າ"
ທ່ານເຫຼົ່ານັ້ນເມື່ອຖືກຖາມວ່າ
ຄວາມສຳເລັດເປັນແນວໃດ?
ຄວາມບໍ່ສຳເລັດເປັນແນວໃດ?
ກໍບໍ່ສາມາດຕອບໃນເລື້ອງທຳ ແລະ ປະຕິປະທາໄດ້
ເມື່ອທ່ານເຫຼົ່ານັ້ນຮູ້ວ່າ
ຂ້າພຣະອົງເປັນທ້າວສັກກະມາຈາກເທວະໂລກ
ກໍພາກັນຖາມຂ້າພຣະອົງວ່າ
"ທ່ານເຮັດກຳຫຍັງ? ຈຶ່ງໄດ້ເຖິງຖານະນີ້ບໍ?"
ຂ້າພຣະອົງຈຶ່ງສະແດງທຳແກ່ທ່ານເຫຼົ່ານັ້ນ
ຕາມທີ່ໄດ້ຟັງມາໃນໝູ່ຊົນ
ທ່ານເຫຼົ່ານັ້ນມີໃຈຍິນດີດ້ວຍເຫດພຽງທໍ່ນັ້ນວ່າ
ພວກເຮົາໄດ້ເຫັນທ້າວວາສະວະແລ້ວ
ເມື່ອຂ້າພຣະອົງນັ້ນໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ຂ້າມຄວາມສົງໄສແລ້ວ
ຂ້າພຣະອົງນັ້ນໝົດຄວາມຢ້ານກົວ
ໃນມື້ນີ້ໄດ້ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າແລ້ວ
ຂ້າພຣະອົງຂໍຖວາຍອະພິວາດພຣະພຸດທະເຈົ້າ
ຜູ້ຊົງກຳຈັດລູກສອນ ຄື ຕັນຫາໄດ້
ບໍ່ມີບຸກຄົນປຽບທຽບໄດ້ ຊົງເປັນພຣະມະຫາວີຣະ
ຊົງເປັນຜູ້ເບີກບານແລ້ວ ເປັນເຜົ່າພັນແຫ່ງພຣະອາທິດ
ຂ້າແດ່ ພຣະອົງຜູ້ນິຣະທຸກ ຂ້າພຣະອົງກັບພວກເທບ

ທຳຄວາມນອບນ້ອມອັນໃດແກ່ພຣະພົມ
ຕັ້ງແຕ່ມື້ນີ້ໄປ ຂ້າພຣະອົງ
ຈັກຖວາຍຄວາມນອບນ້ອມອັນນັ້ນແດ່ພຣະອົງ
ຂໍພຣະອະໂຣກາດທຳການນອບນ້ອມແດ່ພຣະອົງ
ພຣະອົງຜູ້ດຽວທີ່ນັ້ນທີ່ຕັດສະຣູ້
ຊົງເປັນພຣະສາດສະດາທີ່ຍອດຢ້ຽມ
ບໍ່ມີບຸກຄົນໃດທັງໃນໂລກ ແລະ ເທວະໂລກ
ມາປຽບທຽບກັບພຣະອົງໄດ້"

[໓໗໑] ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຮັບສັ່ງຮຽກປັນຈະສິຂະຄັນທັບພະບຸດມາຕັດວ່າ "ດູຣາ ປັນຈະສິຂະ ທ່ານມີຄຸນຫຼາຍແກ່ເຮົາ ທີ່ເຮັດໃຫ້ພຣະຜູ້ມີພຣະພາກເຈົ້າຊົງພໍພຣະທະໄທກ່ອນ ທ່ານເຮັດໃຫ້ພຣະອົງ ຊົງພໍພຣະທະໄທກ່ອນແລ້ວ ພາຍຫຼັງພວກເຮົາຈຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ເຮົາຈະຕັ້ງທ່ານໄວ້ໃນຕຳແໜ່ງຂອງບິດາ ທ່ານຈະເປັນເຈົ້າແຫ່ງຄົນທັບ ເຮົາຈະຍົກນາງພັນທາສຸຣິຍະວັດສະສາໃຫ້ທ່ານເພາະວ່ານາງເປັນຜູ້ທີ່ທ່ານປາຖະໜາຢ່າງຍິ່ງ"

ທ້າວສັກກະຜູ້ເປັນຈອມແຫ່ງເທບໄດ້ທຳມະຈັກຂຸ

ລຳດັບນັ້ນ ທ້າວສັກກະຜູ້ເປັນຈອມແຫ່ງເທບ ຊົງໃຊ້ພຣະຫັດຕົບປະຖະພີ ຊົງເປັ່ງອຸທານ ໓ ເທື່ອ ວ່າ

"ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ"

ອັນໜຶ່ງ ເມື່ອພຣະຜູ້ມີພຣະພາກເຈົ້າ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ທຳມະຈັກຂຸອັນປາສະຈາກທຸລີ ຄື ກິເລດ ປາສະຈາກມົນທິນ ເກີດຂຶ້ນແກ່ທ້າວສັກກະຜູ້ເປັນຈອມແຫ່ງເທບ ແລະ ແກ່ເທວະດາອື່ນອີກ ໘໐,໐໐໐ ອົງວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ພຣະຜູ້ມີພຣະພາກເຈົ້າ ຕັດຕອບບັນຫາທີ່ທ້າວສັກກະຜູ້ເປັນຈອມແຫ່ງເທບອັນເຊີນມາທູນຖາມແລ້ວ ດ້ວຍປະການດັ່ງນີ້ ເພາະສະນັ້ນ ໄວຍາກອນພາສິດນີ້ ຈຶ່ງມີຊື່ວ່າ "ສັກກະບັນຫາ"

**ສັກກະປັນຫະສູດທີ ๘ ຈົບ**

# ໙. ມະຫາສະຕິປັດຖານສູດ

## ການຈະເລີນສະຕິປັດຖານສູດໃຫຍ່

[໓໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນິຄົມຂອງຊາວກຸຣຸ ຊື່ກຳມາສະທຳມະແຄວ້ນກຸຣຸ ບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ດູຣາພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

### ອຸດເທດ

[໓໗໕] "ດູຣາ ພິກຂຸທັງຫຼາຍ ທາງນີ້ເປັນທາງດຽວ ເພື່ອຄວາມບໍລິສຸດຂອງເຫຼົ່າສັດ ເພື່ອກ້າວຂ້າມໂສກະ ແລະ ປະຣິເທວະ ເພື່ອດັບທຸກ ແລະ ໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ ທາງນີ້ຄືສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການນັ້ນ ມີຫຍັງແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

**ອຸດເທດຈົບ**

# ກາຍານຸປັດສະນາ

**(ການພິຈາລະນາກາຍ)**

## ໝວດລົມຫັນໃຈເຂົ້າອອກ

[໓໗໔] ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳຣົງສະຕິໄວ້ສະເພາະໜ້າ ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ

ເມື່ອຫັນໃຈເຂົ້າຍາວ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"
ເມື່ອຫັນໃຈອອກຍາວ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈອອກຍາວ"
ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈເຂົ້າສັ້ນ"
ເມື່ອຫັນໃຈອອກສັ້ນ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈອອກສັ້ນ"
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ[໑] ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານຫັນໃຈອອກ"

ດູຣາ ພິກຂຸທັງຫຼາຍ ຊ່າງຊຸ່ນ ຫຼື ລູກມືຊ່າງຊຸ່ນຜູ້ມີຄວາມຊຳນານ ເມື່ອດຶງເຊືອກຍາວ ກໍຮູ້ຊັດແຈ້ງວ່າ "ເຮົາດຶງເຊືອກຍາວ" ເມື່ອດຶງເຊືອກສັ້ນ ກໍຮູ້ຊັດແຈ້ງວ່າ "ເຮົາດຶງເຊືອກສັ້ນ" ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ

ເມື່ອຫັນໃຈເຂົ້າຍາວ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"
ເມື່ອຫັນໃຈອອກຍາວ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈອອກຍາວ"
ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈເຂົ້າສັ້ນ"
ເມື່ອຫັນໃຈອອກສັ້ນ ກໍຮູ້ຊັດແຈ້ງວ່າ "ເຮົາຫັນໃຈອອກສັ້ນ"
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ[໑] ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານຫັນໃຈອອກ"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດ (ແຫ່ງລົມຫັນໃຈ) ໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບ (ແຫ່ງລົມຫັນໃຈ) ໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳ ເປັນເຫດເກີດທັງທຳ ເປັນເຫດດັບ (ແຫ່ງລົມຫັນໃຈ) ໃນກາຍຢູ່ ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສຕັນຫາ ແລະ ທິດຖິຢູ່ ແລະ ບໍ່ຢຶດໝັ້ນ ຖືໝັ້ນ ອັນໃດໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ແນວນີ້ແລ

**ໝວດລົມຫັນໃຈເຂົ້າອອກ ຈົບ**

## ກາຍານຸປັດສະນາ

## ໝວດອິລິຍາບົດ

[໓໗໔] ດູຣາ ພິກຂຸທັງຫຼາຍ ອີກປະການໜຶ່ງ

ພິກຂຸເມື່ອຍ່າງກໍຮູ້ຊັດແຈ້ງວ່າ "ເຮົາຍ່າງ"
ເມື່ອຢືນກໍຮູ້ຊັດແຈ້ງວ່າ "ເຮົາຢືນ"
ເມື່ອນັ່ງກໍຮູ້ຊັດແຈ້ງວ່າ "ເຮົານັ່ງ"
ຫຼື ເມື່ອນອນກໍຮູ້ຊັດແຈ້ງວ່າ "ເຮົານອນ"

ພິກຂຸນັ້ນ ເມື່ອດຳຣົງກາຍຢູ່ໂດຍອາການໃດ ໆ ກໍຮູ້ຊັດແຈ້ງ ກາຍທີ່ດຳຣົງຢູ່ ໂດຍອາການນັ້ນ ໆ ດ້ວຍວິທີນີ້ ພິກຂຸຍ່ອມພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍ ທັງພາຍໃນ ທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່ ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສຕັນຫາ ແລະ ທິດຖິຢູ່ ແລະ ບໍ່ຢຶດໝັ້ນ ຖືໝັ້ນອັນໃດໃນໂລກ

ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

**ໝວດອິລິຍາບົດຈົບ**

## ກາຍານຸປັດສະນາ

## ໝວດສຳປະຊັນຍະ

[໓໗໖] ດູຣາ ພິກຂຸທັງຫຼາຍ ອີກປະການໜຶ່ງ

ພິກຂຸທຳຄວາມຮູ້ສຶກໂຕ ໃນການກ້າວໄປ ການຖອຍກັບ
ທຳຄວາມຮູ້ສຶກໂຕ ໃນການແນມເບິ່ງ ການຫຼຽວເບິ່ງ
ທຳຄວາມຮູ້ສຶກໂຕ ໃນການຄູ້ເຂົ້າ ການຢຽດອອກ
ທຳຄວາມຮູ້ສຶກໂຕ ໃນການຄອງສັງຄາຕິ ບາດ ແລະ ຈີວອນ
ທຳຄວາມຮູ້ສຶກໂຕ ໃນການສັນ ການດື່ມ ການຫຍ້ຳ ການຊີມ
ທຳຄວາມຮູ້ສຶກໂຕ ໃນການຖ່າຍອຸດຈາຣະ ແລະ ປັດສາວະ

ທຳຄວາມຮູ້ສຶກໂຕ ໃນການຍ່າງ ການຍືນ ການນັ່ງ ການນອນ ການຕື່ນ ການເວົ້າການນິ່ງຢູ່ ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນ ທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່ ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາ ແລະ ທິດຖິ) ຢູ່ ແລະ ບໍ່ຍຶດໝັ້ນ ຖືໝັ້ນ ອັນໃດໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແບບນີ້ແລ

**ໝວດສຳປະຊັນຍະຈົບ**

## ກາຍານຸປັດສະນາ

## ໝວດມະນະສິການສິ່ງປະຕິກູນ

[໓໗໗] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນກາຍນີ້ຕັ້ງແຕ່ຝ່າຕີນຂຶ້ນໄປເບື້ອງເທິງ ຕັ້ງແຕ່ປາຍຜົມລົງມາເບື້ອງລຸ່ມ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດມີຊະນິດຕ່າງໆ ວ່າ

"ໃນກາຍນີ້ ມີຜົມ ຂົນ ເລັບ ແຂ້ວ ໜັງ
ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໝາກໄຂ່ຫຼັງ

ຫົວໃຈ ຕັບ ພັງຜືດ ມ້າມ ປອດ
ລຳໄສ້ໃຫຍ່ ລຳໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ
ບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ
ນ້ຳຕາ ນ້ຳມັນແຫຼວ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ"

ດູຣາ ພິກຂຸທັງຫຼາຍ ຖົງມີປາກ ໒ ຂ້າງ ເຕັມໄປດ້ວຍທັນຍະພືດຊະນິດຕ່າງ ໆ ຄື ມີເຂົ້າສາລີ ເຂົ້າເປືອກ ຖົ່ວຂຽວ ຖົ່ວເຫຼືອງ ເມັດງາ ເຂົ້າສານ ຄົນຕາດີເປີດຖົງຍາວນັ້ນອອກມາພິຈາລະນາເຫັນວ່າ "ນີ້ເປັນເຂົ້າສາລີ ນີ້ເປັນເຂົ້າເປືອກ ນີ້ເປັນຖົ່ວຂຽວ ນີ້ເປັນຖົ່ວເຫຼືອງ ນີ້ເປັນເມັດງາ ນີ້ເປັນເຂົ້າສານ" ແມ່ນສັນໃດ ພິກຂຸກໍສັນນັ້ນ ຄື ກັນ ພິຈາລະນາເຫັນກາຍນີ້ ຕັ້ງແຕ່ຝາຕີນ ຂຶ້ນໄປເບື້ອງເທິງ ຕັ້ງແຕ່ປາຍຜົມລົງມາເບື້ອງລຸ່ມ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດຊະນິດຕ່າງ ໆ ວ່າ

"ໃນກາຍນີ້ ມີຜົມ ຂົນ ເລັບ ແຂ້ວ ໜັງ
ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໝາກໄຂ່ຫຼັງ
ຫົວໃຈ ຕັບ ພັງຜືດ ມ້າມ ປອດ
ລຳໄສ້ໃຫຍ່ ລຳໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ
ບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ
ນ້ຳຕາ ນ້ຳມັນແຫຼວ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍ ທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່ ຫຼື ວ່າພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ແລະ ບໍ່ຢຶດໝັ້ນ ຖືໝັ້ນ ອັນໃດ ໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

## ກາຍານຸປັດສະນາ

## ໝວດມະນະສິການທາດ

[໓໗໘] ດູຣາ ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນກາຍນີ້ ຕາມທີ່ຕັ້ງຢູ່ຕາມທີ່ດຳຣົງຢູ່ ໂດຍຄວາມເປັນທາດວ່າ "ໃນກາຍນີ້ມີ ທາດດິນ ທາດນ້ຳ ທາດໄຟ ທາດລົມຢູ່"

ດູຣາ ພິກຂຸທັງຫຼາຍ ຄົນຂ້າງົວ ຫຼື ລູກມືຂອງຄົນຂ້າງົວຜູ້ມີຄວາມຊຳນານ ເມື່ອຂ້າງົວແລ້ວ ແບ່ງອະໄວຍະວະອອກເປັນສ່ວນ ໆ ນັ່ງຢູ່ທີ່ຫົນທາງໃຫຍ່ສີ່ແຍກ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ພິຈາລະນາເຫັນກາຍນີ້ຕາມທີ່ຕັ້ງຢູ່ ຕາມທີ່ດຳຣົງຢູ່ໂດຍຄວາມເປັນທາດວ່າ "ໃນກາຍນີ້ມີທາດດິນ ທາດນ້ຳ ທາດໄຟ ທາດລົມຢູ່" ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່ ຫຼືວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານຈະເລີນສະຕິທີ່ນັ້ນບໍ່ອາໄສຕັນຫາ ແລະ ທິດຖິຢູ່ ແລະ ບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

**ໝວດມະນະສິການທາດຈົບ**

## ກາຍານຸປັດສະນາ

## ໝວດປ່າຊ້າ ໙ ໝວດ

[໓໗໙] ດູຣາ ພິກຂຸທັງຫຼາຍ ອີກປະການໜຶ່ງ

໑. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງຕາຍແລ້ວ ໑ ມື້ ຕາຍແລ້ວ ໒ ມື້ ຫຼືຕາຍແລ້ວ ໓ ມື້ ເປັນສົບໃຄ່ຂຶ້ນ ສົບຂຽວຊ້ຳ ສົບມີນ້ຳເຫຼືອງຍ້ອຍອອກ ແມ່ນສັນໃດ ພິກຂຸນັ້ນນຳກາຍນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ແລະ ບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

໘. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງຖືກກາຈິກກິນ ຝູງແຫຼວຈິກກິນ ແຮ້ງຈິກກິນ ໝາກັດກິນ ໝາຈິ້ງຈອກກັດກິນ ຫຼື ສັດນ້ອຍໃຫຍ່ຫຼາຍຊະນິດກັດກິນຢູ່ ແມ່ນສັນໃດ ພິກຂຸນັ້ນ ນຳກາຍນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່

ຫຼືວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາ ແລະ ທິດຖິ) ຢູ່ ແລະ ບໍ່ຍຶດໝັ້ນ ຖືໝັ້ນ ອັນໃດໃນໂລກ ດູຣາພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

໖. ພິກຂຸ ເຫັນຊາກສົບ ອັນເຂົາຖິ້ມໄວ້ໃນປ່າຊ້າເປັນໂຄງກະດູກ ຍັງມີຊີ້ນ ແລະເລືອດ ມີເອັນກ່ຽວຮັດຢູ່ ແມ່ນສັນໃດ ພິກຂຸນັ້ນ ນຳກາຍນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ ດ້ວຍວິທີນີ້ ພິກຂຸ ພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍ ທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາ ແລະ ທິດຖິ) ຢູ່ ແລະ ບໍ່ຍຶດໝັ້ນ ຖືໝັ້ນ ອັນໃດໃນໂລກ ດູຣາພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

໘. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເປັນໂຄງກະດູກ ບໍ່ມີຊີ້ນ ແຕ່ຍັງມີເລືອດເປື້ອນເປິຢູ່ ມີເອັນກ່ຽວຮັດຢູ່ ແມ່ນສັນໃດ ພິກຂຸນັ້ນ ນຳກາຍນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ ດ້ວຍວິທີ ນີ້ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

໕. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເປັນໂຄງກະດູກບໍ່ມີເລືອດ ແລະ ຊີ້ນແຕ່ຍັງມີເອັນກ່ຽວຮັດຢູ່ແມ່ນສັນໃດ ພິກຂຸນັ້ນນຳກາຍນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນມີ ລັກສະນະແນວນັ້ນ ບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່

ຫຼືວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

໖. ພິກຂຸ ເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າເປັນໂຄງກະດູກ ບໍ່ມີເອັນກ່ຽວຮັດແລ້ວຊະຊາຍໃນທິດໃຫຍ່ ທິດເບື້ອງຂວາງ ຄື ກະດູກມື ຢູ່ທາງທິດໜຶ່ງ ກະດູກຕີນຢູ່ທາງທິດໜຶ່ງ ກະດູກແຂ້ງຢູ່ທາງທິດໜຶ່ງ ກະດູກຂາຢູ່ທາງທິດໜຶ່ງ ກະດູກແອວຢູ່ທາງທິດໜຶ່ງ ກະດູກຫຼັງຢູ່ທາງທິດໜຶ່ງ ກະດູກຂ້າງຢູ່ທາງທິດໜຶ່ງ ກະດູກໜ້າເອິກຢູ່ທາງທິດໜຶ່ງ ກະດູກແຂນຢູ່ທາງທິດໜຶ່ງ ກະດູກບ່າໄຫຼ່ຢູ່ທາງທິດໜຶ່ງ ກະດູກຄໍຢູ່ທາງທິດໜຶ່ງ ກະດູກຄາງຢູ່ທາງທິດໜຶ່ງ ກະດູກແຂ້ວຢູ່ທາງທິດໜຶ່ງ ກະໂຫຼກຫົວຢູ່ທາງທິດໜຶ່ງ ແມ່ນສັນໃດ ພິກຂຸນັ້ນ ນຳກາຍຕົນເອງນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ສາມາດຂ້າມພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່ ຫຼືວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

ฎ. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງເປັນທ່ອນກະດູກສີຂາວ ຄື ສີຫອຍສັງແມ່ນສັນໃດ ພິກຂຸນັ້ນນຳກາຍຕົນນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍຈະຕ້ອງມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນກາຍຢູ່

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິເທົ່ານັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

ຏ. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງເປັນທ່ອນກະດູກກອງຢູ່ນຳກັນເກີນກວ່າ ໑ ປີ ແມ່ນສັນໃດ ພິກຂຸນັ້ນ ນຳກາຍຕົນນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນກາຍຢູ່

ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສຈະເລີນຍານຈະເລີນສະຕິເທົ່ານັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

ຒ. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງເປັນກະດູກເປື່ອຍ ເປັນປ່ຽງນ້ອຍ ໆ ແມ່ນສັນໃດ ພິກຂຸນັ້ນ ນຳກາຍຕົນນີ້ເຂົ້າໄປປຽບທຽບໃຫ້ເຫັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ພົ້ນຄວາມເປັນແນວນັ້ນໄປໄດ້" ສັນນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນກາຍຢູ່

ຫຼືວ່າ ພິກຂຸນັ້ນ ມີສະຕິຟາກົດຢູ່ສະເພາະໜ້າວ່າ “ກາຍມີຢູ່” ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທໍ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ແລ

**ໝວດປ່າຊ້າ ໙ ໝວດ ຈົບ**

**ກາຍານຸປັດສະນາ ຈົບ**

## ເວທະນານຸປັດສະນາ

## (ການພິຈາລະນາເວທະນາ)

[໓໗໐] ພິກຂຸ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

ເມື່ອສະເຫວີຍສຸກຂະເວທະນາ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍສຸກຂະເວທະນາ”

ເມື່ອສະເຫວີຍທຸກຂະເວທະນາ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍທຸກຂະເວທະນາ”

ເມື່ອສະເຫວີຍອະທຸກຂະມະສຸກຂະເວທະນາ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍອະທຸກຂະມະສຸກຂະເວທະນາ”

ເມື່ອສະເຫວີຍສຸກຂະເວທະນາ ທີ່ມີອາມິດ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍສຸກຂະເວທະນາທີ່ມີອາມິດ”

ເມື່ອສະເຫວີຍສຸກຂະເວທະນາ ທີ່ບໍ່ມີອາມິດ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍສຸກຂະເວທະນາທີ່ບໍ່ມີອາມິດ”

ເມື່ອສະເຫວີຍທຸກຂະເວທະນາ ທີ່ມີອາມິດ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍທຸກຂະເວທະນາທີ່ມີອາມິດ”

ເມື່ອສະເຫວີຍທຸກຂະເວທະນາ ທີ່ບໍ່ມີອາມິດກໍ ຮູ້ຊັດແຈ້ງວ່າ “ເຮົາສະເຫວີຍທຸກຂະເວທະນາທີ່ບໍ່ມີອາມິດ”

ເມື່ອສະເຫວີຍອະທຸກຂະມະສຸກຂະເວທະນາ ທີ່ມີອາມິດ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍອະທຸກຂະມະສຸກຂະເວທະນາ ທີ່ມີອາມິດ”

ເມື່ອສະເຫວີຍອະທຸກຂະມະສຸກຂະເວທະນາ ທີ່ບໍ່ມີອາມິດ ກໍຮູ້ຊັດແຈ້ງວ່າ “ເຮົາສະເຫວີຍອະທຸກຂະມະສຸກຂະເວທະນາ ທີ່ບໍ່ມີອາມິດ”

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍພາຍໃນຢູ່ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດ ໃນເວທະນາທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບ ໃນເວທະນາທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບ ໃນເວທະນາທັງຫຼາຍຢູ່

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ເວທະນາມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ແນວນີ້ແລ

**ເວທະນານຸປັດສະນາ ຈົບ**

## ຈິດຕານຸປັດສະນາ

## (ການພິຈາລະນາຈິດ)

[໓໗໑] ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ເປັນແນວໃດ

ຄື ພິກຂຸໃນທຳວິໄນນີ້

| | | |
|---|---|---|
| ຈິດມີຣາຄະ | ກໍຮູ້ຊັດແຈ້ງວ່າ | "ຈິດມີຣາຄະ" |
| ຈິດປາສະຈາກຣາຄະ | ກໍຮູ້ຊັດແຈ້ງວ່າ | "ຈິດປາສະຈາກຣາຄະ" |
| ຈິດມີໂທສະ | ກໍຮູ້ຊັດແຈ້ງວ່າ | "ຈິດມີໂທສະ" |
| ຈິດປາສະຈາກໂທສະ | ກໍຮູ້ຊັດແຈ້ງວ່າ | "ຈິດປາສະຈາກໂທສະ" |
| ຈິດມີໂມຫະ | ກໍຮູ້ຊັດແຈ້ງວ່າ | "ຈິດມີໂມຫະ" |
| ຈິດປາສະຈາກໂມຫະ | ກໍຮູ້ຊັດແຈ້ງວ່າ | "ຈິດປາສະຈາກໂມຫະ" |
| ຈິດຫົດຫູ່ | ກໍຮູ້ຊັດແຈ້ງວ່າ | "ຈິດຫົດຫູ່" |
| ຈິດຟຸ້ງຊ່ານ | ກໍຮູ້ຊັດແຈ້ງວ່າ | "ຈິດຟຸ້ງຊ່ານ" |
| ຈິດເປັນມະຫັກຄະຕະ | ກໍຮູ້ຊັດແຈ້ງວ່າ | "ຈິດເປັນມະຫັກຄະຕະ" |
| ຈິດບໍ່ເປັນມະຫັກຄະຕະ | ກໍຮູ້ຊັດແຈ້ງວ່າ | "ຈິດບໍ່ເປັນມະຫັກຄະຕະ" |
| ຈິດມີຈິດອື່ນຍິ່ງກວ່າ | ກໍຮູ້ຊັດແຈ້ງວ່າ | "ຈິດມີຈິດອື່ນຍິ່ງກວ່າ" |
| ຈິດບໍ່ມີຈິດອື່ນຍິ່ງກວ່າ | ກໍຮູ້ຊັດແຈ້ງວ່າ | "ຈິດບໍ່ມີຈິດອື່ນຍິ່ງກວ່າ" |
| ຈິດເປັນສະມາທິ | ກໍຮູ້ຊັດແຈ້ງວ່າ | "ຈິດເປັນສະມາທິ" |
| ຈິດບໍ່ເປັນສະມາທິ | ກໍຮູ້ຊັດແຈ້ງວ່າ | "ຈິດບໍ່ເປັນສະມາທິ" |

ຈິດຫຼຸດພົ້ນແລ້ວ ກໍຮູ້ຊັດແຈ້ງວ່າ "ຈິດຫຼຸດພົ້ນແລ້ວ"
ຈິດບໍ່ຫຼຸດພົ້ນ ກໍຮູ້ຊັດແຈ້ງວ່າ "ຈິດບໍ່ຫຼຸດພົ້ນ"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນຈິດໃນຈິດພາຍໃນຢູ່ ພິຈາລະນາເຫັນຈິດໃນຈິດພາຍນອກຢູ່ ຫຼື ພິຈາລະນາເຫັນຈິດໃນຈິດ ທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນຈິດຢູ່ ພິຈາລະນາເຫັນທຳເປັນເຫດດັບໃນຈິດຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນຈິດ

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ຈິດມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທໍ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ແນວນີ້ແລ

**ຈິດຕານຸປັດສະນາຈົບ**

## ທຳມານຸປັດສະນາ

## (ການພິຈາລະນາທຳ)

## ໝວດນິວອນ

[໓໗໔] ພິກຂຸ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນທຳໃນທຳທັງຫຼາຍມີນິວອນ ໕ ຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍມີນິວອນ ໕ ຢູ່ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ເມື່ອກາມສັນທະ (ຄວາມພໍໃຈໃນກາມ) ພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ກາມສັນທະພາຍໃນຂອງເຮົາມີຢູ່" ຫຼື ເມື່ອກາມສັນທະພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ກາມສັນທະພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງກາມສັນທະທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະກາມສັນທະທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະກາມສັນທະທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ຊັດແຈ້ງດ້ວຍເຫດນັ້ນ

໔. ເມື່ອພະຍາບາດ (ຄວາມຄິດຮ້າຍ) ພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ພະຍາບາດ ພາຍໃນຂອງເຮົາມີຢູ່" ຫຼື ເມື່ອພະຍາບາດພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ພະຍາບາດພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງພະຍາບາດທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະພະຍາບາດທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ພະຍາບາດທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໓. ເມື່ອຖີນະມິດທະ (ຄວາມຫົດຫູ່ ແລະ ງ່ວມເຫງົາ) ພາຍໃນມີຢູ່ກໍຮູ້ຊັດແຈ້ງວ່າ "ຖີນະມິດທະພາຍໃນຂອງເຮົາມີຢູ່" ຫຼື ເມື່ອຖີນະມິດທະພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ຖີນະມິດທະພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງຖີນະມິດທະ ທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະຖີນະມິດທະທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດກໍຮູ້ຊັດແຈ້ງເຫດນັ້ນ ແລະ ຖີນະມິດທະທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໔. ເມື່ອອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານ) ພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ອຸດທັດຈະກຸກກຸດຈະ ພາຍໃນຂອງເຮົາມີຢູ່" ຫຼື ເມື່ອອຸດທັດຈະກຸກກຸດຈະພາຍໃນ ບໍ່ມີຢູ່ກໍຮູ້ຊັດແຈ້ງວ່າ "ອຸດທັດຈະກຸກກຸດຈະ ພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ອຸດທັດຈະກຸກກຸດຈະທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໕. ເມື່ອວິຈິກິດສາ (ຄວາມລັງເລສົງໄສ) ພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ວິຈິກິດສາພາຍໃນຂອງເຮົາມີຢູ່" ຫຼື ເມື່ອວິຈິກິດສາພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ວິຈິກິດສາພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງວິຈິກິດສາທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ຊັດດ້ວຍເຫດນັ້ນ ການລະວິຈິກິດສາທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດດ້ວຍເຫດນັ້ນ ແລະ ວິຈິກິດສາທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ຊັດແຈ້ງດ້ວຍເຫດນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳ ໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທຳໃນທຳທັງຫຼາຍ ທັງພາຍໃນທັງພາຍນອກຢູ່ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ຫຼືພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ແລະ ບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ ດູຣາ ພິກຂຸທັງຫຼາຍພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍມີນິວອນ ໕ ຢູ່ເປັນແບບນີ້ແລ

**ໝວດນິວອນຈົບ**

## ທຳມານຸປັດສະນາ

## ໝວດຂັນ

[໓໘໓] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍອັນມີອຸປາທານຂັນ ໕ ຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ມີອຸປາທານຂັນ ໕ ຢູ່ເປັນແນວໃດ?

ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນທຳໃນທຳທັງຫຼາຍມີອຸປາທານຂັນ ໕ ຢູ່ແນວນີ້ ວ່າ

໑. "ຮູບເປັນແນວນີ້ ຄວາມເກີດແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້

໒. ເວທະນາເປັນແນວນີ້ ຄວາມເກີດແຫ່ງເວທະນາເປັນແນວນີ້ ຄວາມດັບແຫ່ງເວທະນາເປັນແນວນີ້

໓. ສັນຍາເປັນແນວນີ້ ຄວາມເກີດແຫ່ງສັນຍາເປັນແນວນີ້ ຄວາມດັບແຫ່ງສັນຍາເປັນແນວນີ້

໔. ສັງຂານເປັນແນວນີ້ ຄວາມເກີດແຫ່ງສັງຂານເປັນແນວນີ້ ຄວາມດັບແຫ່ງສັງຂານເປັນແນວນີ້

໕. ວິນຍານເປັນແນວນີ້ ຄວາມເກີດແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທຳໃນທຳທັງຫຼາຍ ທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ແລະ ບໍ່ຍຶດໝັ້ນ ຖືໝັ້ນ ອັນໃດໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນທຳ ໃນທຳທັງຫຼາຍມີອຸປາທານຂັນ ໕ ຢູ່ແນວນີ້ແລ

**ໝວດຂັນຈົບ**

# ທຳມານຸປັດສະນາ

## ໝວດອາຍະຕະນະ

[໓໗໔] ດູຣາ ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍມີອາຍະຕະນະພາຍໃນ ໖ ແລະ ອາຍະຕະນະພາຍນອກ ໖ ຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ມີອາຍະຕະນະພາຍໃນ ໖ ແລະ ອາຍະຕະນະພາຍນອກ ໖ ຢູ່ເປັນແນວໃດ ຄື ພິກຂຸໃນທຳວິໄນນີ້

໑. ຮູ້ຊັດແຈ້ງຕາ ຮູ້ຊັດແຈ້ງຮູບ ສັງໂຍດໃດ ອາໄສຕາ ແລະ ຮູບ ທັງສອງນັ້ນ ເກີດຂຶ້ນກໍຮູ້ຊັດແຈ້ງສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດ ທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະສັງໂຍດທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໒. ຮູ້ຊັດແຈ້ງຫູ ຮູ້ຊັດແຈ້ງສຽງ ສັງໂຍດໃດອາໄສ ຫູ ແລະ ສຽງທັງສອງນັ້ນ ເກີດຂຶ້ນກໍຮູ້ຊັດແຈ້ງສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ສັງໂຍດທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໓. ຮູ້ຊັດດັງ ຮູ້ຊັດກິ່ນ ສັງໂຍດໃດອາໄສດັງ ແລະ ກິ່ນທັງສອງນັ້ນ ເກີດຂຶ້ນກໍຮູ້ຊັດສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ສັງໂຍດທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໔. ຮູ້ຊັດແຈ້ງລີ້ນ ຮູ້ຊັດແຈ້ງຣົດ ສັງໂຍດໃດອາໄສລີ້ນ ແລະ ຣົດ ທັງສອງນັ້ນ ເກີດຂຶ້ນກໍຮູ້ຊັດແຈ້ງສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະສັງໂຍດທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໕. ຮູ້ຊັດແຈ້ງກາຍ ຮູ້ຊັດແຈ້ງໂຜດຖັບພະ ສັງໂຍດໃດອາໄສກາຍ ແລະ ໂຜດຖັບພະທັງສອງນັ້ນເກີດຂຶ້ນ ກໍຮູ້ຊັດແຈ້ງສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງ

ເຫດນັ້ນ ແລະ ສັງໂຍດທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໖. ຮູ້ຊັດແຈ້ງໃຈ ຮູ້ຊັດແຈ້ງທໍາມາຣົມ ສັງໂຍດໃດອາໄສໃຈແລະທໍາມາຣົມ ທັງສອງນັ້ນເກີດຂຶ້ນກໍຮູ້ຊັດແຈ້ງສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດກໍຮູ້ຊັດແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະສັງໂຍດທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ດ້ວຍວິທີນີ້ພິກຂຸພິຈາລະນາເຫັນທໍາໃນທໍາທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທໍາໃນທໍາທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທໍາໃນທໍາທັງຫຼາຍ ທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທໍາເປັນເຫດເກີດໃນທໍາທັງຫຼາຍຢູ່ ພິຈາລະນາເຫັນທໍາເປັນເຫດດັບໃນທໍາທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທໍາເປັນເຫດເກີດ ທັງທໍາເປັນເຫດດັບໃນທໍາທັງຫຼາຍຢູ່ ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ທໍາມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທໍ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ແລະ ບໍ່ຢຶດໝັ້ນ ຖືໝັ້ນອັນໃດໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນທໍາໃນທໍາທັງຫຼາຍ ມີອາຍະຕະນະພາຍໃນ ໖ ແລະ ອາຍະຕະນະພາຍນອກ ໖ ຢູ່ເປັນແນວນີ້ແລ

**ໝວດອາຍະຕະນະຈົບ**

## ທໍາມານຸປັດສະນາ

## ໝວດໂພດຊົງ

[໓໘໕] ດູຣາ ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທໍາໃນທໍາທັງຫຼາຍມີໂພດຊົງ ໗ ຢູ່

ພິກຂຸພິຈາລະນາເຫັນທໍາໃນທໍາທັງຫຼາຍມີໂພດຊົງ ໗ ຢູ່ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້

໑. ເມື່ອສະຕິສໍາໂພດຊົງພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ສະຕິສໍາໂພດຊົງພາຍໃນຂອງເຮົາມີຢູ່" ຫຼື ເມື່ອສະຕິສໍາໂພດຊົງພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ສະຕິສໍາໂພດຊົງພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງສະຕິສໍາໂພດຊົງທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ຄວາມຈະເລີນບໍລິບູນແຫ່ງສະຕິສໍາໂພດຊົງທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໔. ເມື່ອທໍາມະວິຈະຍະສໍາໂພດຊົງພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ທໍາມະວິຈະຍະສໍາໂພດຊົງພາຍໃນຂອງເຮົາມີຢູ່" ຫຼື ເມື່ອທໍາມະວິຈະຍະສໍາໂພດຊົງພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ທໍາມະວິຈະຍະສໍາໂພດຊົງພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງທໍາມະວິຈະຍະສໍາໂພດຊົງທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ຄວາມຈະເລີນບໍລິບູນແຫ່ງທໍາມະວິຈະຍະສໍາໂພດຊົງທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໓. ເມື່ອວິຣິຍະສໍາໂພດຊົງພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ວິຣິຍະສໍາໂພດຊົງພາຍໃນຂອງເຮົາມີຢູ່" ຫຼື ເມື່ອວິຣິຍະສໍາໂພດຊົງພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ວິຣິຍະສໍາໂພດຊົງພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງວິຣິຍະສໍາໂພດຊົງທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ຄວາມຈະເລີນບໍລິບູນແຫ່ງວິຣິຍະສໍາໂພດຊົງທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດກໍຮູ້ຊັດແຈ້ງເຫດນັ້ນ

໔. ເມື່ອປີຕິສໍາໂພດຊົງພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ປີຕິສໍາໂພດຊົງພາຍໃນຂອງເຮົາມີຢູ່" ຫຼື ເມື່ອປີຕິສໍາໂພດຊົງພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ປີຕິສໍາໂພດຊົງພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງປີຕິສໍາໂພດຊົງທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ ແລະ ຄວາມຈະເລີນບໍລິບູນແຫ່ງປີຕິສໍາໂພດຊົງທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໕. ເມື່ອປັດສັດທິສໍາໂພດຊົງພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ປັດສັດທິສໍາໂພດຊົງພາຍໃນຂອງເຮົາມີຢູ່" ຫຼື ເມື່ອປັດສັດທິສໍາໂພດຊົງພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ປັດສັດທິສໍາໂພດຊົງພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງປັດສັດທິສໍາໂພດຊົງທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດກໍຮູ້ຊັດແຈ້ງເຫດນັ້ນ ແລະ ຄວາມຈະເລີນບໍລິບູນ ແຫ່ງປັດສັດທິສໍາໂພດຊົງທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໖. ເມື່ອສະມາທິສໍາໂພດຊົງພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ສະມາທິສໍາໂພດຊົງພາຍໃນຂອງເຮົາມີຢູ່" ຫຼື ເມື່ອສະມາທິສໍາໂພດຊົງພາຍໃນບໍ່ມີຢູ່ກໍຮູ້ຊັດແຈ້ງວ່າ "ສະມາທິສໍາໂພດຊົງພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງສະມາທິສໍາໂພດຊົງທີ່ຍັງບໍ່ເກີດຂຶ້ນ ມີໄດ້ດ້ວຍເຫດໃດກໍຮູ້ຊັດແຈ້ງເຫດນັ້ນ ແລະ ຄວາມຈະເລີນບໍລິບູນແຫ່ງສະມາທິສໍາໂພດຊົງທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

໗. ເມື່ອອຸເປກຂາສໍາໂພດຊົງພາຍໃນມີຢູ່ ກໍຮູ້ຊັດແຈ້ງວ່າ "ອຸເປກຂາສໍາໂພດຊົງພາຍໃນຂອງເຮົາມີຢູ່" ຫຼື ເມື່ອອຸເປກຂາສໍາໂພດຊົງພາຍໃນບໍ່ມີຢູ່ ກໍຮູ້ຊັດແຈ້ງວ່າ "ອຸເປກຂາສໍາໂພດຊົງພາຍໃນຂອງເຮົາບໍ່ມີຢູ່" ການເກີດຂຶ້ນແຫ່ງອຸເປກຂາສໍາໂພດຊົງ ທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດກໍຮູ້ຊັດແຈ້ງເຫດນັ້ນ ແລະ ຄວາມຈະເລີນບໍລິບູນ ແຫ່ງອຸເປກຂາສໍາໂພດຊົງທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ຊັດແຈ້ງເຫດນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທຳໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ແລະ ທຳເປັນເຫດດັບໃນທຳທັງຫຼາຍຢູ່

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ແລະບໍ່ຢຶດໝັ້ນ ຖືໝັ້ນ ອັນໃດໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ມີໂພດຊົງ ໆ ຢູ່ເປັນແນວນີ້ແລ

**ໝວດໂພດຊົງ ຈົບ**

**ພານະວານທີ ໑ ຈົບ**

## ທຳມານຸປັດສະນາ

## ໝວດສັດຈະ

[໓໘໔] ດູຣາ ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍມີອະຣິຍະສັດ ໔ ຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອະຣິຍະສັດ ໔ ຢູ່ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ"
ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກຂະສະມຸໄທ"
ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກຂະນິໂຣທະ"
ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກຂະນິໂຣທະຄາມິນີປະຕິປະທາ"

## ທຸກຂະສັດຈະນິດເທດ

[໓໘໗] ດູຣາ ພິກຂຸທັງຫຼາຍ ທຸກຂະອະຣິຍະສັດເປັນແນວໃດ?

ຄື ຊາດ (ການເກີດ) ເປັນທຸກ ຊະຣາ (ຄວາມແກ່) ເປັນທຸກ ມໍຣະນະ (ຄວາມຕາຍ) ເປັນທຸກ ໂສກະ (ຄວາມໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ

(ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ເປັນທຸກ ການປະສົບກັບອາລົມອັນບໍ່ເປັນທີ່ຮັກ ເປັນທຸກ ຄວາມພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ

[໓໙໙] ດູຣາ ພິກຂຸທັງຫຼາຍ ຊາດ ເປັນແນວໃດ?

ການເກີດ ການເກີດພ້ອມ ການຖືກຳເນີດ ການບັງເກີດ ການບັງເກີດສະເພາະ ການ ຜາກົດແຫ່ງຂັນ ການໄດ້ອາຍະຕະນະໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າຊາດ

[໓໙໘] ດູຣາ ພິກຂຸທັງຫຼາຍ ຊະຣາ ເປັນແນວໃດ?

ການແກ່ ການຊຸດໂຊມ ການມີແຂ້ວຫຼ່ອນ ການມີຜົມຫງອກ ຄວາມມີໜັງຫ່ຽວຍານ ການມີອາຍຸສັ້ນເຂົ້າ ການແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ

ດູຣາ ພິກຂຸທັງຫຼາຍນີ້ຮຽກວ່າ ຊະຣາ

[໓໘໐] ດູຣາ ພິກຂຸທັງຫຼາຍ ມໍຣະນະ ເປັນແນວໃດ?

ການຈຸຕິ ການເຄື່ອນຍ້າຍໄປ ການແຕກດັບ ການຫາຍໄປ ການຕາຍ ກ່າວຄື ມະຣິຕະ ການທຳກາລະ ການແຕກແຫ່ງຂັນ ການປະຖິ້ມຊາກສົບໄວ້ ການຂາດສູນແຫ່ງຊີວິດອິນຊີໃນໝູ່ ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ມໍຣະນະ

[໓໘໑] ດູຣາ ພິກຂຸທັງຫຼາຍ ໂສກະ ເປັນແນວໃດ?

ຄວາມເສົ້າໂສກ ກິລິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມແຫ້ງກະແດ້ງພາຍໃນ ຄວາມແຫ້ງກອບພາຍໃນ ຂອງຜູ້ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດ ແຫ່ງຄວາມທຸກແນວໃດແນວໜຶ່ງ ມາກະທົບ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ໂສກະ

[໓໘໔] ດູຣາ ພິກຂຸທັງຫຼາຍ ປະຣິເທວະ ເປັນແນວໃດ?

ຄວາມຮ້ອງໄຫ້ ຄວາມຮ່ຳໄຮ ກິລິຍາທີ່ຮ້ອງໄຫ້ ກິລິຍາທີ່ຮ່ຳໄຮ ພາວະທີ່ຮ້ອງໄຫ້ ພາວະທີ່ຮ່ຳໄຮ ຂອງຜູ້ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງຄວາມທຸກແນວໃດແນວໜຶ່ງມາກະທົບ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ປະຣິເທວະ໑

[໓໙໓] ດູຣາ ພິກຂຸທັງຫຼາຍ ຄວາມທຸກ ເປັນແນວໃດ?

ຄວາມທຸກທາງກາຍ ຄວາມບໍ່ສະບາຍທາງກາຍ ການພົບພໍ້ກັບອາລົມບໍ່ດີທີ່ເປັນທຸກ ອັນເກີດຈາກກາຍສຳຜັດ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ຄວາມທຸກ

[໓໙໔] ດູຣາ ພິກຂຸທັງຫຼາຍ ໂທມະນັດ ເປັນແນວໃດ?

ຄວາມທຸກທາງໃຈ ຄວາມບໍ່ສະບາຍທາງໃຈ ການພົບພໍ້ກັບອາລົມບໍ່ດີທີ່ເປັນທຸກ ອັນເກີດຈາກມະໂນສຳຜັດ

ດູຣາ ພິກຂຸທັງຫຼາຍນີ້ຮຽກວ່າ ໂທມະນັດ

[໓໙໕] ດູຣາ ພິກຂຸທັງຫຼາຍ ອຸປາຍາດ ເປັນແນວໃດ?

ຄວາມແຄ້ນ ຄວາມຄັບແຄ້ນ ພາວະທີ່ແຄ້ນ ພາວະທີ່ຄັບແຄ້ນ ຂອງຜູ້ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງຄວາມທຸກແນວໃດແນວໜຶ່ງມາກະທົບ

ດູຣາ ພິກຂຸທັງຫຼາຍນີ້ຮຽກວ່າ ອຸປາຍາດ

[໓໙໖] ດູຣາ ພິກຂຸທັງຫຼາຍ ການປະສົບກັບອາລົມອັນບໍ່ເປັນທີ່ຮັກ ເປັນຄວາມທຸກເປັນແນວໃດ?

ການໄປຮ່ວມ ການມາຮ່ວມ ການປະຊຸມຮ່ວມ ການຢູ່ຮ່ວມ ກັບອາລົມອັນບໍ່ເປັນທີ່ປາຖະໜາບໍ່ເປັນທີ່ຮັກແພງ ບໍ່ເປັນທີ່ຖືກໃຈໃນໂລກນີ້ ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທຳມາຣົມ ຫຼື ຈາກບຸກຄົນຜູ້ປາຖະໜາແຕ່ສິ່ງທີ່ບໍ່ເປັນປະໂຫຍດ ປາຖະໜາແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ບໍ່ຜາສຸກ ປາຖະໜາແຕ່ສິ່ງທີ່ບໍ່ມີຄວາມກະເສມຈາກໂຍຄະຂອງເຂົາຜູ້ນັ້ນ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ການປະສົບກັບອາລົມອັນບໍ່ເປັນທີ່ຮັກ ເປັນຄວາມທຸກ

[໓໔໗] ດູຣາ ພິກຂຸທັງຫຼາຍ ການພັດພາກຈາກອາລົມອັນເປັນທີ່ຮັກ ເປັນຄວາມທຸກ ເປັນແນວໃດ?

ຄື ການບໍ່ໄດ້ໄປຮ່ວມ ການບໍ່ໄດ້ມາຮ່ວມ ການບໍ່ໄດ້ປະຊຸມຮ່ວມ ການບໍ່ໄດ້ຢູ່ຮ່ວມ ກັບອາລົມອັນເປັນທີ່ປາຖະໜາ ເປັນທີ່ຮັກແພງ ເປັນທີ່ຖືກໃຈໃນໂລກນີ້ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທຳມາຣົມ ຫຼື ກັບບຸກຄົນຜູ້ປາຖະໜາປະໂຫຍດ ປາຖະໜາຄວາມເກື້ອກູນ ປາຖະໜາຄວາມຜາສຸກ ປາຖະໜາຄວາມກະເສມຈາກໂຍຄະ ເຊັ່ນ ມານດາ ບິດາ ອ້າຍ ນ້ອງຊາຍ ເອື້ອຍ ນ້ອງສາວ ມິດ ອຳມາດ ຫຼື ຍາດສາຍໂລຫິດ

ດູຣາ ພິກຂຸທັງຫຼາຍນີ້ຮຽກວ່າ ການພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ

[໓໔໘] ດູຣາ ພິກຂຸທັງຫຼາຍ ການບໍ່ໄດ້ສິ່ງທີ່ຕ້ອງການ ເປັນຄວາມທຸກ ເປັນແນວໃດ?

ຄື ເຫຼົ່າສັດຜູ້ມີຄວາມເກີດເປັນທຳມະດາ ເກີດຄວາມປາຖະໜາຂື້ນແນວນີ້ວ່າ “ຂໍໃຫ້ເຮົາຢ່າໄດ້ມີຄວາມເກີດເປັນທຳມະດາ ຫຼື ຂໍຄວາມເກີດຢ່າໄດ້ມາເຖິງເຮົາເລີຍ” ຂໍ້ນີ້ບໍ່ຄວນສຳເລັດໄດ້ຕາມຄວາມປາຖະໜາ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ການບໍ່ໄດ້ສິ່ງທີ່ຕ້ອງການເປັນຄວາມທຸກ

ເຫຼົ່າສັດຜູ້ມີຄວາມແກ່ເປັນທຳມະດາ ຯລຯ

ເຫຼົ່າສັດຜູ້ມີຄວາມເຈັບເປັນທຳມະດາ ຯລຯ

ເຫຼົ່າສັດຜູ້ມີຄວາມຕາຍເປັນທຳມະດາ ຯລຯ

ເຫຼົ່າສັດຜູ້ມີຄວາມໂສກ ຄວາມຮ່ຳໄຮ ຄວາມທຸກກາຍ ຄວາມທຸກໃຈ ແລະ ຄວາມຄັບແຄ້ນໃຈເປັນທຳມະດາ ຕ່າງກໍເກີດຄວາມປາຖະໜາຂື້ນແນວນີ້ວ່າ “ຂໍໃຫ້ເຮົາຢ່າໄດ້ເປັນຜູ້ມີຄວາມໂສກ ຄວາມຮ່ຳໄຮ ຄວາມທຸກກາຍ ຄວາມທຸກໃຈ ແລະ ຄວາມຄັບແຄ້ນໃຈເປັນທຳມະດາເລີຍ ແລະ ຂໍຄວາມໂສກ ຄວາມຮ່ຳໄຮ ຄວາມທຸກກາຍ ຄວາມທຸກໃຈ ແລະ ຄວາມຄັບແຄ້ນໃຈຢ່າໄດ້ມາເຖິງເຮົາເລີຍ” ແລ້ວບໍ່ໄດ້ຕາມຄວາມປາຖະໜານັ້ນ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ການບໍ່ໄດ້ສິ່ງທີ່ຕ້ອງການເປັນຄວາມທຸກ[໑]

[໓໔໙] ດູຣາ ພິກຂຸທັງຫຼາຍ ໂດຍຫຍໍ້ ອຸປາທານຂັນ ໕ ຄືໂຕທຸກ ເປັນແນວໃດ?

ຄື ຮູປູປາທານຂັນ (ອຸປາທານຂັນຄືຮູບ) ເວທະນູປາທານຂັນ (ອຸປາທານຂັນຄືເວທະນາ) ສັນຍູປາທານຂັນ (ອຸປາທານຂັນຄືສັນຍາ) ສັງຂາຣູປາທານຂັນ (ອຸປາທານຂັນຄືສັງຂານ) ວິນຍານູປາທານຂັນ (ອຸປາທານຂັນ ຄື ວິນຍານ)

ດູຣາ ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າທຸກຂະອະຣິຍະສັດ

## ສະມຸທະຍະສັດຈະນິເທດ

[໔໐໐] ດູຣາ ພິກຂຸທັງຫຼາຍ ທຸກຂະສະມຸທະຍະອະຣິຍະສັດ ເປັນແນວໃດ?

ຕັນຫານີ້ເປັນເຫດເກີດຂຶ້ນໃນພົບໃໝ່ ປະກອບດ້ວຍຄວາມກຳໜັດຍິນດີ ເປັນເຫດຍິນດີໃນອາລົມນັ້ນໆ ຄື ກາມະຕັນຫາ ພາວະຕັນຫາ ແລະ ວິພາວະຕັນຫາ ກໍຕັນຫານີ້ແລ ເມື່ອເກີດຂຶ້ນ ເກີດຂຶ້ນບ່ອນໃດ ເມື່ອຕັ້ງຢູ່ ຕັ້ງຢູ່ບ່ອນໃດ ຄື ປິຍະຮູບ ສາຕະຮູບໃດມີຢູ່ໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ປິຍະຮູບ ສາຕະຮູບນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ປິຍະຮູບ ສາຕະຮູບນີ້

ທຳອັນໃດ? ເປັນປິຍະຮູບ ສາຕະຮູບໃນໂລກ

ຈັກຂຸເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຈັກຂຸນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຈັກຂຸນີ້ ໂສຕະເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຄານະເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຊິວຫາເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ກາຍເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ມະໂນເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ມະໂນນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ມະໂນນີ້ ຮູບເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຮູບນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຮູບນີ້ ສຽງເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ກິ່ນເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຣົດເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ໂຜດຖັບພະເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ທຳມາຣົມເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ທຳມາຣົມເຫຼົ່ານີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທຳມາຣົມເຫຼົ່ານີ້

ຈັກຂຸວິນຍານ ເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຈັກຂຸ ວິນຍານນີ້ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຈັກຂຸວິນຍານນີ້ ໂສຕະວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຄານະວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຊິວຫາວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ກາຍະວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ມະໂນວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ມະໂນວິນຍານນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ມະໂນວິນຍານນີ້

ຈັກຂຸສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຈັກຂຸສຳຜັດນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຈັກຂຸສຳຜັດນີ້ ໂສຕະສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ຄານະສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ຊິວຫາສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ກາຍສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ມະໂນສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ມະໂນສຳຜັດນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ມະໂນສຳຜັດນີ້

ເວທະນາທີ່ເກີດຈາກຈັກຂຸສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ເວທະນາ ເຊິ່ງເກີດຈາກຈັກຂຸສຳຜັດນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ເວທະນາ ເຊິ່ງເກີດຈາກຈັກຂຸສຳຜັດນີ້ ເວທະນາທີ່ເກີດຈາກໂສຕະສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ເວທະນາທີ່ເກີດຈາກຄານະສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ເວທະນາທີ່ເກີດຈາກຊິວຫາສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ເວທະນາທີ່ເກີດຈາກກາຍສຳຜັດເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ເວທະນາທີ່ເກີດຈາກມະໂນສຳຜັດ ເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ເວທະນາ ເຊິ່ງເກີດຈາກມະໂນສຳຜັດນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ເວທະນາເຊິ່ງເກີດຈາກມະໂນສຳຜັດນີ້

ຣູບສັນຍາ (ຄວາມກຳນົດໝາຍຮູ້ຣູບ) ເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຣູບສັນທະສັນຍານີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຣູບສັນຍານີ້ ສັນທະສັນຍາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ສັນທະສັນຍາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ຣົດສັນທະສັນຍາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ໂຜດຖັບພະສັທທະສັນຍາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ທຳມະສັນທະສັນຍາເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ທຳມະສັນຍານີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທຳມະສັນຍານີ້

ຣູບສັນເຈຕະນາ (ຄວາມຈຳນົງໃນຣູບ) ເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຣູບສັນເຈຕະນານີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຣູບສັນເຈຕະນານີ້ ສັນທະສັນເຈຕະນາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ສັນທະສັນເຈຕະນາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ຣົດສັນເຈຕະນາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ໂຜດຖັບພະສັນເຈຕະນາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ທຳມະສັນເຈຕະນາເປັນປິຍະຣູບ ສາຕະຣູບໃນໂລກຕັນຫານີ້ ເມື່ອເກີດກໍເກີດທີ່ທຳມະສັນເຈຕະນານີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທຳມະສັນເຈຕະນານີ້

ຣູບຕັນຫາ (ຄວາມຢາກໄດ້ຣູບ) ເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຣູບ ຕັນຫານີ້ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຣູບຕັນຫານີ້ ສັນທະຕັນຫາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ສັນທະຕັນຫາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ຣະສະຕັນຫາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ໂຜດຖັບພະຕັນຫາເປັນປິຍະຣູບ ສາຕະຣູບໃນໂລກ ຯລຯ ທຳມະຕັນ

ຫາເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ທຳມະຕັນຫານີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທຳມະຕັນຫານີ້

ຣູບວິຕົກ (ຄວາມຮິ່ນຕອງໃນຣູບ) ເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ ເມື່ອເກີດກໍເກີດທີ່ຣູບວິຕົກນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຣູບວິຕົກນີ້ ສັດທະວິຕົກເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ສັນທະວິຕົກເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ຣົດວິຕົກເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ໂຜດທັບພະວິຕົກເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ທຳມະວິຕົກເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ທຳມະວິຕົກນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທຳມະວິຕົກນີ້

ຣູບວິຈານ (ຄວາມວິຈານໃນຣູບ) ເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຣູບວິຈານນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຣູບວິຈານນີ້ ສັດທະວິຈານເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ສັນທະວິຈານເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ຣົດວິຈານເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ໂຜດຖັບພະວິຈານເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ທຳມະວິຈານເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ທຳມະວິຈານນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທຳມະວິຈານນີ້ ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າທຸກຂະສະມຸທະຍະອະຣິຍະສັດ

## ນິໂຣທະສັດຈະນິດເທດ

[໔໐໑] ດູຣາ ພິກຂຸທັງຫຼາຍ ທຸກຂະນິໂຣທະອະຣິຍະສັດ ເປັນແນວໃດ?

ຄື ຄວາມດັບກິເລດບໍ່ເຫຼືອ ດ້ວຍວິຣາຄະ ຄວາມປ່ອຍວາງ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ຕິດ ກໍຕັນຫານີ້ເມື່ອລະ ລະທີ່ໃດ? ເມື່ອດັບດັບທີ່ໃດ?

ຄື ປິຍະຣູບ ສາຕະຣູບໃດມີຢູ່ ໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ປິຍະຣູບ ສາຕະຣູບນີ້ ເມື່ອດັບກໍດັບທີ່ປິຍະຣູບ ສາຕະຣູບນີ້

ແມ່ນຫຍັງ? ເປັນປິຍະຣູບ ສາຕະຣູບ ໃນໂລກ?

ຄື ຈັກຂຸເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຈັກຂຸນີ້ ເມື່ອດັບກໍດັບທີ່ຈັກຂຸນີ້ ໂສຕະເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ຄານະເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ຊິວຫາເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ກາຍເປັນປິຍະຣູບ ສາຕະຣູບໃນໂລກ ฯລฯ ມະໂນເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນນີ້ ເມື່ອດັບກໍດັບທີ່ມະໂນນີ້

ຣູບເປັນປິຍະຣູບ ສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຣູບນີ້ ເມື່ອດັບກໍດັບທີ່ຣູບນີ້

ສຽງເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ກິ່ນເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ຣົດເປັນປິຍະຮູບສາຕະຮູບໃນໂລກ ฯລฯ ໂຜດຖັບພະເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ທຳມາຣົມເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມາຣົມນີ້ເມື່ອດັບກໍດັບທີ່ທຳມາຣົມນີ້

ຈັກຂຸວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຈັກຂຸວິນຍານນີ້ເມື່ອດັບກໍດັບທີ່ຈັກຂຸວິນຍານນີ້ ໂສຕະວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ຄານະວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ຊິວຫາວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ກາຍວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ມະໂນວິນຍານເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນວິນຍານນີ້ ເມື່ອດັບກໍດັບທີ່ມະໂນວິນຍານນີ້

ຈັກຂຸສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຈັກຂຸສຳຜັດນີ້ເມື່ອດັບກໍດັບທີ່ຈັກຂຸສຳຜັດນີ້ ໂສຕະສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ຄານະສຳຜັດເປັນປິຍະຮູບສາຕະຮູບໃນໂລກ ฯລฯ ຊິວຫາສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ກາຍສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ມະໂນສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ມະໂນສຳຜັດນີ້ ເມື່ອດັບກໍດັບທີ່ມະໂນສຳຜັດນີ້

ເວທະນາທີ່ເກີດຈາກຈັກຂຸສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ ເມື່ອລະກໍລະທີ່ເວທະນາອັນເກີດຈາກຈັກຂຸສຳຜັດນີ້ ເມື່ອດັບກໍດັບທີ່ເວທະນາອັນເກີດຈາກຈັກຂຸສຳຜັດນີ້ ເວທະນາທີ່ເກີດຈາກໂສຕະສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ເວທະນາທີ່ເກີດຈາກຄານະສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ເວທະນາທີ່ເກີດຈາກຊິວຫາສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ເວທະນາທີ່ເກີດຈາກກາຍສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ເວທະນາທີ່ເກີດຈາກມະໂນສຳຜັດເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະກໍລະທີ່ເວທະນາອັນເກີດຈາກມະໂນສຳຜັດນີ້ ເມື່ອດັບກໍດັບທີ່ເວທະນາອັນເກີດຈາກມະໂນສຳຜັດນີ້

ຮູບສັນຍາເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ຮູບສັນຍານີ້ເມື່ອດັບກໍດັບທີ່ຮູບສັນຍານີ້ ສັນທະສັນຍາເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ສັນທະສັນຍາເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ຣົດສັນຍາເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ໂຜດຖັບພະສັນຍາເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ທຳມະສັນຍາເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະສັນຍານີ້ ເມື່ອດັບກໍດັບທີ່ທຳມະສັນຍານີ້

ຮູບສັນເຈຕະນາເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ຮູບສັນເຈຕະນານີ້ ເມື່ອດັບກໍດັບທີ່ຮູບສັນເຈຕະນານີ້ ສັນທະສັນເຈຕະນາເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ຄັນທະສັນເຈຕະນາເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ຣົດສັນເຈຕະນາເປັນປິຍະຮູບ ສາຕະຮູບໃນໂລກ ฯລฯ ໂຜດທັບພະສັນເຈຕະນາເປັນປິຍະຮູບ ສາຕະຮູບໃນໂລກ

ຯລຯ ທຳມະສັນເຈຕະນາເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະສັນເຈຕະນານີ້ ເມື່ອດັບກໍດັບທີ່ທຳມະສັນເຈຕະນານີ້

ຮູບຕັນຫາເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຮູບຕັນຫານີ້ ເມື່ອດັບກໍດັບທີ່ຮູບຕັນຫານີ້ ສັດທະຕັນຫາເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຄັນທະຕັນຫາເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຣະສະຕັນຫາເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ໂຜດທັບພະຕັນຫາເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ທຳມະຕັນຫາເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະຕັນຫານີ້ ເມື່ອດັບກໍດັບທີ່ທຳມະຕັນຫານີ້

ຮູບວິຕົກເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຮູບວິຕົກນີ້ ເມື່ອດັບກໍດັບທີ່ຮູບວິຕົກນີ້ ສັດທະວິຕົກເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຄັນທະວິຕົກເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຣົດວິຕົກເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ໂຜດທັບພະວິຕົກເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ທຳມະວິຕົກເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະວິຕົກນີ້ ເມື່ອດັບກໍດັບທີ່ທຳມະວິຕົກນີ້

ຮູບວິຈານເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຮູບວິຈານນີ້ ເມື່ອດັບກໍດັບທີ່ຮູບວິຈານນີ້ ສັນທະວິຈານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຄັນທະວິຈານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ຣົດວິຈານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ໂຜດທັບພະວິຈານເປັນປິຍະຮູບ ສາຕະຮູບໃນໂລກ ຯລຯ ທຳມະວິຈານເປັນປິຍະຮູບ ສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະວິຈານນີ້ ເມື່ອດັບກໍດັບທີ່ທຳມະວິຈານນີ້

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າທຸກຂະນິໂຣທະອະຣິຍະສັດ

## ມັກຄະສັດຈະນິດເທດ

[໔໐໒] ດູຣາ ພິກຂຸທັງຫຼາຍ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ນັ້ນແລ ໄດ້ແກ່

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ຄິດຖືກ)
໓. ສຳມາວາຈາ (ເວົ້າຈາຖືກ)
໔. ສຳມາກຳມັນຕະ (ກະທຳຖືກ)
໕. ສຳມາອາຊີວະ (ລ້ຽງຊີບຖືກ)

ຜ. ສໍາມາວາຍາມະ (ພະຍາຍາມຖືກ)
ກ. ສໍາມາສະຕິ (ຣະນຶກຖືກ)
ຖ. ສໍາມາສະມາທິ (ຕັ້ງຈິດໝັ້ນຖືກ)

ດູຣາ ພິກຂຸທັງຫຼາຍ ສໍາມາທິດຖິ ເປັນແນວໃດ?

ດູຣາ ພິກຂຸທັງຫຼາຍ ຄື ຄວາມຮູ້ໃນທຸກ (ຄວາມທຸກ) ຄວາມຮູ້ໃນທຸກຂະສະມຸໄທ (ເຫດເກີດແຫ່ງຄວາມທຸກ) ຄວາມຮູ້ໃນທຸກຂະນິໂຣດ (ຄວາມດັບແຫ່ງຄວາມທຸກ) ຄວາມຮູ້ໃນທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຄວາມທຸກ)

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າສໍາມາທິດຖິ

ດູຣາ ພິກຂຸທັງຫຼາຍ ສໍາມາສັງກັບປະ ເປັນແນວໃດ?

ດູຣາ ພິກຂຸທັງຫຼາຍ ຄື ຄວາມຄິດໃນການອອກຈາກກາມ ຄວາມຄິດໃນການ ບໍ່ພະຍາບາດ ຄວາມຄິດໃນການບໍ່ບຽດບຽນ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ສໍາມາສັງກັບປະ

ດູຣາ ພິກຂຸທັງຫຼາຍ ສໍາມາວາຈາ ເປັນແນວໃດ?

ດູຣາ ພິກຂຸທັງຫຼາຍ ຄື ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຕົວະ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າສັບສໍ່ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຄໍາຫຍາບ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າບໍ່ມີສາຣະ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ສໍາມາວາຈາ

ດູຣາ ພິກຂຸທັງຫຼາຍ ສໍາມາກໍາມັນຕະ ເປັນແນວໃດ?

ດູຣາ ພິກຂຸທັງຫຼາຍ ຄື ເຈຕະນາເປັນເຫດງົດເວັ້ນຈາກການຂ້າສັດ ເຈຕະນາເປັນເຫດງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເຈຕະນາເປັນເຫດງົດເວັ້ນຈາກການປະພຶດຜິດໃນກາມ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ສໍາມາກໍາມັນຕະ

ດູຣາ ພິກຂຸທັງຫຼາຍ ສໍາມາອາຊີວະ ເປັນແນວໃດ?

ດູຣາພິກຂຸທັງຫຼາຍ ຄື ອະຣິຍະສາວົກໃນທຳວິໄນນີ້ ລະມິດສາອາຊີວະ ແລ້ວສຳເລັດການລ້ຽງຊີບດ້ວຍສຳມາອາຊີວະ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ສຳມາອາຊີວະ

ດູຣາ ພິກຂຸທັງຫຼາຍ ສຳມາວາຍາມະ ເປັນແນວໃດ?

ດູຣາ ພິກຂຸທັງຫຼາຍ ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະໃຫ້ເກີດ ພະຍາຍາມຜາຮົບຄວາມພຽນ ຕັ້ງຈິດໃຫ້ໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດ ບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະໃຫ້ເກີດ ພະຍາຍາມຜາຮົບຄວາມພຽນ ຕັ້ງຈິດໃຫ້ໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະໃຫ້ເກີດ ພະຍາຍາມ ຜາຮົບຄວາມພຽນຕັ້ງຈິດໃຫ້ໝັ້ນ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດຂຶ້ນ ໃຫ້ເກີດຂຶ້ນ

໔. ສ້າງສັນທະໃຫ້ເກີດ ພະຍາຍາມຜາຮົບຄວາມພຽນ ຕັ້ງຈິດໃຫ້ໝັ້ນ ມຸ່ງໝາຍເພື່ອຄວາມດຳລົງຢູ່ ເພື່ອບໍ່ໃຫ້ຫຼົງລືມ ເພື່ອຄວາມມີຍິ່ງຂຶ້ນ ເພື່ອຄວາມໄພບູນ ເພື່ອຄວາມຈະເລີນເພື່ອຄວາມບໍຣິບູນ ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ສຳມາວາຍາມະ

ດູຣາ ພິກຂຸທັງຫຼາຍ ສຳມາສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ

໓. ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ສຳມາສະຕິ

ດູຣາ ພິກຂຸທັງຫຼາຍ ສຳມາສະມາທິ ເປັນແນວໃດ?

ດູຣາພິກຂຸທັງຫຼາຍ ຄື ພິກຂຸໃນທຳວິໄນນີ້

໑. ສະງັດຈາກກາມ ແລະ ອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ມີວິຈານ ມີປີຕິ ແລະ ສຸກອັນເກີດຈາກວິເວກຢູ່

໒. ເພາະວິຕົກວິຈານສະຫງົບລະງັບໄປ ບັນລຸທຸຕິຍະຊານ ທີ່ມີຄວາມຜ່ອງໃສພາຍໃນມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່

໓. ເພາະປີຕິຈາງຄາຍໄປ ມີຈິດເປັນອຸເປກຂາ ມີສະຕິ ມີສຳປະຊັນຍະຢູ່ ແລະສະເຫວີຍສຸກດ້ວຍກາຍ (ນາມກາຍ) ບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍກ່າວສັນລະເສີນວ່າ "ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ"

໔. ເພາະລະສຸກ ແລະ ທຸກໄດ້ ເພາະໂສມະນັດ ແລະ ໂທມະນັດ ດັບໄປກ່ອນແລ້ວບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດ ເພາະອຸເປກຂາຢູ່

ດູຣາ ພິກຂຸທັງຫຼາຍນີ້ຮຽກວ່າ ສຳມາສະມາທິ

ດູຣາ ພິກຂຸທັງຫຼາຍ ນີ້ຮຽກວ່າ ທຸກຂະນິໂຣທະຄາມີນີປະຕິປະທາ ອະຣິຍະສັດ

[໔໐໓] ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທຳ ໃນທຳທັງຫຼາຍທັງພາຍໃນ ທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳ ເປັນເຫດເກີດທັງທຳເປັນເຫດດັບ ໃນທຳທັງຫຼາຍຢູ່

ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິເທົ່ານັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ແລະບໍ່ຍຶດໝັ້ນ ຖືໝັ້ນອັນໃດໃນໂລກ

ດູຣາ ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອະຣິຍະສັດ ໔ ຢູ່ເປັນແນວນີ້ແລ

**ໝວດສັດຈະຈົບ**

**ທຳມານຸປັດສະນາຈົບ**

## ອານິສົງແຫ່ງການຈະເລີນສະຕິປັດຖານ ໔ ປະການ

[໔໐໔] ດູຣາ ພິກຂຸທັງຫຼາຍ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໗ ປີ ເພິ່ງຫວັງໄດ້ຜົນຢ່າງໃດຢ່າງ ໑ ໃນ ໒ ຢ່າງນີ້ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໗ ປີ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໖ ປີ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໖ ປີຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໕ ປີ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໕ ປີ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໔ ປີ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໔ ປີ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໓ ປີ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໓ ປີ ຈົ່ງຍົກໄວ້ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໒ ປີ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໒ ປີ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໑ ປີ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑ ປີ ຈົ່ງຍົກໄວ້ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໗ ເດືອນ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໗ ເດືອນ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໖ ເດືອນເພິ່ງຫວັງ

ໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄືອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໖ ເດືອນ ຈົ່ງຍົກໄວ້ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໕ ເດືອນເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໕ ເດືອນ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໔ ເດືອນເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄືອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໔ ເດືອນ ຈົ່ງຍົກໄວ້ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໓ ເດືອນເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໓ ເດືອນ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໒ ເດືອນ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄືອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໒ ເດືອນ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໑ ເດືອນ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑ ເດືອນ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດເຄິ່ງເດືອນເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

ດູຣາ ພິກຂຸທັງຫຼາຍ ເຄິ່ງເດືອນຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໗ ວັນ ເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄືອະຣະຫັດຕະຜົນໃນປະຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

[໔໐໕] ດູຣາ ພິກຂຸທັງຫຼາຍ ທາງນີ້ເປັນທາງດຽວ ເພື່ອຄວາມບໍລິສຸດຂອງເຫຼົ່າສັດ ເພື່ອກ້າວຂ້າມໂສກະ ແລະ ປະຣິເທວະ ເພື່ອດັບທຸກ ແລະ ໂທມະນັດ ເພື່ອບັນລຸຍາຍະທຳເພື່ອເຮັດໃຫ້ແຈ້ງນິບພານທາງ ນີ້ ຄື ສະຕິປັດຖານ ໔ ປະການ ເຮົາອາໄສທາງດຽວນີ້ແລ້ວ ຈຶ່ງກ່າວຄຳດັ່ງພັນລະນາມາດັ່ງນີ້”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າດ້ວຍອາການຢ່າງນີ້ແລ

**ມະຫາສະຕິປັດຖານສູດທີ ໙ ຈົບ**

# ໑໐. ປາຍາສິສູດ

## ວ່າດ້ວຍເຈົ້າປາຍາສິ

[໔໐໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະກຸມານກັດສະປະ ກຳລັງຈາຣິກຢູ່ໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ເຖິງເມືອງເສຕັບພະຍະຂອງຊາວໂກສົນ ພັກຢູ່ໃນປ່າໄມ້ສີສຽດທາງທິດເໜືອເມືອງເສຕັບພະຍະ ສະໄໝນັ້ນ ເຈົ້າປາຍາສິປົກຄອງເມືອງເສຕັບພະຍະເຊິ່ງມີປະຊາກອນ ແລະ ສັດລ້ຽງຈຳນວນຫຼາຍ ມີພືດພັນທັນຍາຫານ ນ້ຳ ແລະ ຫຍ້າ ອຸດົມສົມບູນ ມີພຣະຣາດຊະຊັບທີ່ພຣະເຈົ້າປະເສນທິໂກສົນ ພຣະຣາດຊະທານປູນບຳເໜັດໃຫ້ເປັນຂອງຂວັນພິເສດ

## ເລື້ອງເຈົ້າປາຍາສິ

[໔໐໗] ສະໄໝນັ້ນ ເຈົ້າປາຍາສິ ມີຄວາມເຫັນຊົ່ວແນວນີ້ເກີດຂຶ້ນວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະໄດ້ຟັງຂ່າວວ່າ "ທ່ານສະມະນະກຸມານກັດສະປະ ຜູ້ເປັນສາວົກຂອງພຣະສະມະນະໂຄດົມ ກຳລັງຈາຣິກຢູ່ໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ປະມານ ໕໐໐ ອົງ ເດີນທາງມາເຖິງເມືອງເສຕັບພະຍະໂດຍລຳດັບ ກຳລັງພັກເຊົາຢູ່ໃນປ່າໄມ້ສີສຽດທາງທິດເໜືອຂອງເມືອງເສຕັບພະຍະ ທ່ານສະມະນະກຸມານກັດສະປະນັ້ນ ມີຊື່ສຽງດີງາມຂ່າລືໄປແນວນີ້ວ່າ "ເປັນຜູ້ສະຫຼາດຫຼັກແຫຼມ ມີປັນຍາເປັນພະຫູສູດ ກ່າວຖ້ອຍຄຳມ່ວນ ປະຕິພານດີເປັນຜູ້ຈະເລີນ ແລະ ເປັນພຣະອະຣະຫັນ ການໄດ້ເຫັນພຣະອະຣະຫັນແນວນັ້ນ ເປັນການດີແທ້" ຈາກນັ້ນພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະອອກຈາກເມືອງເສຕັບພະຍະຢ່າງລວມກັນເປັນໝູ່ ເປັນຄະນະ ມຸ່ງໜ້າໄປທາງທິດເໜືອສູ່ປ່າໄມ້ສີສຽດ

[໔໐໗] ໃນຂະນະນັ້ນ ເຈົ້າປາຍາສິ ຊົງພັກຜ່ອນກາງເວັນຢູ່ໃນຜາສາດຊັ້ນເທິງຊົງເຫັນພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະ ເຊິ່ງອອກຈາກເມືອງເສຕັບພະຍະ ຍ່າງລວມກັນເປັນໝູ່ ເປັນຄະນະ ມຸ່ງໜ້າໄປທາງທິດເໜືອສູ່ປ່າໄມ້ສີສຽດ ຈຶ່ງຊົງຮຽກເຈົ້າພະນັກງານມາຕັດຖາມວ່າ "ເຈົ້າພະນັກງານ ເຫດໃດ ພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະ ຈຶ່ງອອກຈາກເມືອງເສຕັບພະຍະຍ່າງລວມກັນ ເປັນໝູ່ເປັນຄະນະ ມຸ່ງໜ້າໄປທາງທິດເໜືອສູ່ປ່າໄມ້ສີສຽດ"

ເຈົ້າພະນັກງານ ທູນຕອບວ່າ "ຂ້າແຕ່ ພຣະອົງ ທ່ານສະມະນະກຸມານກັດສະປະຜູ້ເປັນສາວົກຂອງພຣະສະມະນະໂຄດົມ ກຳລັງຈາຣິກຢູ່ໃນແຄວ້ນໂກສົນພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ອົງ ເດີນທາງມາເຖິງເມືອງເສຕັບພະຍະໂດຍລຳດັບ ພັກເຊົາຢູ່ໃນປ່າໄມ້ສີສຽດທາງທິດເໜືອ ເມືອງເສຕັບພະຍະ ທ່ານສະມະນະກຸມານກັດສະປະນັ້ນ ມີຊື່ສຽງດີງາມຊ່າລືໄປແນວນີ້ວ່າ "ເປັນຜູ້ສະຫຼາດຫຼັກແຫຼມ ມີປັນຍາ ເປັນພະຫູສູດ ກ່າວຖ້ອຍຄຳມ່ວນປະຕິພານດີເປັນຜູ້ຈະເລີນ ແລະ ເປັນພຣະອະຣະຫັນ ພາມ ແລະ ຄະຫະບໍດີເຫຼົ່ານັ້ນ ຈັກເຂົ້າໄປຫາທ່ານສະມະນະກຸມານກັດສະປະ ທ່ານນັ້ນ ຂ້ານ້ອຍ"

ເຈົ້າປາຍາສິຮັບສັ່ງວ່າ "ເຈົ້າພະນັກງານ ຖ້າເປັນແນວນັ້ນ ທ່ານຈົ່ງເຂົ້າໄປຫາພາມ ແລະຄະຫະບໍດີຊາວເມືອງເສຕັບພະຍະເຖິງບ່ອນຢູ່ ບອກກັບພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະແນວນີ້ວ່າ "ທ່ານທັງຫຼາຍ ເຈົ້າປາຍາສິຮັບສັ່ງວ່າ "ໃຫ້ພວກທ່ານຖ້າ ເຈົ້າປາຍາສິກ່ອນເຈົ້າປາຍາສິຈະສະເດັດເຂົ້າໄປຫາທ່ານສະມະນະກຸມານກັດສະປະດ້ວຍ" ຄັ້ງກ່ອນທ່ານສະມະນະກຸມານກັດສະປະຊີ້ແຈ່ງໃຫ້ພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະຜູ້ໂງ່ ບໍ່ສະຫຼາດໄດ້ຮູ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີຢູ່ ເຈົ້າພະນັກງານ ອັນແທ້ຈິງ ໂລກອື່ນບໍ່ມີໂອປະປາຕິກະສັດບໍ່ມີ ຜົນວິບາກ ແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

ເຈົ້າພະນັກງານທູນຮັບສະໜອງພຣະດຳຣັດ ແລ້ວເຂົ້າໄປຫາພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະເຖິງບ່ອນຢູ່ ໄດ້ກ່າວກັບພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະ ແນວນີ້ວ່າ "ທ່ານທັງຫຼາຍ ເຈົ້າປາຍາສິຮັບສັ່ງວ່າ "ໃຫ້ພວກທ່ານຖ້າ ເຈົ້າປາຍາສິຈະສະເດັດເຂົ້າໄປຫາທ່ານສະມະນະກຸມານກັດສະປະນຳ"

[໔໐໘] ລຳດັບນັ້ນ ເຈົ້າປາຍາສິຫ້ອມລ້ອມດ້ວຍພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະ ສະເດັດເຂົ້າໄປຫາ ທ່ານພຣະກຸມານກັດສະປະເຖິງບ່ອນຢູ່ໃນປ່າໄມ້ສີສຽດ ໄດ້ຊົງສົນທັກທາຍປາໄສພໍເປັນທີ່ຊື່ນບານໃຈພໍເປັນທີ່ລະນຶກເຖິງກັນ ແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນແຫ່ງຕົນຝ່າຍພາມ ແລະ ຄະຫະບໍດີຊາວເມືອງເສຕັບພະຍະລາງພວກ ຂາບທ່ານພຣະກຸມານກັດສະປະ

ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ບາງພວກທັກທາຍປາໄສພໍເປັນທີ່ຊື່ນບານໃຈ ພໍເປັນທີ່ລະນຶກເຖິງກັນ ກັບທ່ານພຣະກຸມານກັດສະປະແລ້ວ ນັ່ງຢູ່ບ່ອນທີ່ສົມຄວນຂອງຕົນ ລາງພວກປະນົມມືໄຫວ້ໄປ ທາງທີ່ທ່ານພຣະກຸມານກັດສະປະນັ່ງຢູ່ແລ້ວນັ່ງລົງ ລາງພວກປະກາດຊື່ແລະ ຕະກູນແລ້ວນັ່ງລົງ ລາງພວກນັ່ງນິ່ງຢູ່

## ນັດຖິກະວາທະ

## ຄວາມເຫັນວ່າບໍ່ມີ

[໔໑໐] ລຳດັບນັ້ນ ເຈົ້າປາຍາສິເມື່ອປະທັບໃນບ່ອນສົມຄວນແລ້ວ ຈຶ່ງຕັດກັບທ່ານພຣະກຸມານກັດສະປະແນວນີ້ວ່າ "ທ່ານກັດສະປະ ຂ້າພະເຈົ້າມີວາທະແນວນີ້ ມີທິດຖິແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

ທ່ານພຣະກຸມານກັດສະປະຖວາຍພຣະພອນວ່າ "ຂໍຖວາຍພຣະພອນ ມະຫາບໍພິດ ອາດຕະມາບໍ່ເຄີຍເຫັນ ຫຼື ໄດ້ຍິນບຸກຄົນຜູ້ມີວາທະແນວນີ້ ມີທິດຖິແນວນີ້ ເປັນຫຍັງ ພຣະອົງຈຶ່ງຕັດແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະເຮັດຊົ່ວບໍ່ມີ"

## ອຸບປະມາດ້ວຍດວງຈັນ ແລະ ດວງອາທິດ

[໔໑໑] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຂໍຖວາຍພຣະພອນຖາມພຣະອົງໃນເລື້ອງນີ້ ໂຜດຕັດຕອບຕາມທີ່ພໍພຣະທະໄທ ພຣະອົງເຂົ້າພຣະທະໄທເລື້ອງນັ້ນວ່າແນວໃດ? ຄື "ດວງຈັນ ແລະ ດວງອາທິດມີໃນໂລກນີ້ ຫຼື ໂລກອື່ນ ເປັນເທບ ຫຼື ເປັນມະນຸດ"

"ທ່ານກັດສະປະ ດວງຈັນ ແລະ ດວງອາທິດມີໃນໂລກອື່ນ ບໍ່ແມ່ນມີໃນໂລກນີ້ ເປັນເທບບໍ່ແມ່ນເປັນມະນຸດ"

"ຂໍຖວາຍພຣະພອນ ມະຫາບໍພິດ ດ້ວຍເຫດແຫ່ງພຣະດຳຣັດຂອງພຣະອົງນີ້ແລ ຈຶ່ງສະແດງແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວມີ"

[໔໑໒] "ທ່ານກັດສະປະເວົ້າແນວນັ້ນກໍແມ່ນຢູ່ ແຕ່ຂ້າພະເຈົ້າ ກໍຍັງຄົງເຊື່ອໃນເລື້ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

"ຂໍຖວາຍພຣະພອນ ມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງ ຊົງເຂົ້າພຣະທະໄທແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະເຮັດຊົ່ວບໍ່ມີ" ມີຢູ່ບໍ?"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່!"

"ມະຫາບໍພິດ ອຸບປະມາດ້ວຍອັນໃດ?"

"ທ່ານກັດສະປະ ມິດ ອຳມາດ ຍາດສາຍໂລຫິດຂອງຂ້າພະເຈົ້າໃນໂລກນີ້ ເປັນຜູ້ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ປະພຶດຜິດໃນກາມເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ (ເຫັນຜິດ) ຕໍ່ມາ ພວກເຂົາເຈັບໄຂ້ໄດ້ຮັບທຸກຂະເວທະນາໜັກ ເມື່ອຂ້າພະເຈົ້າຮູ້ວ່າ "ເວລານີ້ພວກເຂົາຍັງບໍ່ຫາຍປ່ວຍ" ຈຶ່ງເຂົ້າໄປຢ້ຽມແລ້ວສັ່ງແນວນີ້ວ່າ "ທ່ານທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບຸກຄົນຜູ້ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງຂອງເຂົາມີຈິດພະຍາບາດ ເປັນມິດສາທິດຖິ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ (ຫຼື) ນະຣົກ"

ພວກທ່ານເປັນຜູ້ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ຖ້າຫາກຄຳຂອງສະມະນະພາມພວກນັ້ນເປັນຈິງ ພວກທ່ານຫຼັງຈາກຕາຍແລ້ວຈະໄດ້ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ (ຫຼື) ນະຣົກ

ຫຼັງຈາກຕາຍແລ້ວ ຖ້າພວກທ່ານ ໄດ້ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ (ຫຼື) ນະຣົກ ແທ້ ກໍຂໍໃຫ້ກັບມາບອກເຮົາແດ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ພວກທ່ານທີ່ນັ້ນ ພໍເປັນທີ່ເຊື່ອຖືໄວ້ວາງໃຈຂອງເຮົາ ສິ່ງທີ່ພວກທ່ານເຫັນ ກໍຄືກັນກັບສິ່ງທີ່ເຮົາເຫັນເອງ" ຄົນເຫຼົ່ານັ້ນ ຮັບຄຳຂອງຂ້າພະເຈົ້າແລ້ວ ແຕ່ບໍ່ມີໃຜກັບມາບອກ ບໍ່ສົ່ງຂ່າວມາບອກ ທ່ານກັດສະປະນີ້ແລ ເປັນເຫດເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

# ອຸບປະມາດ້ວຍໂຈນ

[໔໑໓] "ຂໍຖວາຍພຣະພອນມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຂໍຖວາຍພຣະພອນຖາມພຣະອົງໃນເລື້ອງນີ້ ໂຜດຕັດຕອບຕາມທີ່ພໍພຣະທະໄທ ພຣະອົງເຂົ້າພຣະທະໄທເລື້ອງນັ້ນວ່າແນວໃດ ພວກຣາດຊະບຸຣຸດຂອງພຣະອົງໃນໂລກນີ້ ຈັບໂຈນຜູ້ກໍ່ກຳຊົ່ວມາສະແດງແກ່ພຣະອົງວ່າ "ຂ້າແດ່ ພຣະອົງ ນີ້ເປັນໂຈນຜູ້ກໍ່ກຳຊົ່ວຕໍ່ພຣະອົງ ພຣະອົງໂຜດລົງພຣະອາດຊະຍາແກ່ໂຈນນີ້ຕາມພະປະສົງເທີ້ນ" ຖ້າພຣະອົງຈະເພິ່ງຮັບສັ່ງແນວນີ້ວ່າ "ຖ້າເປັນແນວນັ້ນ ພວກທ່ານຈົ່ງໃຊ້ເຊືອກທີ່ໝັ້ນ ຈັບບຸຣຸດນີ້ມັດແຂນໄຂວ່ຫຼັງໃຫ້ແໜ້ນ ແລ້ວແຖຜົມນຳເອົາໄປປະຈານຕຣະເວນຈາກຖະໜົນໜຶ່ງໄປສູ່ອີກຖະໜົນໜຶ່ງ ຈາກສີ່ແຍກໜຶ່ງໄປສູ່ສີ່ແຍກໜຶ່ງ ພ້ອມກັບຕີກອງສອງໜ້າໃຫ້ສຽງດັ່ງເປັນຕາຢ້ານ ນຳໂຕອອກທາງປະຕູດ້ານທິດໃຕ້ຕັດຫົວທີ່ເດີ່ນປະຫານທາງທິດໃຕ້ຂອງເມືອງ" ຣາດຊະບຸຣຸດທູນຮັບສະໜອງພຣະດຳຣັດແລ້ວ ໃຊ້ເຊືອກທີ່ໝັ້ນ ຈັບບຸຣຸດນີ້ມັດແຂນໄຂວ່ຫຼັງໃຫ້ແໜ້ນ ແລ້ວແຖຜົມນຳໂຕອອກໄປປະຈານຈາກຖະໜົນໜຶ່ງໄປສູ່ຖະໜົນໜຶ່ງ ຈາກສີ່ແຍກໜຶ່ງໄປສູ່ສີ່ແຍກໜຶ່ງ ພ້ອມກັບຕີກອງສອງໜ້າສຽງດັງເປັນຕາຢ້ານ ນຳໂຕອອກໄປທາງປະຕູດ້ານທິດໃຕ້ແລ້ວໃຫ້ນັ່ງ ເດີ່ນປະຫານທາງທິດໃຕ້ຂອງເມືອງ ໂຈນນັ້ນ ຈະໄດ້ຮັບການຜ່ອນຜັນຈາກເພດຊະຄາດຕາມຄຳຂໍບໍວ່າ "ຂໍໃຫ້ທ່ານເພດຊະຄາດໂຜດຖ້າຈົນກວ່າຂ້າພະເຈົ້າຈະໄດ້ໄປແຈ້ງແກ່ມິດອຳມາດ ຫຼື ຍາດສາຍໂລຫິດໃນບ້ານນັ້ນ ຫຼື ນິຄົມນັ້ນກ່ອນ ແລ້ວຈະກັບມາ" ຈັ່ງຊັ້ນບໍ? ຫຼື ວ່າ ເພດຊະຄາດຄວນທຳການຕັດຫົວໂຈນຜູ້ກຳລັງອ້ອນວອນຢູ່ທັນທີເລີຍ"

"ທ່ານກັດສະປະ ໂຈນບໍ່ຄວນໄດ້ຮັບການຜ່ອນຜັນ ຈາກເພດຊະຄາດຕາມຄຳຂໍທີ່ວ່າ "ຂໍໃຫ້ທ່ານເພດຊະຄາດໂຜດຖ້າຈົນກວ່າ ຂ້າພະເຈົ້າຈະໄດ້ໄປແຈ້ງແກ່ມິດອຳມາດ ຫຼື ຍາດສາຍໂລຫິດໃນບ້ານນັ້ນ ຫຼື ນິຄົມນັ້ນກ່ອນ ແລ້ວຈະກັບມາ" ແທ້ທີ່ຈິງເພດຊະຄາດຄວນຕັດຫົວໂຈນຜູ້ກຳລັງອ້ອນວອນຢູ່ນັ້ນເລີຍທັນທີ"

"ຂໍຖວາຍພຣະພອນມະຫາບໍພິດ ໂຈນນັ້ນເປັນມະນຸດ ຍັງບໍ່ໄດ້ຮັບການຜ່ອນຜັນຈາກເພດຊະຄາດທີ່ເປັນມະນຸດຕາມຄຳຂໍທີ່ວ່າ "ຂໍໃຫ້ທ່ານເພດຊະຄາດໂຜດຖ້າຈົນກວ່າ ຂ້າພະເຈົ້າຈະໄດ້ໄປແຈ້ງແກ່ມິດອຳມາດ ຫຼື ຍາດສາຍໂລຫິດໃນບ້ານນັ້ນ ຫຼື ນິຄົມນັ້ນກ່ອນ ແລ້ວຈະກັບມາ" ມິດອຳມາດຍາດສາຍໂລຫິດຂອງພຣະອົງ ເປັນຜູ້ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍທຸກຄະຕິວິນິບາດ (ຫຼື) ນະຣົກ ຈະໄດ້ຮັບຜ່ອນຜັນຈາກທ້າວນິຣະຍະບານ ຕາມຄຳຂໍທີ່ວ່າ "ຂໍໃຫ້ທ້າວນິຣະຍະບານ ໂຜດຖ້າຈົນກວ່າຂ້າພະເຈົ້າຈະໄດ້ໄປແຈ້ງແກ່ເຈົ້າປາຍາສິວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ" ຫຼື ມະຫາບໍພິດ ດ້ວຍ

ເຫດແຫ່ງພຣະດຳຣັດຂອງພຣະອົງນີ້ແລ ຈຶ່ງສະແດງແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ"

[໔໑໘] "ທ່ານກັດສະປະເວົ້າແນວນັ້ນກໍແມ່ນຢູ່ ແຕ່ຂ້າພະເຈົ້າກໍຍັງຄົງເຊື່ອໃນເລື່ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

"ຂໍຖວາຍພຣະພອນ ມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງຊົງເຂົ້າພຣະທະໄທແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່ບໍ?"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່"

"ມະຫາບໍພິດ ອຸບປະມາດ້ວຍອັນໃດ?"

"ທ່ານກັດສະປະ ມິດອຳມາດຍາດສາຍໂລຫິດຂອງຂ້າພະເຈົ້າ ໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍເພ່ງເລັງຢາກໄດ້ຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ (ເຫັນຖືກ) ຕໍ່ມາພວກເຂົາປ່ວຍໄດ້ຮັບທຸກຂະເວທະນາເປັນໄຂ້ໜັກ ເມື່ອຂ້າພະເຈົ້າຮູ້ວ່າ "ເວລານີ້ພວກເຂົາຍັງບໍ່ຫາຍປ່ວຍ" ຈຶ່ງເຂົ້າໄປຢ້ຽມແລ້ວສັ່ງແນວນີ້ວ່າ "ທ່ານທັງຫຼາຍມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫຼັງຈາກຕາຍແລ້ວຈະໄດ້ໄປເກີດ ໃນສຸກຄະຕິໂລກສະຫວັນ" ພວກທ່ານເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຖ້າຫາກຄຳຂອງສະມະນະພາມພວກນັ້ນເປັນຈິງພວກທ່ານຫຼັງຈາກຕາຍແລ້ວຈະໄດ້ໄປເກີດ ໃນສຸກຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວຖ້າພວກທ່ານ ໄດ້ໄປເກີດໃນສຸກຄະຕິໂລກສະຫວັນຈິງ ກໍຂໍໃຫ້ກັບມາບອກເຮົາແດ່ວ່າ "ແມ່ນເພາະເຫດນີ້ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ" ພວກ

ທ່ານທັ່ງນັ້ນພໍເປັນທີ່ເຊື່ອຖືໄວ້ວາງໃຈຂອງເຮົາ ສິ່ງທີ່ພວກທ່ານເຫັນກໍຄືກັນກັບສິ່ງທີ່ເຮົາເຫັນເອງ" ຄົນເຫຼົ່ານັ້ນ ຮັບຄຳຂອງຂ້າພະເຈົ້າແລ້ວ ແຕ່ບໍ່ກັບມາບອກ ບໍ່ສົ່ງຂ່າວມາບອກ ທ່ານກັດສະປະນີ້ ແລ ເປັນເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

## ອຸປະມາດ້ວຍບຸຣຸດໃນຂຸມອຸດຈາຣະ

[໔໑໕] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຈະຍົກອຸປະມາຖວາຍພຣະອົງໃຫ້ສະດັບຕໍ່ໄປວ່າ ຄົນສະຫຼາດລາງພວກໃນໂລກນີ້ ເຂົ້າໃຈຄວາມໝາຍແຫ່ງຖ້ອຍຄຳໄດ້ດ້ວຍອຸປະມາໂວຫານປຽບ ຄື ບຸຣຸດຈົມລົງໃນຂຸມອຸດຈາຣະຫຼືບຫົວ ເມື່ອເປັນແນວນັ້ນ ຖ້າພຣະອົງຈະເພິ່ງຮັບສັ່ງຣາດຊະບຸຣຸດວ່າ "ພວກທ່ານຈົ່ງຊ່ອຍກັນຍົກບຸຣຸດນັ້ນຂຶ້ນຈາກຂຸມອຸດຈາຣະນີ້" ພວກຣາດຊະບຸຣຸດທູນຮັບສະໜອງພຣະດຳຣັດແລ້ວ ຊ່ອຍກັນຍົກບຸຣຸດນັ້ນຂຶ້ນມາຈາກຂຸມອຸດຈາຣະ ຖ້າພຣະອົງຈະເພິ່ງຮັບສັ່ງອີກວ່າ "ພວກທ່ານຈົ່ງເອົາຄິ້ວໄມ້ໄຜ່ຂູດອຸດຈາຣະອອກຈາກຮ່າງກາຍຂອງບຸຣຸດນັ້ນໃຫ້ໝົດ" ພວກຣາດຊະບຸຣຸດທູນຮັບສະໜອງພຣະດຳຣັດແລ້ວເອົາຄິ້ວໄມ້ໄຜ່ຂູດອຸດຈາຣະອອກຈາກຮ່າງກາຍຂອງບຸຣຸດນັ້ນໃຫ້ໝົດ ຖ້າພຣະອົງຈະເພິ່ງຮັບສັ່ງອີກວ່າ "ພວກທ່ານຈົ່ງເອົາດິນສີເຫຼືອງຜັດຖູຮ່າງກາຍຂອງບຸຣຸດນັ້ນຈັກ ໓ ຄັ້ງ" ພວກຣາດຊະບຸຣຸດທູນຮັບສະໜອງພຣະດຳຣັດແລ້ວ ເອົາດິນສີເຫຼືອງຜັດຖູຮ່າງກາຍຂອງບຸຣຸດນັ້ນ ໓ ເທື່ອ ຖ້າພຣະອົງຈະເພິ່ງຮັບສັ່ງອີກວ່າ "ພວກທ່ານຈົ່ງເອົານ້ຳມັນທາບຸຣຸດນັ້ນ ແລ້ວລູບທາດ້ວຍຈຸນນະຢ່າງດີໃຫ້ສະອາດສົດໃສ ຈັກ ໓ ຄັ້ງ" ພວກຣາດຊະບຸຣຸດເອົານ້ຳມັນທາບຸຣຸດນັ້ນແລ້ວລູບທາດ້ວຍແປ້ງຝຸ່ນຢ່າງດີ ໃຫ້ສະອາດສົດໃສ ໓ ຄັ້ງ ຖ້າພຣະອົງຈະເພິ່ງຮັບສັ່ງອີກວ່າ "ພວກທ່ານຈົ່ງຕັດຜົມ ແລະ ແຖໜວດບຸຣຸດນັ້ນ" ພວກຣາດຊະບຸຣຸດຕັດຜົມ ແລະ ແຖໜວດຂອງບຸຣຸດນັ້ນ ຖ້າພຣະອົງຈະເພິ່ງຮັບສັ່ງອີກວ່າ "ພວກທ່ານຈົ່ງນຳພວງດອກໄມ້ເຄື່ອງລູບທາ ແລະ ຜ້າຣາຄາແພງໄປໃຫ້ບຸຣຸດນັ້ນໃສ່" ພວກຣາດຊະບຸຣຸດນຳພວງດອກໄມ້ເຄື່ອງລູບທາ ແລະ ຜ້າຣາຄາແພງໄປໃຫ້ບຸຣຸດນັ້ນໃສ່ ຖ້າພຣະອົງຈະເພິ່ງຮັບສັ່ງອີກວ່າ "ພວກທ່ານຈົ່ງເຊີນບຸຣຸດນັ້ນຂຶ້ນເທິງຜາສາດບົວຣະບັດ ດ້ວຍກາມມະຄຸນ ໕" ພວກຣາດຊະບຸຣຸດເຊີນບຸຣຸດນັ້ນຂຶ້ນໄປຢູ່ເທິງຜາສາດບົວຣະບັດດ້ວຍກາມມະຄຸນ ໕

ຂໍຖວາຍພຣະພອນ ມະຫາບໍພິດ ພຣະອົງຈະເຂົ້າພຣະທະໄທເລື້ອງນັ້ນວ່າແນວໃດ? ບຸຣຸດນັ້ນອາບນ້ຳ ລູບທາດີແລ້ວ ຕັດຜົມ ແຖໜວດຢ່າງດີ ໃສ່ພວງດອກໄມ້ ແລະ ເຄື່ອງປະດັບນຸ່ງຜ້າຂາວອາໄສຢູ່ເທິງຜາສາດຊັ້ນດີ ເອີບອີ່ມ ພຽບພ້ອມໄດ້ຮັບການບົວຣະບັດດ້ວຍກາມມະຄຸນ ໕ ບຸຣຸດຜູ້ນັ້ນ ຍັງຈະຕ້ອງການກັບໄປຢູ່ໃນຂຸມອຸດຈາຣະນັ້ນອີກຢູ່ບໍ?"

"ບໍ່ເປັນແນວນັ້ນທ່ານກັດສະປະ"

"ເພາະເຫດໃດຈຶ່ງບໍ່ເປັນແນວນັ້ນ"

"ທ່ານກັດສະປະ ເພາະຊຸມອຸດຈາຣະບໍ່ສະອາດ ຄື ເປັນສິ່ງທັງບໍ່ສະອາດ ທັງນັບວ່າບໍ່ສະອາດ ທັງມີກິ່ນເໝັນ ທັງນັບວ່າມີກິ່ນເໝັນ ທັງເປັນຕາຂີ້ດຽດ ທັງນັບວ່າເປັນຕາຂີ້ດຽດ ທັງເປັນຕາໜ່າຍ ທັງນັບວ່າເປັນຕາໜ່າຍ"

"ຂໍຖວາຍພຣະພອນ ມະຫາບໍພິດ ມະນຸດກໍເຊັ່ນດຽວກັນ ຄື ສຳລັບພວກເທບພວກມະນຸດເປັນຜູ້ບໍ່ສະອາດທັງນັບວ່າບໍ່ສະອາດ ເປັນຜູ້ມີກິ່ນເໝັນທັງນັບວ່າມີກິ່ນເໝັນ ເປັນຜູ້ເປັນຕາຂີ້ດຽດທັງນັບວ່າເປັນຕາຂີ້ດຽດ ເປັນຜູ້ເປັນຕາໜ່າຍ ທັງນັບວ່າເປັນຕາໜ່າຍ ກິ່ນມະນຸດຍ່ອມຟຸ້ງໄປໃນໝູ່ເທບຕະຫຼອດ ໑໐໐ ໂຍດ ກໍຖ້າມິດ ອຳມາດ ຍາດສາຍໂລຫິດ ຂອງພຣະອົງຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າຄຳສໍ່ສຽດ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດບໍ່ພະຍາບາດເປັນສຳມາທິດຖິ ຫຼັງຈາກຕາຍແລ້ວພວກເຂົາ ກໍໄປເກີດໃນສຸກຄະຕິໂລກສະຫວັນ ແລ້ວຈະກັບມາທູນພຣະອົງວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ" ບໍ? ມະຫາບໍພິດ ດ້ວຍເຫດແຫ່ງພຣະດຳຣັດຂອງພຣະອົງແມ່ນແນວນີ້ ຈຶ່ງສະແດງແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ"

[໔໑໖] "ທ່ານກັດສະປະ ເວົ້າແນວນັ້ນກໍແມ່ນຢູ່ ແຕ່ຂ້າພະເຈົ້າກໍຍັງຄົງເຊື່ອໃນເລື້ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

"ຂໍຖວາຍພຣະພອນ ມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງຊົງເຂົ້າພຣະຫະໄທແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່ບໍ?"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່"

"ມະຫາບໍພິດ ອຸບປະມາດ້ວຍຫຍັງນໍ?"

"ທ່ານກັດສະປະ ມິດອຳມາດຍາດສາຍໂລຫິດຂອງຂ້າພະເຈົ້າໃນໂລກນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການ

ປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາ ຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມປະໝາດ ຕໍ່ມາພວກເຂົາປ່ວຍໄດ້ຮັບທຸກຂະເວທະນາເປັນໄຂ້ໜັກ ເມື່ອຂ້າພະເຈົ້າຮູ້ວ່າ “ເວລານີ້ ພວກເຂົາຍັງບໍ່ຫາຍປ່ວຍ” ຈຶ່ງເຂົ້າໄປຢ້ຽມແລ້ວສັ່ງແນວນີ້ວ່າ “ທ່ານທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ “ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະ ເມໄຣອັນເປັນບ່ອນຕັ້ງແຫ່ງຄວາມປະໝາດ ຫຼັງຈາກຕາຍໄປແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ຢູ່ຮ່ວມກັບເທບຊັ້ນຕາວະຕິງສາ” ທ່ານທັງຫຼາຍເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະ ເມໄຣອັນເປັນບ່ອນຕັ້ງແຫ່ງຄວາມປະໝາດ ຖ້າຫາກຄຳຂອງສະມະນະພາມພວກນັ້ນເປັນຈິງ ພວກທ່ານຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ຢູ່ຮ່ວມກັບເທບຊັ້ນຕາວະຕິງສາ ຫຼັງຈາກຕາຍແລ້ວຖ້າພວກທ່ານ ໄດ້ໄປເກີດໃນສຸກຄະຕິໂລກສະຫວັນ ຢູ່ຮ່ວມກັບພວກເທບຊັ້ນຕາວະຕິງສາແລ້ວ ກໍຂໍໃຫ້ກັບມາບອກເຮົາແດ່ວ່າ “ແມ່ນເພາະເຫດນີ້ ໂລກອື່ນມີໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ” ພວກທ່ານທໍ່ນັ້ນພໍເປັນທີ່ເຊື່ອຖືໄວ້ວາງໃຈຂອງເຮົາໄດ້ສິ່ງທີ່ພວກທ່ານເຫັນກໍຄືກັນກັບສິ່ງທີ່ເຮົາເຫັນເອງ” ຄົນເຫຼົ່ານັ້ນຮັບຄຳຂອງຂ້າພະເຈົ້າແລ້ວ ແຕ່ບໍ່ກັບມາບອກ ບໍ່ສົ່ງຂ່າວມາບອກ ທ່ານກັດສະປະນີ້ແລ ເປັນເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ “ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ”

## ອຸບປະມາດ້ວຍເທບຊັ້ນຕາວະຕິງສາ

[໔໑໗] “ຂໍຖວາຍພຣະພອນມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຂໍຖວາຍພຣະພອນຖາມພຣະອົງໃນເລື້ອງນີ້ ໂຜດຕັດຕອບຕາມທີ່ພໍພຣະທະໄທ ໑໐໐ ປີ ຂອງມະນຸດເທົ່າກັບຄືນ ແລະ ວັນໜຶ່ງຂອງພວກເທບຊັ້ນຕາວະຕິງສາ ໓໐ ຣາຕີ ໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນເປັນ ໑ ປີ ໑,໐໐໐ ປີທິບ ໂດຍປີນັ້ນ ເປັນປະມານອາຍຸຂອງພວກເທບຊັ້ນຕາວະຕິງສາ ມິດ ອຳມາດ ຍາດສາຍໂລຫິດ ຂອງພຣະອົງ ຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະ ເມໄຣ ອັນເປັນບ່ອນຕັ້ງແຫ່ງຄວາມປະໝາດ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ ຢູ່ຮ່ວມກັບພວກເທບຊັ້ນຕາວະຕິງສາ ຫາກພວກເຂົາຄິດແນວນີ້ວ່າ “ຖ້າເວລາພວກເຮົາອີ່ມອົກອີ່ມໃຈພຸ້ງບພ້ອມ ໄດ້ຮັບການບົວຣະບັດດ້ວຍກາມມະຄຸນ ໕ ທີ່ເປັນທິບຈັກ ໔໓ ມື້ກ່ອນ ຈຶ່ງຄ່ອຍໄປຂາບ

ທູນເຈົ້າປາຍາສິວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ" ພວກເຂົາເພິ່ງກັບມາຂາບທູນພຣະອົງວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ" ບໍ? ມະຫາບໍພິດ?"

"ບໍ່ເປັນແນວນັ້ນທ່ານກັດສະປະ ແທ້ທີ່ຈິງພວກເຮົາຄົງຕາຍໄປດົນແລ້ວແຕ່ຜູ້ໃດເດບອກທ່ານກັດສະປະວ່າ "ພວກເທບຊັ້ນຕາວະຕິງສາມີຢູ່" ຫຼືວ່າ "ພວກເທບຊັ້ນຕາວະຕິງສາມີອາຍຸຍືນທີ່ນີ້" ພວກເຮົາບໍ່ເຊື່ອທ່ານກັດສະປະວ່າ "ພວກເທບຊັ້ນຕາວະຕິງສາມີຢູ່" ຫຼືວ່າ "ພວກເທບຊັ້ນຕາວະຕິງສາມີອາຍຸຍືນທີ່ນີ້"

## ອຸບປະມາດ້ວຍຄົນຕາບອດແຕ່ກຳເນີດ

[໔໑໘] "ຂໍຖວາຍພຣະພອນ ກມະຫາບໍພິດ ປຽບ ຄື ຄົນຕາບອດແຕ່ກຳເນີດ ບໍ່ອາດເຫັນຮູບສີດຳ ແລະ ຮູບສີຂາວ ບໍ່ອາດເຫັນຮູບສີຂຽວ ບໍ່ອາດເຫັນຮູບສີເຫຼືອງ ບໍ່ອາດເຫັນຮູບສີແດງ ບໍ່ອາດເຫັນຮູບສີແດງຝາງ ບໍ່ອາດເຫັນຮູບທີ່ຮາບພຽງ ແລະ ຮູບທີ່ຫຼຸບໂນນ ບໍ່ອາດເຫັນຮູບດວງດາວ ບໍ່ອາດເຫັນດວງຈັນ ແລະ ດວງອາທິດ ເຂົາຈະເພິ່ງເວົ້າແນວນີ້ວ່າ

"ຮູບສີດຳ ແລະ ຮູບສີຂາວບໍ່ມີ ຄົນທີ່ເຫັນຮູບສີດຳ ແລະ ຮູບສີຂາວກໍບໍ່ມີ
ຮູບສີຂຽວບໍ່ມີ ຄົນທີ່ເຫັນຮູບສີຂຽວກໍບໍ່ມີ
ຮູບສີເຫຼືອງບໍ່ມີ ຄົນທີ່ເຫັນຮູບສີເຫຼືອງກໍບໍ່ມີ
ຮູບສີແດງບໍ່ມີ ຄົນທີ່ເຫັນຮູບສີແດງກໍບໍ່ມີ
ຮູບສີແດງຝາງບໍ່ມີ ຄົນທີ່ເຫັນຮູບສີແດງຝາງກໍບໍ່ມີ
ຮູບທີ່ຮຽບ ແລະ ຮູບທີ່ຫຼຸບໂນນ ບໍ່ມີຄົນທີ່ເຫັນຮູບທີ່ຮາບພຽງ ແລະ ຮູບທີ່ຫຼຸບໂນນກໍບໍ່ມີ
ຮູບດວງດາວບໍ່ມີ ຄົນທີ່ເຫັນຮູບດວງດາວກໍບໍ່ມີ
ດວງຈັນ ແລະ ດວງອາທິດບໍ່ມີ ຄົນທີ່ເຫັນດວງຈັນ ແລະ ດວງອາທິດກໍບໍ່ມີ"

ຂໍຖວາຍພຣະພອນມະຫາບໍພິດ ຄົນນັ້ນເມື່ອຈະເວົ້າວ່າ "ເຮົາບໍ່ຮູ້ສິ່ງນັ້ນ ບໍ່ເຫັນສິ່ງນັ້ນ ເພາະສະນັ້ນ ສິ່ງນັ້ນຈຶ່ງບໍ່ມີ" ຊື່ວ່າເວົ້າຖືກບໍ?"

"ບໍ່ຖືກ ທ່ານກັດສະປະ ເພາະວ່າ
ຮູບສີດຳ ແລະ ຮູບສີຂາວມີ ຄົນທີ່ເຫັນຮູບສີດຳ ແລະ ຮູບສີຂາວກໍມີ
ຮູບສີຂຽວມີ ຄົນທີ່ເຫັນຮູບສີຂຽວກໍມີ
ຮູບສີເຫຼືອງມີ ຄົນທີ່ເຫັນຮູບສີເຫຼືອງກໍມີ
ຮູບສີແດງມີ ຄົນທີ່ເຫັນຮູບສີແດງກໍມີ
ຮູບສີແດງຝາງມີ ຄົນທີ່ເຫັນຮູບສີແດງຝາງກໍມີ

ຮູບທີ່ຮາບພຽງ ແລະ ຮູບທີ່ຫຼຸບໂນນມີ ຄົນທີ່ເຫັນຮູບທີ່ຮາບພຽງແລະຮູບທີ່ຫຼຸບໂນນກໍມີ
ຮູບດວງດາວມີ ຄົນທີ່ເຫັນຮູບດວງດາວກໍມີ
ດວງຈັນ ແລະດວງອາທິດມີ ຄົນທີ່ເຫັນດວງຈັນ ແລະ ດວງອາທິດກໍມີ

ທ່ານກັດສະປະ ຄົນຜູ້ນັ້ນເມື່ອຈະເວົ້າວ່າ "ເຮົາບໍ່ຮູ້ສິ່ງນັ້ນ ບໍ່ເຫັນສິ່ງນັ້ນ ເພາະສະນັ້ນສິ່ງນັ້ນຈຶ່ງບໍ່ມີ" ຊື່ວ່າເວົ້າບໍ່ຖືກ"

"ຂໍຖວາຍພຣະພອນ ມະຫາບໍພິດ ພຣະອົງກໍເຊັ່ນດຽວກັບຄົນທີ່ຕາບອດແຕ່ກໍາເນີດທີ່ຕັດກັບອາດຕະມາແນວນີ້ວ່າ "ກໍຜູ້ໃດເດບອກທ່ານກັດສະປະວ່າ "ພວກເທບຊັ້ນຕາວະຕິງສາມີ" ຫຼືວ່າ "ພວກເທບຊັ້ນຕາວະຕິງສາມີອາຍຸຍືນທໍ່ນີ້" ພວກເຮົາບໍ່ເຊື່ອທ່ານກັດສະປະວ່າ "ພວກເທບຊັ້ນຕາວະຕິງສາມີ" ຫຼື ວ່າ "ພວກເທບຊັ້ນຕາວະຕິງສາ ມີອາຍຸຍືນທໍ່ນີ້" ຂໍຖວາຍພຣະພອນມະຫາບໍພິດ ຄົນຈະເຫັນໂລກອື່ນໄດ້ດ້ວຍຕາເນື້ອ ດັ່ງທີ່ພຣະອົງຊົງເຂົ້າພຣະທະໄທບໍ່ໄດ້ ສະມະນະພາມຜູ້ຢູ່ໃນເສນາສະນະອັນສະຫງັດໃນປ່າໃຫຍ່ ບໍ່ປະໝາດມີຄວາມພຽນ ອຸທິດກາຍ ແລະ ໃຈຢູ່ເຮັດຕາທິບໃຫ້ບໍລິສຸດຍ່ອມເຫັນໂລກນີ້ ໂລກອື່ນ ຕະຫຼອດເຖິງເຫຼົ່າໂອປະປາຕິກະສັດໄດ້ ດ້ວຍຕາທິບອັນບໍລິສຸດເກີນກວ່າຕາຂອງມະນຸດ ຄົນທໍາມະດາຜູ້ບໍ່ເຝິກຕົນບໍ່ອາດຈະເຫັນໂລກອື່ນໄດ້ດ້ວຍຕາເນື້ອ ດັ່ງທີ່ພຣະອົງຊົງເຂົ້າພຣະທະໄທ ຂໍຖວາຍພຣະພອນມະຫາບໍພິດ ດ້ວຍເຫດແຫ່ງພຣະດໍາຣັດຂອງພຣະອົງແມ່ນນີ້ ຈຶ່ງສະແດງແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກໍາທີ່ເຮັດດີແລະ ເຮັດຊົ່ວມີ"

[໔໑໗] "ທ່ານກັດສະປະເວົ້າແນວນັ້ນກໍຈິງຢູ່ ແຕ່ຂ້າພະເຈົ້າກໍຍັງຄົງເຊື່ອໃນເລື້ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກໍາທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

"ຂໍຖວາຍພຣະພອນ ມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງຊົງເຂົ້າພຣະທະໄທແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກໍາທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່ບໍ?"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກໍາທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່"

"ມະຫາບໍພິດອຸບປະມາດ້ວຍຫຍັງ?"

"ທ່ານກັດສະປະ ຂ້າພະເຈົ້າເຫັນສະມະນະພາມໃນໂລກນີ້ ຜູ້ມີສິນ ມີກັນລະຍານະທໍາຢາກມີຊີວິດຢູ່ບໍ່ຢາກຕາຍ ຮັກຄວາມສຸກ ກຽດຄວາມທຸກ ຈຶ່ງຄິດແນວນີ້ວ່າ "ຖ້າທ່ານສະມະນະ

ພາມຜູ້ມີສິນ ມີກັນລະຍານະທຳເຫຼົ່ານີ້ ເພິ່ງຮູ້ແນວນີ້ວ່າ "ເມື່ອພວກເຮົາຕາຍຈາກໂລກນີ້ແລ້ວຄຸນຄວາມດີຈະຜາກົດ" ທ່ານເຫຼົ່ານີ້ຄົງດື່ມຢາພິດ ໃຊ້ສາດຕາຂ້າໂຕຕາຍ ຜູກຄໍຕາຍ ຫຼື ໂດດເຫວຕາຍໄປແລ້ວ ແຕ່ເພາະທ່ານເຫຼົ່ານັ້ນບໍ່ຮູ້ແນວນີ້ວ່າ "ເມື່ອພວກເຮົາຕາຍຈາກໂລກນີ້ແລ້ວຄຸນຄວາມດີຈະຜາກົດ" ສະນັ້ນ ທ່ານເຫຼົ່ານັ້ນ ຈຶ່ງຢາກມີຊີວິດຢູ່ບໍ່ຢາກຕາຍ ຮັກຄວາມສຸກ ກຽດຄວາມທຸກ ທ່ານກັດສະປະນີ້ແລ ເປັນເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

## ອຸບປະມາດ້ວຍສະຕີຖືພາ

[໔໔໐] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຈະຍົກອຸບປະມາຖວາຍພຣະອົງໃຫ້ສະດັບດັ່ງນີ້ວ່າ ຄົນສະຫຼາດລາງພວກໃນໂລກນີ້ ເປັນຜູ້ເຂົ້າໃຈຄວາມໝາຍໃນຄຳເວົ້າໄດ້ດ້ວຍອຸບປະມາໂວຫານ ເລື້ອງເຄີຍມີມາແລ້ວ ພາມຄົນໜຶ່ງມີພັນລະຍາ ໒ ຄົນ ບຸດຂອງພັນລະຍາຄົນໜຶ່ງ ມີອາຍຸ ໑໐ ປີ ຫຼື ໑໒ ປີ ພັນລະຍາອີກຄົນໜຶ່ງ ຖືພາໃກ້ຈະເກີດລູກຕໍ່ມາພາມເສຍຊີວິດລົງ ຊາຍໜຸ່ມເວົ້າກັບແມ່ລ້ຽງແນວນີ້ວ່າ "ແມ່ ຊັບ ທັນຍະຊາດ ເງິນ ຫຼື ຄຳທັງໝົດລ້ວນເປັນຂອງເຮົາ ແມ່ບໍ່ມີສ່ວນແບ່ງໃນຊັບສົມບັດນີ້ ໂຜດມອບມໍລະດົກຂອງພໍ່ແກ່ເຮົາ" ເມື່ອຊາຍໜຸ່ມກ່າວແນວນີ້ ນາງພາມມະນີນັ້ນກ່າວກັບຊາຍໜຸ່ມນັ້ນແນວນີ້ວ່າ "ລູກເອີຍເຈົ້າຈົ່ງລໍຖ້າຈົນກວ່າແມ່ຈະເກີດລູກ ຖ້າເດັກນ້ອຍທີ່ເກີດມາເປັນຊາຍເຂົາຈະໄດ້ຮັບສ່ວນແບ່ງເຄິ່ງໜຶ່ງ ຖ້າເດັກນ້ອຍທີ່ເກີດມາເປັນແມ່ຍິງ ເຂົາຈະເປັນຜູ້ຮັບໃຊ້ຂອງເຈົ້າ"

ແມ່ນເທື່ອທີ ໒ ຊາຍໜຸ່ມກໍເວົ້າກັບແມ່ລ້ຽງອີກວ່າ "ແມ່ ຊັບ ທັນຍະຊາດ ເງິນ ຫຼື ຄຳທັງໝົດລ້ວນເປັນຂອງເຮົາ ແມ່ບໍ່ມີສ່ວນແບ່ງໃນຊັບສົມບັດນີ້ ໂຜດມອບມໍລະດົກຂອງພໍ່ແກ່ເຮົາ"

ແມ່ນເທື່ອທີ ໒ ນາງ ພາມມະນີກໍກ່າວກັບຊາຍໜຸ່ມນັ້ນອີກວ່າ "ລູກເອີຍ ເຈົ້າຈົ່ງລໍຖ້າຈົນກວ່າແມ່ຈະເກີດລູກ ຖ້າເດັກນ້ອຍທີ່ເກີດມາເປັນຊາຍເຂົາຈະໄດ້ຮັບສ່ວນແບ່ງເຄິ່ງໜຶ່ງ ຖ້າເດັກນ້ອຍທີ່ເກີດມາເປັນແມ່ຍິງ ເຂົາຈະເປັນຜູ້ຮັບໃຊ້ຂອງເຈົ້າ"

ແມ່ນເທື່ອທີ ໓ ຊາຍ ໜຸ່ມກໍເວົ້າກັບແມ່ລ້ຽງອີກວ່າ "ແມ່ ຊັບ ທັນຍະຊາດ ເງິນ ຫຼື ຄຳທັງໝົດລ້ວນເປັນຂອງເຮົາ ແມ່ບໍ່ມີສ່ວນແບ່ງໃນຊັບສົມບັດນີ້ ໂຜດມອບມໍລະດົກຂອງພໍ່ແກ່ເຮົາ"

ລຳດັບນັ້ນ ນາງພາມມະນີຖືມີດເຂົ້າໄປໃນຫ້ອງແລ້ວປາດທ້ອງ ດ້ວຍຄິດວ່າ "ເຮົາຢາກຮູ້ວ່າລູກໃນທ້ອງເປັນຜູ້ຊາຍ ຫຼື ເປັນແມ່ຍິງ" ໄດ້ທຳລາຍຕົນເອງ ຊີວິດລູກໃນທ້ອງ ແລະ ຊັບສົມບັດ (ທີ່ຈະເພິ່ງໄດ້) ໃຫ້ພິນາດສູນຫາຍໄປ ຂໍຖວາຍພຣະພອນ ມະຫາບໍພິດ ນາງພາມມະນີຜູ້ໂງ່ບໍ່ສະຫຼາດ ເມື່ອສະແຫວງຫາມໍລະດົກໂດຍວິທີທີ່ບໍ່ແຍກຄາຍ ໄດ້ເຖິງຄວາມພິນາດໄປແລ້ວສັນໃດ ພຣະອົງຜູ້ໂງ່ບໍ່ສະຫຼາດ ເມື່ອສະແຫວງຫາໂລກອື່ນໂດຍວິທີທີ່ບໍ່ເລີກເຊິ່ງ ຈັກເຖິງຄວາມ

ພິນາດສັນນັ້ນ ຂໍຖວາຍພຣະພອນມະຫາບໍພິດ ສະມະນະພາມຜູ້ມີສິນ ມີກັນລະຍານະທຳ ບໍ່ຄື ນາງພາມມະນີຜູ້ໂງ່ ບໍ່ສະຫຼາດເມື່ອສະແຫວງຫານໍລະດົກໂດຍວິທີທີ່ບໍ່ເລີກເຊິ່ງ ໄດ້ເຖິງຄວາມ ພິນາດແລ້ວ ຄື ເຂົາບໍ່ຟ້າວເຮັດອາຍຸທີ່ຍັງບໍ່ໝົດ ໃຫ້ໝົດໄປ ແຕ່ລໍຖ້າໃຫ້ອາຍຸສັ່ງງໄປເອງ ເພາະວ່າ ຊີວິດຂອງສະມະນະພາມຜູ້ສະຫຼາດ ມີສິນ ມີກັນລະຍານະທຳ ເປັນຊີວິດທີ່ມີປະໂຫຍດ ສະມະນະພາມຜູ້ມີສິນ ມີກັນລະຍານະທຳ ດຳຣົງຊີວິດຢູ່ດົນພຽງໃດ ກໍຍ່ອມປະສົບບຸນຫຼາຍ ແລະປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວ ໂລກ ເພື່ອປະໂຫຍດ ເພື່ອເກື້ອກູນເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍພຽງນັ້ນ ມະຫາບໍພິດດ້ວຍເຫດແຫ່ງພຣະດຳຣັດຂອງພຣະອົງແມ່ນແນວນີ້ ຈຶ່ງສະແດງແນວນີ້ວ່າ "ແມ່ນ ເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ"

[໔໘໑] "ທ່ານກັດສະປະເວົ້າແນວນັ້ນກໍຈິງ ແຕ່ຂ້າພະເຈົ້າກໍຍັງຄົງເຊື່ອໃນເລື້ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດ ຊົ່ວບໍ່ມີ"

"ຂໍຖວາຍພຣະພອນມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງຊົງເຂົ້າພຣະຫະໄທແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດ ຊົ່ວບໍ່ມີ" ມີຢູ່ບໍ?"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກ ອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່"

"ຂໍຖວາຍພຣະພອນມະຫາບໍພິດ ອຸບປະມາດ້ວຍຫຍັງ?"

"ທ່ານກັດສະປະ ພວກຣາດຊະບຸຣຸດຂອງຂ້າພະເຈົ້າໃນໂລກນີ້ ຈັບໂຈນຜູ້ກໍ່ກຳທຳຊົ່ວ ມາສະແດງແກ່ຂ້າພະເຈົ້າວ່າ "ຂ້າແຕ່ ພຣະອົງ ນີ້ເປັນໂຈນຜູ້ກໍ່ກຳທຳຊົ່ວຕໍ່ພຣະອົງ ຂໍພຣະອົງ ໂຜດລົງພຣະອາດຊະຍາແກ່ໂຈນນີ້ ຕາມພະປະສົງເທີ້ນ" ຂ້າພະເຈົ້າສັ່ງພວກຣາດຊະບຸຣຸດແນວ ນີ້ວ່າ "ຖ້າເປັນແນວນັ້ນພວກທ່ານຈົ່ງຈັບບຸຣຸດນີ້ຍັດໃສ່ໝໍ້ທັງເປັນ ແລ້ວອັດປາກໝໍ້ຣັດດ້ວຍໜັງ ສົດ ເປີດ້ວຍດິນໜຽວໃຫ້ໜາຍົກຂຶ້ນຕັ້ງເຕົາແລ້ວດັງໄຟເຜົາ"

ພວກຣາດຊະບຸຣຸດຮັບຄຳຂອງຂ້າພະເຈົ້າແລ້ວ ຈັບບຸຣຸດນັ້ນຍັດໃສ່ໝໍ້ທັງເປັນແລ້ວອັດ ປາກໝໍ້ຣັດດ້ວຍໜັງສົດ ເປີດ້ວຍດິນໜຽວໃຫ້ໜາຍົກຂຶ້ນຕັ້ງເຕົາແລ້ວດັງໄຟເຜົາ ເມື່ອຂ້າພະເຈົ້າຮູ້ ວ່າ "ບຸຣຸດນັ້ນເສຍຊີວິດແລ້ວ" ຈຶ່ງໃຫ້ຍົກໝໍ້ນັ້ນລົງເຄາະດິນໜຽວອອກ ແລ້ວຄ່ອຍ ໆ ໄຂປາກ ໝໍ້ກວດເບິ່ງວ່າ "ບາງເທື່ອພວກເຮົາຈະໄດ້ເຫັນຊີວະ (ວິນຍານ) ຂອງບຸຣຸດນັ້ນອອກມາໃຫ້ເຫັນ ແດ່" ແຕ່ພວກເຮົາກໍບໍ່ເຫັນຊີວະຂອງເຂົາອອກມາເລີຍ ທ່ານກັດສະປະນີ້ແລ ເປັນເຫດທີ່ເຮັດໃຫ້

ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

## ອຸບປະມາດ້ວຍຄົນນອນຝັນ

[໔໘໘] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຂໍຖວາຍພຣະພອນຖາມພຣະອົງໃນເລື້ອງນີ້ ໂຜດຕັດຕອບຕາມທີ່ພໍພຣະທະໄທ ພຣະອົງຊົງເຄີຍບັນທົມກາງເວັນແລ້ວຊົງສຸບິນເຫັນສວນອັນເປັນຕາເບີກບານໃຈ ປ່າອັນເປັນຕາເບີກບານໃຈ ພື້ນທີ່ອັນເປັນຕາເບີກບານໃຈ ແລະ ສະໂບກຂະຣະນີອັນເປັນຕາເບີກບານໃຈຢູ່ແດ່ບໍ?"

"ທ່ານກັດສະປະ ຂ້າພະເຈົ້າເຄີຍຫຼັບກາງເວັນ ຝັນເຫັນສວນອັນເປັນຕາເບີກບານໃຈ ປ່າອັນເປັນຕາເບີກບານໃຈ ພື້ນທີ່ອັນເປັນຕາເບີກບານໃຈ ແລະ ສະໂບກຂະຣະນີອັນເປັນຕາເບີກບານໃຈ"

"ໃນຂະນະທີ່ຊົງສຸບິນນັ້ນ ມີແມ່ຍິງຫຼັງກ່ອມ ແມ່ຍິງເຕ້ຍ ນາງພູສາມາລາ ຫຼື ນາງສາວນ້ອຍ ຄອຍຖ້າເບິ່ງແຍງພຣະອົງຢູ່ບໍ?"

"ທ່ານກັດສະປະ ໃນຂະນະທີ່ຝັນນັ້ນ ມີແມ່ຍິງຫຼັງກ່ອມ ແມ່ຍິງເຕ້ຍ ນາງພູສາມາລາ ຫຼື ນາງສາວນ້ອຍ ຄອຍຖ້າເບິ່ງແຍງຂ້າພະເຈົ້າຢູ່"

"ຍິງເຫຼົ່ານັ້ນ ເຫັນຊີວະຂອງພຣະອົງເຂົ້າອອກຢູ່ ບໍ?"

"ທ່ານກັດສະປະ ຍິງເຫຼົ່ານັ້ນ ບໍ່ເຫັນຊີວະຂອງຂ້າພະເຈົ້າເຂົ້າອອກຢູ່ເລີຍ"

"ຂໍຖວາຍພຣະພອນ ມະຫາບໍພິດ ແມ່ຍິງເຫຼົ່ານັ້ນມີຊີວິດຢູ່ແທ້ ໆ ຍັງບໍ່ເຫັນຊີວະເຂົ້າອອກຂອງພຣະອົງຜູ້ຍັງຊົງພະຊົນຢູ່ເລີຍ ພຣະອົງຈະຊົງເຫັນຊີວະເຂົ້າອອກຂອງຄົນຜູ້ສັ້ງງຊີວິດໄປແລ້ວໄດ້ແນວໃດ ຂໍຖວາຍພຣະພອນມະຫາບໍພິດ ດ້ວຍເຫດແຫ່ງພຣະດຳຣັດຂອງພຣະອົງແມ່ນນີ້ ຈຶ່ງສະແດງແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ"

[໔໘໙] "ທ່ານກັດສະປະ ເວົ້າແນວນັ້ນກໍຈິງ ແຕ່ຂ້າພະເຈົ້າກໍຍັງຄົງເຊື່ອໃນເລື້ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

"ຂໍຖວາຍພຣະພອນ ມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງຊົງເຂົ້າພຣະທະໄທແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່ບໍ"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່"

"ມະຫາບໍພິດອຸປະມາດ້ວຍຫຍັງ?"

"ທ່ານກັດສະປະ ພວກຣາດຊະບຸຣຸດຂອງຂ້າພະເຈົ້າໃນໂລກນີ້ຈັບໂຈນຜູ້ກໍ່ກຳທຳຊົ່ວມາສະແດງແກ່ຂ້າພະເຈົ້າວ່າ "ຂ້າແດ່ພຣະອົງ ນີ້ເປັນໂຈນຜູ້ກໍ່ກຳທຳຊົ່ວຕໍ່ພຣະອົງ ຂໍພຣະອົງໂຜດລົງພຣະອາດຊະຍາແກ່ໂຈນນີ້ຕາມພຣະປະສົງເທີ້ນ" ຂ້າພະເຈົ້າສັ່ງພວກຣາດຊະບຸຣຸດແນວນີ້ວ່າ "ຖ້າເປັນແນວນັ້ນ ພວກທ່ານຈົ່ງເອົາຊິງມາຊັ່ງບຸຣຸດນີ້ທັງເປັນ ແລ້ວໃຊ້ເຊືອກມັດໃຫ້ຂາດໃຈຕາຍເອົາຊິງຊັ່ງເບິ່ງອີກເທື່ອໜຶ່ງ" ພວກຣາດຊະບຸຣຸດຮັບຄຳຂອງຂ້າພະເຈົ້າແລ້ວ ຈຶ່ງເອົາຊິງໄປຊັ່ງບຸຣຸດນັ້ນ ທັງເປັນແລ້ວໃຊ້ເຊືອກມັດໃຫ້ຂາດໃຈຕາຍ ເອົາຊິງຊັ່ງເບິ່ງອີກເທື່ອໜຶ່ງ ເມື່ອບຸຣຸດນັ້ນຍັງມີຊີວິດຢູ່ຮ່າງກາຍນີ້ມີນ້ຳໜັກ ເບົາ ອ່ອນ ນຸ່ມ ແລະ ປັບໂຕໄດ້ງ່າຍກວ່າ ແຕ່ເມື່ອບຸຣຸດນັ້ນສິ້ນຊີວິດແລ້ວຮ່າງກາຍມີນ້ຳໜັກຫຼາຍ ແຂງກະດ້າງ ແລະ ປັບໂຕໄດ້ຍາກກວ່າທ່ານກັດສະປະນີ້ແລເປັນເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

## ອຸປະມາດ້ວຍກ້ອນເຫຼັກຮ້ອນ

[໔໔໔] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຈະຍົກອຸປະມາຖວາຍພຣະອົງໃຫ້ສະດັບແນວນີ້ວ່າ ຄົນສະຫຼາດລາງພວກໃນໂລກນີ້ ຜູ້ສາມາດເຂົ້າໃຈຄວາມໝາຍແຫ່ງຖ້ອຍຄຳໄດ້ ດ້ວຍອຸປະມາໂວຫານປຽບ ຄື ຄົນເອົາຊິງຊັ່ງກ້ອນເຫຼັກທີ່ເຜົາໄວ້ໝົດມື້ມີໄຟລຸກໄໝ້ຢູ່ ຕໍ່ມາໃຊ້ຊິງຊັ່ງກ້ອນເຫຼັກນັ້ນ ໃນຂະນະທີ່ເຢັນດີແລ້ວ ເມື່ອໃດກ້ອນເຫຼັກນັ້ນຈະມີນ້ຳໜັກເບົາກວ່າ ອ່ອນກວ່າ ແລະ ດັດງ່າຍກວ່າ ຄື ເມື່ອມີໄຟລຸກໄໝ້ຢູ່ ຫຼື ວ່າເມື່ອເຢັນດີແລ້ວ"

"ທ່ານກັດສະປະ ເມື່ອກ້ອນເຫຼັກນັ້ນມີໄຟລຸກໄໝ້ຢູ່ ຈະມີນ້ຳໜັກເບົາກວ່າ ອ່ອນກວ່າ ແລະ ດັດໄດ້ງ່າຍກວ່າ ແຕ່ເມື່ອກ້ອນເຫຼັກນັ້ນບໍ່ມີໄຟ ບໍ່ມີລົມ ເຢັນດີແລ້ວ ຈະມີນ້ຳໜັກຫຼາຍກວ່າແຂງກະດ້າງກວ່າ ແລະ ດັດໄດ້ຍາກກວ່າ"

"ຂໍຖວາຍພຣະພອນ ມະຫາບໍພິດ ເປັນຄືກັນນັ້ນ ເມື່ອຮ່າງກາຍນີ້ຍັງມີອາຍຸ ມີອາຍອຸ່ນແລະ ມີວິນຍານຢູ່ຈະມີນ້ຳໜັກເບົາກວ່າ ອ່ອນນວນກວ່າ ແລະ ປັບໂຕໄດ້ງ່າຍກວ່າ ແຕ່ເມື່ອຮ່າງກາຍນີ້ບໍ່ມີອາຍຸ ບໍ່ມີອາຍອຸ່ນ ແລະ ບໍ່ມີວິນຍານ ຈະມີນ້ຳໜັກຫຼາຍກວ່າ ແຂງກະດ້າງກວ່າແລະ ປັບໂຕໄດ້ຍາກກວ່າ ຂໍຖວາຍພຣະພອນ ມະຫາບໍພິດ ດ້ວຍເຫດແຫ່ງພຣະດຳຣັດຂອງພຣະອົງ ແມ່ນນີ້ ຈຶ່ງສະແດງແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ"

[໔໔໕] "ທ່ານກັດສະປະ ເວົ້າແນວນັ້ນກໍຈິງ ແຕ່ຂ້າພະເຈົ້າກໍຍັງຄົງເຊື່ອໃນເລື້ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

"ຂໍຖວາຍພຣະພອນ ມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງຊົງເຂົ້າພຣະທະໄທແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່ບໍ?"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່"

"ຂໍຖວາຍພຣະພອນ ມະຫາບໍພິດ ອຸບປະມາດ້ວຍຫຍັງ?"

"ທ່ານກັດສະປະ ພວກຣາດຊະບຸຣຸດຂອງຂ້າພະເຈົ້າໃນໂລກນີ້ ຈັບໂຈນຜູ້ກໍ່ກຳທຳຊົ່ວມາສະແດງແກ່ຂ້າພະເຈົ້າວ່າ "ຂ້າແດ່ ພຣະອົງ ນີ້ເປັນໂຈນຜູ້ກໍ່ກຳທຳຊົ່ວຕໍ່ພຣະອົງ ຂໍພຣະອົງໂຜດລົງພຣະອາດຊະຍາແກ່ໂຈນນີ້ ຕາມພະປະສົງເທີ້ນ" ຂ້າພະເຈົ້າສັ່ງພວກຣາດຊະບຸຣຸດແນວນີ້ວ່າ "ຖ້າເປັນແນວນັ້ນ ພວກທ່ານຈົ່ງປະຫານບຸຣຸດນີ້ ຢ່າໃຫ້ຜິວໜັງ ເອັນກະດູກ ແລະ ເຍື່ອໃນກະດູກຊ້ຳ ບໍ່ແນ່ ລາງເທື່ອພວກເຮົາອາດຈະໄດ້ເຫັນຊີວະຂອງບຸຣຸດນັ້ນ ອອກມາໃຫ້ເຫັນກໍໄດ້" ພວກຣາດຊະບຸຣຸດຮັບຄຳຂອງຂ້າພະເຈົ້າແລ້ວ ຈຶ່ງທຳການປະຫານບຸຣຸດນັ້ນ ບໍ່ໃຫ້ຜິວ ໜັງ ເອັນກະດູກ ແລະ ເຍື່ອໃນກະດູກຊ້ຳ ເມື່ອບຸຣຸດນັ້ນໃກ້ຕາຍ ຂ້າພະເຈົ້າສັ່ງວ່າ "ພວກທ່ານຈົ່ງຈັບ ໃຫ້ເຂົານອນຫງາຍ ບໍ່ແນ່ ລາງເທື່ອພວກເຮົາຈະໄດ້ເຫັນຊີວະຂອງບຸຣຸດນັ້ນອອກມາໃຫ້ເຫັນກໍໄດ້"

ແຕ່ເມື່ອຣາດຊະບຸຣຸດຈັບໃຫ້ເຂົານອນຫງາຍ ພວກເຮົາກໍບໍ່ໄດ້ເຫັນຊີວະຂອງເຂົາອອກມາເລີຍ ຂ້າພະເຈົ້າຈຶ່ງສັ່ງອີກວ່າ ຖ້າເປັນແນວນັ້ນພວກທ່ານຈົ່ງປີ້ນໃຫ້ເຂົານອນຂວ້ຳ ฯລฯ" "ฯລฯ ໃຫ້ເຂົານອນສະແຄງຂ້າງໜຶ່ງ ฯລฯ" "ฯລฯ ໃຫ້ນອນສະແຄງອີກຂ້າງໜຶ່ງ ฯລฯ" "ฯລฯ ຈົ່ງໂຊມໃຫ້ລຸກຂຶ້ນ ฯລฯ" "ฯລฯ ຈັບຫົວຍັ້ນລົງ ฯລฯ" "ฯລฯໃຊ້ຝາມືຕົບฯລฯ" "ฯລฯ ໃຊ້ກ້ອນດິນທຸບ ฯລฯ" "ฯລฯ ໃຊ້ທ່ອນໄມ້ທຸບ ฯລฯ " "ฯລฯ ໃຊ້ສາດຕາທຸບ ฯລฯ" "ฯລฯ ແກ່ມາ ແກ່ໄປ ແກ່ໄປ ແກ່ມາ ບໍ່ແນ່ ລາງເທື່ອພວກເຮົາອາດຈະໄດ້ເຫັນຊີວະຂອງບຸຣຸດນັ້ນອອກມາໃຫ້ເຫັນກໍໄດ້" ພວກຣາດຊະບຸຣຸດ ແກ່ບຸຣຸດນັ້ນມາ ແກ່ບຸຣຸດນັ້ນໄປ ແກ່ໄປແກ່ມາ ພວກເຮົາກໍບໍ່ເຫັນຊີວະຂອງເຂົາເລີຍ ຕາຂອງເຂົາກໍຄືເກົ່າ ຮູບກໍຮູບເກົ່າ ແຕ່ຕານັ້ນບໍ່ຮັບຮູ້ຮູບນັ້ນ ຫູຂອງເຂົາກໍຫູເກົ່າ ສຽງກໍສຽງເກົ່າ ໆ ແຕ່ຫູນັ້ນ ບໍ່ຮັບຮູ້ສຽງນັ້ນ ດັງຂອງເຂົາກໍດັງເກົ່າ ກິ່ນກໍກິ່ນເກົ່າ ໆ ແຕ່ດັງນັ້ນ ບໍ່ຮັບຮູ້ກິ່ນນັ້ນ ລີ້ນຂອງເຂົາກໍລີ້ນເກົ່າ ຣົດກໍຣົດເກົ່າ ໆ ແຕ່ລີ້ນນັ້ນບໍ່ຮັບຮູ້ຣົດນັ້ນ ກາຍຂອງເຂົາກໍກາຍເກົ່າ ໂຜດຖັບພະກໍໂຜດຖັບພະເກົ່າ ໆ ແຕ່ກາຍນັ້ນ ບໍ່ຮັບຮູ້ໂຜດ

ຖັບພະນັ້ນ ທ່ານກັດສະປະ ນີ້ແລ ເປັນເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວບໍ່ມີ"

## ອຸບປະມາດ້ວຍການເປົ່າຫອຍສັງ

[໔໘໖] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຈະຍົກອຸບປະມາຖວາຍພຣະອົງໃຫ້ສະດັບວ່າ ຄົນສະຫຼາດລາງພວກໃນໂລກນີ້ ເປັນຜູ້ເຂົ້າໃຈຄວາມໝາຍແຫ່ງຖ້ອຍຄຳໄດ້ດ້ວຍອຸບປະມາໂວຫານ ເລື້ອງເຄີຍມີມາແລ້ວ ມີຄົນເປົ່າຫອຍສັງຄົນໜຶ່ງນຳຫອຍສັງໄປສູ່ປັດຈັນຕະຊົນນະບົດ ເຂົ້າໄປສູ່ຫມູ່ບ້ານແຫ່ງໜຶ່ງ ຢືນຢູ່ກາງຫມູ່ບ້ານເປົ່າຫອຍສັງຂຶ້ນ ໓ເທື່ອ ວາງຫອຍສັງໄວ້ທີ່ພື້ນດິນແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ລຳດັບນັ້ນ ຊາວປັດຈັນຕະຊົນນະບົດແຕກຕື່ນຂຶ້ນວ່າ "ທ່ານທັງຫຼາຍ ນັ້ນແມ່ນສຽງອັນໃດຄືມາມ່ວນແທ້ ເປັນສຽງໜ້າພໍໃຈ ເປັນຕາຮັກ ເປັນຕາຫຼົງໃຫຼ ເປັນຕາຕິດໃຈ" ຈຶ່ງພາກັນມາອ້ອມຄົນເປົ່າຫອຍສັງແລ້ວຖາມວ່າ ນັ້ນແມ່ນສຽງອັນໃດ ຄືມາມ່ວນແທ້ ເປັນສຽງໜ້າພໍໃຈເປັນຕາຮັກ ເປັນຕາຫຼົງໃຫຼ ເປັນຕາຕິດໃຈ

ຄົນເປົ່າຫອຍສັງຕອບວ່າ "ທ່ານທັງຫຼາຍ ນີ້ເປັນສຽງເປົ່າຫອຍສັງ ເປັນສຽງໜ້າພໍໃຈເປັນຕາຮັກ ເປັນຕາຫຼົງໃຫຼ ເປັນຕາຕິດໃຈ ມ່ວນຄືພວກທ່ານໄດ້ຍິນນັ້ນແລ້ວ"

ຊາວປັນຈັດຕະຊົນນະບົດເຫຼົ່ານັ້ນ ຈັບຫອຍສັງນັ້ນຫງາຍຂຶ້ນ ແລ້ວສັ່ງວ່າ "ຈົ່ງເວົ້າມາເບິ່ງດູຫອຍສັງ ເວົ້າແມຫອຍສັງ" ຫອຍສັງນັ້ນກໍບໍ່ສົ່ງສຽງອອກມາຕາມທີ່ສັ່ງນັ້ນ ພວກເຂົາຈຶ່ງຈັບຫອຍສັງໃຫ້ຂວ້ຳໜ້າລົງ ฯລฯ ຈັບຫອຍສັງໃຫ້ສະແດງຂ້າງໜຶ່ງ ฯລฯ ຈັບຫອຍສັງໃຫ້ສະແດງອີກຂ້າງໜຶ່ງ ฯລฯ ຍົກຫອຍສັງໃຫ້ສູງຂຶ້ນ ฯລฯ ວາງຫອຍສັງໃຫ້ຕ່ຳລົງ ฯລฯໃຊ້ຝາມືເຄາະ ฯລฯ ໃຊ້ກ້ອນດິນເຄາະ ฯລฯ. ໃຊ້ທ່ອນໄມ້ເຄາະ ฯລฯ ໃຊ້ສາດຕາເຄາະ ฯລฯ ແກ່ມາແກ່ໄປແກ່ໄປແກ່ມາ ແລ້ວສັ່ງວ່າ "ຈົ່ງເວົ້າມາເບິ່ງດູຫອຍສັງ ເວົ້າແມຫອຍສັງ" ຫອຍສັງນັ້ນກໍບໍ່ສົ່ງສຽງອອກມາຄືເກົ່າ ຄົນເປົ່າຫອຍສັງໄດ້ມີຄວາມຄິດແນວນີ້ວ່າ "ຊາວປັດຈັນຕະຊົນນະບົດເຫຼົ່ານີ້ ຊ່າງໂງ່ຈ້າແນວນີ້ນໍ ເປັນຫຍັງຈຶ່ງສະແຫວງຫາສຽງຫອຍສັງໂດຍບໍ່ຖືກວິທີແນວນີ້" ໃນຂະນະທີ່ຊາວປັດຈັນຕະຊົນນະບົດເຫຼົ່ານັ້ນ ກຳລັງຫຸ້ມເບິ່ງຢູ່ເຂົາຈຶ່ງຈັບຫອຍສັງຂຶ້ນມາເປົ່າ ໓ ເທື່ອ ແລ້ວ ຖືຫອຍສັງຍ່າງໜີໄປ ຊາວປັດຈັນຕະຊົນນະບົດເຫຼົ່ານັ້ນ ເວົ້າກັນຂຶ້ນວ່າ "ທ່ານທັງຫຼາຍ ເມື່ອຫອຍສັງນີ້ມີຄົນມີຄວາມພະຍາຍາມ ແລະ ມີລົມ ຈຶ່ງສົ່ງສຽງໄດ້ ເມື່ອຫອຍສັງນີ້ບໍ່ມີຄົນ ບໍ່ມີຄວາມພະຍາຍາມ ແລະ ບໍ່ມີລົມກໍສົ່ງສຽງບໍ່ໄດ້"

ຂໍຖວາຍພຣະພອນ ມະຫາບໍພິດ ເປັນຄືກັນ ເມື່ອກາຍນີ້ຍັງມີອາຍຸ ມີອາຍອຸ່ນ ແລະ ມີວິນຍານ ຈຶ່ງກ້າວໄປໄດ້ ຖອຍກັບໄດ້ ຢືນໄດ້ ນັ່ງໄດ້ ນອນໄດ້ ເຫັນຮູບທາງຕາໄດ້ ຟັງສຽງ

ທາງຫູໄດ້ ດົມກິ່ນທາງດັງໄດ້ ຊີມຣົດທາງລີ້ນໄດ້ ຖືກຕ້ອງໂຜດຖັບພະທາງກາຍໄດ້ ຮູ້ທຳມາຣົມທາງໃຈໄດ້ ແຕ່ເມື່ອກາຍນີ້ບໍ່ມີອາຍຸ ບໍ່ມີອາຍອຸ່ນ ແລະ ບໍ່ມີວິນຍານ ກາຍນີ້ຈຶ່ງກ້າວໄປບໍ່ໄດ້ ຖອຍ ກັບບໍ່ໄດ້ ຢືນບໍ່ໄດ້ ນັ່ງບໍ່ໄດ້ ນອນບໍ່ໄດ້ ເຫັນຮູບທາງຕາບໍ່ໄດ້ ຟັງສຽງທາງຫູບໍ່ໄດ້ ດົມກິ່ນທາງດັງບໍ່ໄດ້ ຊີມຣົດທາງລີ້ນບໍ່ໄດ້ ຖືກຕ້ອງໂຜດຖັບພະທາງກາຍບໍ່ໄດ້ ຫຼື ຮູ້ທຳມາຣົມທາງໃຈບໍ່ໄດ້ ຂໍຖວາຍພຣະພອນ ມະຫາບໍພິດ ດ້ວຍເຫດແຫ່ງພຣະດຳຣັດຂອງພຣະອົງແມ່ນນີ້ ຈຶ່ງສະແດງໄວ້ແບບນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນມີ ໂອປະປາຕິກະສັດມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວມີ"

**ພານະວານທີ ໑ ຈົບ**

[໔໘໗] "ທ່ານກັດສະປະເວົ້າແບບນັ້ນກໍຈິງ ແຕ່ຂ້າພະເຈົ້າກໍຍັງຄົງເຊື່ອໃນເລື້ອງນີ້ຢູ່ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

ຂໍຖວາຍພຣະພອນ ມະຫາບໍພິດ ເຫດທີ່ເຮັດໃຫ້ພຣະອົງຊົງເຂົ້າພຣະທະໄທແບບນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່ບໍ?"

"ທ່ານກັດສະປະ ເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແບບນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ມີຢູ່"

"ຂໍຖວາຍພຣະພອນມະຫາບໍພິດ ອຸບປະມາດ້ວຍຫຍັງ?"

"ທ່ານກັດສະປະ ພວກຣາດຊະບຸຣຸດຂອງຂ້າພະເຈົ້າໃນໂລກນີ້ ຈັບໂຈນຜູ້ກໍ່ກຳທຳຊົ່ວມາສະແດງແກ່ຂ້າພະເຈົ້າວ່າ "ຂ້າແດ່ ພຣະອົງ ນີ້ເປັນໂຈນຜູ້ກໍ່ກຳທຳຊົ່ວຕໍ່ພຣະອົງ ພຣະອົງໂຜດລົງພຣະອາດຊະຍາແກ່ໂຈນນີ້ ຕາມພະປະສົງເທີ້ນ" ຂ້າພະເຈົ້າສັ່ງພວກຣາດຊະບຸຣຸດແບບນີ້ວ່າ "ຖ້າເປັນແບບນັ້ນ ພວກທ່ານຈົ່ງປາດຜິວໜັງຂອງບຸຣຸດນີ້ອອກ ບໍ່ແນ່ລາງເທື່ອພວກເຮົາອາດຈະໄດ້ເຫັນຊີວະຂອງເຂົາກໍໄດ້" ພວກເຂົາຈຶ່ງປາດເອົາຜິວໜັງຂອງບຸຣຸດນັ້ນອອກມາ ແຕ່ພວກເຮົາກໍບໍ່ໄດ້ບໍ່ເຫັນຊີວະຂອງເຂົາເລີຍ ຂ້າພະເຈົ້າຈຶ່ງສັ່ງອີກວ່າ "ຖ້າເປັນແບບນັ້ນ ພວກທ່ານຈົ່ງປາດໜັງ ฯລฯ" ฯລฯ "ฯລฯ ປາດຊີ້ນ ฯລฯ" ฯລฯ "ฯລฯ ຕັດເອັນ ฯລฯ" ฯລฯ "ฯລฯ ຕັດກະດູກ ฯລฯ" ฯລฯ "ຕັດເຍື່ອໃນກະດູກຂອງເຂົາອອກມາ ລາງເທື່ອພວກເຮົາຈະໄດ້ເຫັນຊີວະຂອງເຂົາ" ພວກເຂົາຕັດເຍື່ອໃນກະດູກຂອງບຸຣຸດນັ້ນອອກມາ ແຕ່ພວກເຮົາກໍຍັງບໍ່ໄດ້ເຫັນຊີວະຂອງເຂົາເລີຍ ທ່ານກັດສະປະ ນີ້ແລ ເປັນເຫດທີ່ເຮັດໃຫ້ຂ້າພະເຈົ້າເຂົ້າໃຈແບບນີ້ວ່າ

"ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

## ອຸບປະມາດ້ວຍຊະດິນຜູ້ບູຊາໄຟ

[໔໔໗] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຈະຍົກອຸບປະມາຖວາຍພຣະອົງໃຫ້ສະດັບແນວນີ້ວ່າ ຄົນສະຫຼາດລາງພວກໃນໂລກນີ້ ສາມາດເຂົ້າໃຈຄວາມໝາຍແຫ່ງຖ້ອຍຄຳໄດ້ດ້ວຍອຸບປະມາໂວຫານ ເລື້ອງເຄີຍມີມາແລ້ວ ມີຊະດິນຜູ້ບູຊາໄຟຄົນໜຶ່ງ ອາໄສຢູ່ໃນກຸດຕິໃບໄມ້ໃນແຄມປ່າ ເວລານັ້ນ ມີໝູ່ກວຽນໝູ່ໜຶ່ງພັກຢູ່ໃນບ່ອນໃກ້ອາສົມຂອງຊະດິນນັ້ນຄືນໜຶ່ງແລ້ວຈາກໄປ ຕໍ່ມາຊະດິນຜູ້ບູຊາໄຟມີຄວາມຄິດແນວນີ້ວ່າ "ທາງທີ່ດີເຮົາຄວນເຂົ້າໄປໃນບ່ອນທີ່ ໝູ່ກວຽນນັ້ນພັກຢູ່ ລາງເທື່ອຈະໄດ້ອຸປະກອນໃຊ້ສອຍໃນບ່ອນນັ້ນ ຄິດແນວນີ້ແລ້ວຈຶ່ງລຸກຂຶ້ນແຕ່ເຊົ້າກົງເຂົ້າໄປບ່ອນທີ່ໝູ່ກວຽນນັ້ນພັກເຊົາຢູ່ ໄດ້ພົບເດັກນ້ອຍຖືກຖິ້ມປະໄວ້ໃຫ້ນອນຫງາຍຢູ່ໃນບ່ອນນັ້ນ ຈຶ່ງຄິດວ່າ "ການທີ່ເຮົາຜູ້ເປັນມະນຸດມາພົບເດັກນ້ອຍແລ້ວ ຈະປ່ອຍໃຫ້ເດັກນ້ອຍນອນເສຍຊີວິດໄປກໍບໍ່ເໝາະ ທາງທີ່ດີເຮົາຄວນພາເຂົາໄປອາໂສມແລ້ວ ລ້ຽງດູໃຫ້ເຕີບໃຫຍ່" ຈຶ່ງພາເດັກນັ້ນໄປລ້ຽງ ຈົນເຕີບໃຫຍ່ຂຶ້ນ ເມື່ອເດັກນ້ອຍນັ້ນອາຍຸໄດ້ ໑໐ ປີ ຫຼື ໑໔ ປີ ຊະດິນບູຊາໄຟຄົນນັ້ນມີວຽກແນວໜຶ່ງໃນເມືອງ ຈຶ່ງສັ່ງເດັກນ້ອຍນັ້ນວ່າ "ລູກ ພໍ່ຈະໄປໃນເມືອງ ເຈົ້າຈົ່ງບູຊາໄຟຢ່າໃຫ້ໄຟດັບ ຖ້າຫາກໄຟຈະດັບ ນີ້ມີດ ນີ້ຟືນ ນີ້ໄມ້ສີໄຟ ໃຫ້ເຈົ້າດັງໄຟບູຊາ" ເມື່ອສັ່ງເດັກນ້ອຍແລ້ວ ໄດ້ເຂົ້າໄປໃນເມືອງ ໃນຂະນະທີ່ເດັກນ້ອຍກຳລັງຫຼິ້ນຢູ່ ໄຟເກີດດັບລົງ ເດັກນ້ອຍນັ້ນຄິດຂຶ້ນໄດ້ວ່າ "ພໍ່ສັ່ງເຮົາໄວ້ວ່າ ເຈົ້າຈົ່ງບູຊາໄຟຢ່າໃຫ້ໄຟດັບ ຖ້າຫາກໄຟຈະດັບ ນີ້ມີດ ນີ້ຟືນ ນີ້ໄມ້ສີໄຟ ໃຫ້ເຈົ້າດັງໄຟບູຊາ" ທາງທີ່ດີເຮົາຄວນດັງໄຟບູຊາ" ຈຶ່ງເອົາມີດຖາກໄມ້ສີໄຟດ້ວຍເຂົ້າໃຈວ່າ "ລາງເທື່ອຈະເຮັດໃຫ້ໄຟລຸກ" ແຕ່ເຮັດບໍ່ໄດ້ເລີຍ ຈຶ່ງຜ່າໄມ້ສີໄຟອອກເປັນ ໒ ອັນ ໆລໆ ໓ ອັນ ໆລໆ ໔ ອັນ ໆລໆ ໕ ອັນ ໆລໆ ໑໐ ອັນ ໆລໆ ໒໐ ອັນ ໆລໆ ແລ້ວຟັກໃຫ້ເປັນອັນນ້ອຍ ໆ ເມື່ອຟັກໃຫ້ເປັນອັນນ້ອຍ ໆ ແລ້ວກໍນຳມາຕຳໃນຄົກ ເມື່ອຕຳໃນຄົກແລ້ວ ກໍໂຮ່ຍລົງໃນບ່ອນທີ່ມີລົມພັດແຮງດ້ວຍເຂົ້າໃຈວ່າ "ລາງເທື່ອຈະເຮັດໃຫ້ໄຟລຸກໄດ້" ແຕ່ເຂົາກໍບໍ່ສາມາດເຮັດໃຫ້ໄຟລຸກໄດ້ເລີຍ ຕໍ່ມາຊະດິນຜູ້ບູຊາໄຟເຮັດວຽກໃນເມືອງສຳເລັດແລ້ວ ຈຶ່ງກັບມາອາໂສມຂອງຕົນ ໄດ້ຖາມເດັກນ້ອຍນັ້ນວ່າ "ລູກເອີຍ ໄຟທີ່ເຈົ້າເຝົ້າຢູ່ບໍ່ດັບບໍ?"

ເດັກນ້ອຍນັ້ນຕອບວ່າ "ພໍ່ ເຮົາມົວແຕ່ຫຼິ້ນຢູ່ໄຟກໍເລີຍດັບ" ພໍນຶກຂຶ້ນໄດ້ວ່າ "ພໍ່ສັ່ງໄວ້ເຈົ້າຈົ່ງບູຊາໄຟຢ່າໃຫ້ໄຟດັບ ຖ້າຫາກໄຟຈະດັບ ນີ້ມີດ ນີ້ຟືນ ນີ້ໄມ້ສີໄຟ ໃຫ້ເຈົ້າດັງໄຟບູຊາ" ເຮົາຈຶ່ງຟ້າວຈຸດໄຟບູຊາ ເອົາມີດຖາກໄມ້ສີໄຟດ້ວຍຄິດວ່າ "ຈະເຮັດໃຫ້ຈຸດໄຟຕິດໄດ້" ແຕ່ບໍ່ເປັນຜົນເລີຍ ຈຶ່ງຜ່າໄມ້ສີໄຟອອກເປັນ ໒ ອັນ ໆລໆ ໓ ອັນ ໆລໆ໔ ອັນ ໆລໆ ໕ ອັນ ໆລໆ ໑໐ ອັນ ໆລໆ ໒໐ ອັນ ໆລໆ ແລ້ວຟັກໃຫ້ເປັນອັນນ້ອຍ ໆ ເມື່ອຟັກໃຫ້ເປັນອັນນ້ອຍ ໆ ແລ້ວກໍນຳມາ

ຕຳໃນຄົກ ເມື່ອຕຳໃນຄົກແລ້ວ ກໍໂຮ່ຍລົງໃນບ່ອນທີ່ມີລົມພັດແຮງດ້ວຍເຂົ້າໃຈວ່າ "ລາງເທື່ອຈະເຮັດໃຫ້ໄຟລຸກໄດ້" ແຕ່ກໍ່ບໍ່ເປັນຜົນອີກ

ລຳດັບນັ້ນ ຊະດິນຜູ້ບູຊາໄຟຄົນນັ້ນ ໄດ້ມີຄວາມຄິດແນວນີ້ວ່າ "ເດັກນ້ອຍຄົນນີ້ຊ່າງໂງ່ຈ້າ ບໍ່ສະຫຼາດເອົາເລີຍ ດັງໄຟໂດຍບໍ່ຖືກວິທີຈະເຮັດໃຫ້ໄຟລຸກໄດ້ແນວໃດ "ເມື່ອເດັກນ້ອຍນັ້ນກຳລັງເບິ່ງຢູ່ ຈຶ່ງຈັບໄມ້ສີໄຟມາສີໃຫ້ເກີດແປວໄຟຂຶ້ນມາ ແລ້ວບອກກັບເດັກນ້ອຍນັ້ນແນວນີ້ວ່າ "ລູກເອີຍເຂົາດັງໄຟກັນແນວນີ້ ບໍ່ຄືເຈົ້າທີ່ໂງ່ຈ້າ ບໍ່ສະຫຼາດ ດັງໄຟໂດຍບໍ່ຖືກວິທີ"

ຂໍຖວາຍພຣະພອນ ມະຫາບໍພິດ ພຣະອົງກໍຄືກັນ ຊົງໂງ່ຈ້າ ບໍ່ສະຫຼາດ ສະແຫວງຫາໂລກໜ້າໂດຍບໍ່ຖືກວິທີ ພຣະອົງໂຜດສະລະທິດຖິຊົ່ວນັ້ນສາເທີ້ນ ປ່ອຍວາງທິດຖິຊົ່ວນັ້ນສາເທີ້ນ ທິດຖິຊົ່ວແນວນັ້ນຢ່າໄດ້ເກີດມີແກ່ພຣະອົງເລີຍ ເພາະເປັນໄປເພື່ອບໍ່ເກື້ອກູນ ເພື່ອຄວາມທຸກຕະຫຼອດການະນານແກ່ພຣະອົງ"

[໔໘໙] "ທ່ານກັດສະປະ ເວົ້າແນວນັ້ນກໍຈິງ ແຕ່ຂ້າພະເຈົ້າກໍ່ຍັງບໍ່ອາດສະລະທິດຖິຊົ່ວນີ້ໄດ້ ພຣະເຈົ້າປະເສນທິໂກສົນ ຫຼື ພຣະຣາຊານອກອານາຈັກ ຊົງຮູ້ຈັກຂ້າພະເຈົ້າດີແນວນີ້ວ່າ "ເຈົ້າປາຍາສິມີວາທະແນວນີ້ ມີທິດຖິແນວນີ້ ວ່າ " ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

ຫາກຂ້າພະເຈົ້າສະລະທິດຖິຊົ່ວນີ້ໄປແລ້ວ ຈະມີຄົນວ່າຂ້າພະເຈົ້າໄດ້ວ່າ "ເຈົ້າປາຍາສິນີ້ຊ່າງໂງ່ຈ້າບໍ່ສະຫຼາດ ຢຶດຖືແຕ່ສິ່ງຜິດ ໆ" ຂ້າພະເຈົ້າ ຈະຖືທິດຖິນັ້ນຕໍ່ໄປ ເພາະຄວາມໂກດເຄືອງ ເພາະຄວາມລົບຫລູ່ ເພາະຄວາມແຂ່ງດີ"

## ອຸປະມາດັ່ງພໍ່ຄ້າໝູ່ກວຽນ ໔ ຄົນ

[໔໙໐] "ຂໍຖວາຍພຣະພອນມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຈະຍົກອຸບປະມາຖວາຍພຣະອົງໃຫ້ສະດັບແນວນີ້ວ່າ ຄົນຜູ້ສະຫຼາດລາງພວກໃນໂລກນີ້ ສາມາດເຂົ້າໃຈຄວາມໝາຍແຫ່ງຖ້ອຍຄຳໄດ້ ດ້ວຍການອຸບປະມາໂວຫານໃນເລື້ອງນີ້ວ່າແນວໃດ ເລື້ອງເຄີຍມີມາແລ້ວມີພໍ່ຄ້າກວຽນໝູ່ໃຫຍ່ໝູ່ໜຶ່ງ ມີກວຽນປະມານ ໑,໐໐໐ ເຫຼັ້ມ ເດີນທາງຈາກແຄວັນທາງທິດຕາເວັນອອກໄປສູ່ແຄວັນທາງທິດຕາເວັນຕົກ ໃນຂະນະເມື່ອເດີນທາງຢູ່ນັ້ນ ໄດ້ເຮັດໃຫ້ຫຍ້າ ຟືນ ນ້ຳໃບໄມ້ສົດ ໝົດສິ້ງໄປຢ່າງໄວວາ ໃນໝູ່ກວຽນນັ້ນມີພໍ່ຄ້າກວຽນຢູ່ ໔ ຄົນ ແບ່ງກັນຄຸມກວຽນຄົນລະ ໕໐໐ ພໍ່ຄ້າກວຽນທັງ ໔ ຄົນນັ້ນ ໄດ້ເປີກສາກັນວ່າ "ກອງກວຽນນີ້ເປັນກອງກວຽນໝູ່ໃຫຍ່ມີກວຽນ ໑,໐໐໐ ເຫຼັ້ມ ເວລາທີ່ພວກເຮົາເດີນທາງລວມກັນໄປຢູ່ນີ້ ໄດ້ເຮັດໃຫ້ ຫຍ້າ ຟືນ ນ້ຳໃບໄມ້ສົດ ໝົດສິ້ງໄປຢ່າງໄວວາ ທາງທີ່ດີ ພວກເຮົາຄວນແຍກກອງກວຽນນີ້ອອກເປັນ ໔ ກຸ່ມຄື ແຍກເປັນກຸ່ມລະ ໕໐໐ ເຫຼັ້ມ" ຈຶ່ງຕົກລົງແຍກກັນອອກເປັນ ໔ ກຸ່ມ ກຸ່ມລະ ໕໐໐ ເຫຼັ້ມ ພໍ່ຄ້າ

ກວຽນຄົນໜຶ່ງ ບັນທຸກຫຍ້າ ຟືນ ແລະ ນ້ຳ ເປັນຈຳນວນຫຼາຍຂັບກວຽນລ່ວງໜ້າໄປກ່ອນ ເມື່ອໄປໄດ້ ໒-໓ ມື້ ໄດ້ພົ້ບຸຣຸດຜິວດຳຜູ້ໜຶ່ງ ໜ່ວຍຕາແດງ ພາຍບັ້ງລູກທະນູ ທັດດອກໂກມຸດ ມີຜ້າ ແລະ ຜົມປຽກຊຸ່ມ ຂັບລົດຄັນງາມມີໝາກຄີ້ງລໍ້ເປື້ອນຂີ້ຕົມສວນທາງມາ ຈຶ່ງຖາມວ່າ "ທ່ານມາຈາກໃສ"

ບຸຣຸດນັ້ນ ຕອບວ່າ "ເຮົາມາຈາກຊົນນະບົດພຸ້ນ"
ພໍ່ຄ້າກອງກວຽນຖາມວ່າ "ທ່ານຈະໄປໃສ"
ບຸຣຸດນັ້ນຕອບວ່າ "ເຮົາຈະໄປຊົນນະບົດພຸ້ນ"
ພໍ່ຄ້າກອງກວຽນຖາມວ່າ "ຫົນທາງກັນດານຂ້າງໜ້າ ມີຝົນຕົກຫຼາຍແມ່ນບໍ?"

ບຸຣຸດນັ້ນຕອບວ່າ "ແມ່ນແລ້ວ ຫົນທາງກັນດານຂ້າງໜ້າມີຝົນຕົກຫຼາຍ ຫົນທາງມີນ້ຳປຽກຊຸ່ມ ມີຫຍ້າ ຟືນ ແລະ ນ້ຳ ຫຼາຍ ພວກທ່ານຈົ່ງຖິ້ມຫຍ້າ ຟືນ ແລະ ນ້ຳເກົ່າ ໄປໂລດ ຈະເຮັດໃຫ້ກວຽນເບົາລົງ ທ່ານຈະເດີນທາງໄດ້ໄວຂຶ້ນ ງົວກໍບໍ່ຕ້ອງລຳບາກ"

ລຳດັບນັ້ນ ພໍ່ຄ້າກອງກວຽນຮຽກພວກຂັບກວຽນມາບອກວ່າ "ບຸຣຸດນີ້ບອກວ່າ "ຫົນທາງກັນດານຂ້າງໜ້າ ມີຝົນຕົກຫຼາຍ ຫົນທາງມີນ້ຳປຽກຊຸ່ມ ມີຫຍ້າ ຟືນ ແລະ ນ້ຳຫຼວງຫຼາຍພວກທ່ານຈົ່ງຖິ້ມຫຍ້າ ຟືນ ແລະ ນ້ຳເກົ່າໄປໂລດ ຈະເຮັດໃຫ້ກວຽນເບົາລົງ ທ່ານຈະເດີນທາງໄດ້ໄວຂຶ້ນ ງົວກໍບໍ່ຕ້ອງລຳບາກ" ພວກທ່ານຈົ່ງຖິ້ມຫຍ້າ ຟືນ ແລະ ນ້ຳເກົ່າໂລດ ຈົ່ງຂັບກວຽນເບົາໄປເທີ້ນ"

ພວກຄົນຂັບກວຽນຮັບຄຳຂອງພໍ່ຄ້າກອງກວຽນແລ້ວ ພາກັນຖິ້ມຫຍ້າ ຟືນ ແລະ ນ້ຳເກົ່າແລ້ວຂັບກວຽນເບົາໄປຕາມນັ້ນ ແຕ່ກໍບໍ່ໄດ້ພົບເຫັນຫຍ້າ ຟືນ ຫຼື ນ້ຳ ແມ່ນໃນບ່ອນທີ່ພັກກອງກວຽນທີ່ເດີນທາງໄປຮອດເທື່ອທຳອິດ ແຫ່ງທີ ໒ ແຫ່ງທີ ໓ ແຫ່ງທີ ໔ ແຫ່ງທີ ໕ ແຫ່ງທີ ໖ ແຫ່ງທີ ໗ ກໍບໍ່ພົບເຫັນ ຈຶ່ງເຖິງຄວາມວອດວາຍເດືອດຮ້ອນນຳກັນ ບໍ່ວ່າມະນຸດ ຫຼື ສັດລ້ຽງ ທີ່ຢູ່ໃນກອງກວຽນນັ້ນ ຖືກອະມະນຸດ ຄື ຍັກຈັບກິນຈົນໝົດເຫຼືອແຕ່ກະດູກ

ຕໍ່ມາ ເມື່ອພໍ່ຄ້າກອງກວຽນຄະນະທີ ໒ ທີ່ຕິດຕາມມານຳຫຼັງຮູ້ສຶກວ່າ ເວລານີ້ກອງກວຽນຄະນະເທື່ອທຳອິດໄດ້ອອກເດີນທາງໄປດົນແລ້ວ ຈຶ່ງບັນທຸກຫຍ້າ ຟືນ ແລະ ນ້ຳເປັນຈຳນວນຫຼາຍ ແລ້ວຂັບກວຽນໄປ ເມື່ອໄປໄດ້ ໒-໓ ມື້ ໄດ້ພົ້ບຸຣຸດຜິວດຳຜູ້ໜຶ່ງ ໜ່ວຍຕາແດງ ພາຍບັ້ງລູກທະນູ ທັດດອກໂກມຸດ ມີຜ້າ ແລະ ຜົມປຽກຊຸ່ມ ຂັບລົດຄັນງາມມີໝາກຄີ້ງລໍ້ເປື້ອນຂີ້ຕົມສວນທາງມາ ຈຶ່ງຖາມວ່າ "ທ່ານມາຈາກໃສ"

ບຸຣຸດນັ້ນ ຕອບວ່າ "ເຮົາມາແຕ່ຊົນນະບົດພຸ້ນ"
ພໍ່ຄ້າກອງກວຽນຖາມວ່າ "ທ່ານຈະໄປໃສ"

ບຸຣຸດນັ້ນຕອບວ່າ "ເຮົາຈະໄປຊົນນະບົດພຸ້ນ"
ພໍ່ຄ້າກອງກວຽນຖາມວ່າ "ຫົນທາງກັນດານຂ້າງໜ້າ ມີຝົນຕົກຫຼາຍແມ່ນບໍ?"

ບຸຣຸດນັ້ນຕອບວ່າ "ແມ່ນແລ້ວ ຫົນທາງກັນດານຂ້າງໜ້າມີຝົນຕົກຫຼາຍ ຫົນທາງມີນ້ຳປຽກຊຸ່ມ ມີຫຍ້າ ຟືນ ແລະ ນ້ຳ ຫຼາຍ ພວກທ່ານຈົ່ງຖິ້ມຫຍ້າ ຟືນ ແລະ ນ້ຳເກົ່າໄປໂລດຈະເຮັດໃຫ້ກວຽນເບົາລົງ ທ່ານຈະເດີນທາງໄດ້ໄວຂຶ້ນ ງົວກໍບໍ່ຕ້ອງລຳບາກ"

ລຳດັບນັ້ນ ພໍ່ຄ້າກອງກວຽນຮຽກພວກຂັບກວຽນມາບອກວ່າ "ບຸຣຸດນີ້ບອກວ່າ "ຫົນທາງກັນດານຂ້າງໜ້າມີຝົນຕົກຫຼາຍ ຕາມຫົນທາງມີນ້ຳປຽກຊຸ່ມ ມີຫຍ້າ ຟືນ ແລະ ນ້ຳຫຼາຍ ພວກທ່ານຈົ່ງຖິ້ມຫຍ້າ ຟືນ ແລະ ນ້ຳເກົ່າໄປໂລດ ຈະເຮັດໃຫ້ກວຽນເບົາລົງ ທ່ານຈະເດີນທາງໄດ້ໄວຂຶ້ນ ງົວກໍບໍ່ຕ້ອງລຳບາກ" ທ່ານທັງຫຼາຍບຸຣຸດຜູ້ນີ້ບໍ່ແມ່ນມິດ ຫຼື ຍາດສາຍໂລຫິດ ຂອງພວກເຮົາ ພວກເຮົາຈະເຊື່ອເຂົາໄດ້ແນວໃດ ພວກທ່ານບໍ່ຄວນຖິ້ມຫຍ້າ ຟືນ ແລະ ນ້ຳເກົ່າ ຈົ່ງຂັບກອງກວຽນໄປພ້ອມກັບສິ່ງຂອງຕາມທີ່ນຳມາເທີ້ນ ພວກເຮົາຈະບໍ່ຖິ້ມຂອງເກົ່າໄປ"

ພວກຂັບກວຽນຮັບຄຳຂອງພໍ່ຄ້າກອງກວຽນ ແລ້ວຂັບກວຽນໄປພ້ອມກັບສິ່ງຂອງຕາມທີ່ນຳມານັ້ນ ເມື່ອພວກເຂົາມາຮອດບ່ອນພັກເຊົາກໍບໍ່ພົບເຫັນຫຍ້າ ຟືນ ຫຼື ນ້ຳໃນບ່ອນທີ່ພັກກອງກວຽນແຫ່ງ ທຳອິດ ແຫ່ງທີ ໒ ແຫ່ງທີ ໓ ແຫ່ງທີ ໔ ແຫ່ງທີ ໕ ແຫ່ງທີ ໖ ແຫ່ງທີ ໗ ກໍບໍ່ພົບເລີຍ ເຫັນແຕ່ກອງກວຽນ (ຄະນະເທື່ອທຳອິດ) ທີ່ເຖິງຄວາມວອດວາຍ ແລະ ເຫັນມະນຸດ ແລະ ສັດລ້ຽງໃນກອງກວຽນນັ້ນ ເຊິ່ງຖືກອະມະນຸດ ຄື ຍັກຈັບກິນຈົນໝົດ ເຫຼືອແຕ່ກະດູກກອງໃຫ້ເຫັນ

ລຳດັບນັ້ນ ພໍ່ຄ້າກອງກວຽນຈຶ່ງຮຽກພວກຂັບກວຽນມາບອກວ່າ "ນີ້ຄືໝູ່ກວຽນ (ຄະນະເທື່ອທຳອິດ) ທີ່ເດີນທາງມາກ່ອນ ໄດ້ພາກັນເຖິງຄວາມວອດວາຍ ທັງນີ້ ເພາະພໍ່ຄ້າກອງກວຽນຜູ້ນຳເປັນຄົນໂງ່ຈ້າ ເຊື່ອຄົນງ່າຍ ຖ້າເປັນແນວນັ້ນ ພວກທ່ານຈົ່ງຖິ້ມສິ່ງຂອງທີ່ມີປະໂຫຍດນ້ອຍໃນກອງກວຽນຂອງເຮົາ ແລ້ວຈົ່ງຂົນເອົາສິ່ງຂອງທີ່ມີປະໂຫຍດຫຼາຍໃນກອງກວຽນນີ້ໄປແທນ"

ພວກຂັບກວຽນຮັບຄຳຂອງພໍ່ຄ້າກອງກວຽນ ແລ້ວຖິ້ມສິ່ງຂອງທີ່ມີປະໂຫຍດນ້ອຍໃນກວຽນຂອງຕົນ ຂົນເອົາສິ່ງຂອງທີ່ມີປະໂຫຍດຫຼາຍໃນໝູ່ກວຽນນັ້ນ ເດີນທາງຂ້າມທາງກັນດານໄປໄດ້ດ້ວຍຄວາມປອດໄພ ທັງນີ້ ເພາະພໍ່ຄ້າກອງກວຽນຜູ້ນຳເປັນຄົນສະຫຼາດຫຼັກແຫຼມບໍ່ເຊື່ອຄົນງ່າຍ

ຂໍຖວາຍພຣະພອນ ມະຫາບໍພິດ ພຣະອົງຊົງໂງ່ຈ້າ ບໍ່ສະຫຼາດ ຊົງສະແຫວງຫາໂລກອື່ນໂດຍບໍ່ຖືກວິທີຈະເຮັດໃຫ້ເຖິງຄວາມພິນາດ ເຊັ່ນດຽວກັບພໍ່ຄ້າກອງກວຽນຄົນທຳອິດທີ່ເດີນທາງນຳໜ້າໄປກ່ອນນັ້ນແລ ພວກທີ່ເຂົ້າໃຈວ່າທິດຖິຂອງພຣະອົງຄວນຟັງ ຄວນເຊື່ອຖືເຫຼົ່ານັ້ນກໍຈະເຖິງຄວາມພິນາດຄືກັນ ສັນນັ້ນ ພຣະອົງໂຜດສະລະທິດຖິຊົ່ວນັ້ນໄປສາເທີ້ນ ປ່ອຍວາງທິດຖິຊົ່ວນັ້ນ

ສາເທີ້ນ ທິດຖິຊົ່ວແບບນັ້ນຢ່າໄດ້ເກີດມີແກ່ພຣະອົງ ເພື່ອບໍ່ເກື້ອກູນ ເພື່ອຄວາມທຸກ ຕະຫຼອດກາລະນານເລີຍ"

[໔໓໑] "ທ່ານກັດສະປະ ເວົ້າແບບນັ້ນກໍຈິງຢູ່ ແຕ່ຂ້າພະເຈົ້າບໍ່ອາດສະລະທິດຖິຊົ່ວນີ້ໄດ້ ພຣະເຈົ້າປະເສນທິໂກສົນ ຫຼື ພຣະຣາຊານອກອານາຈັກ ຊົງຮູ້ຈັກຂ້າພະເຈົ້າແບບນີ້ວ່າ "ເຈົ້າປາຍາສິຊົງມີວາທະແບບນີ້ ຊົງມີທິດຖິແບບນີ້ ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ຫາກຂ້າພະເຈົ້າສະລະທິດຖິຊົ່ວນີ້ໄປແລ້ວ ຈະມີຄົນວ່າຂ້າພະເຈົ້າໄດ້ວ່າ "ເຈົ້າປາຍາສີນີ້ ຊ່າງໂງ່ຈ້າ ບໍ່ສະຫຼາດ ຢຶດຖືແຕ່ສິ່ງຜິດໆ" ຂ້າພະເຈົ້າຈະຖືທິດຖິນັ້ນຕໍ່ໄປ ເພາະຄວາມໂກດເຄືອງ ເພາະຄວາມລົບຫລູ່ ເພາະຄວາມແຂ່ງດີ"

## ອຸບປະມາດ້ວຍຄົນຫໍ່ອຸດຈາຣະທູນໃສ່ຫົວ

[໔໓໔] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແບບນັ້ນ ອາດຕະມາຈະຍົກອຸບປະມາຖວາຍພຣະອົງໃຫ້ສະດັບຕໍ່ໄປດັ່ງນີ້ວ່າ ຄົນຜູ້ສະຫຼາດລາງພວກໃນໂລກນີ້ ສາມາດເຂົ້າໃຈຄວາມໝາຍແຫ່ງຖ້ອຍຄຳໄດ້ດ້ວຍການອຸບປະມາໂວຫານວ່າ ເລື້ອງເຄີຍມີມາແລ້ວ ມີບຸຣຸດຜູ້ລ້ຽງໝູຄົນໜຶ່ງອອກຈາກ ບ້ານຂອງຕົນໄປສູ່ບ້ານອື່ນ ເຫັນອຸດຈາຣະແຫ້ງຈຳນວນຫຼາຍທີ່ເຂົາຖິ້ມໄວ້ໃນບ້ານນັ້ນ ຈຶ່ງມີຄວາມຄິດແບບນີ້ວ່າ "ອຸດຈາຣະແຫ້ງທັງໝົດທີ່ເຂົາຖິ້ມປະໄວ້ນີ້ ເປັນອາຫານຂອງໝູເຮົາ ທາງທີ່ດີເຮົາຄວນນຳອຸດຈາຣະແຫ້ງອອກໄປຈາກບ່ອນນີ້" ຈຶ່ງປູຜ້າຫົ່ມລົງ ແລ້ວຫອບເອົາອຸດຈາຣະແຫ້ງທັງໝົດ ຜູກເປັນຫໍ່ທູນໃສ່ຫົວຍ່າງໄປ ໃນລະຫວ່າງທາງເຂົາຖືກຝົນຫ່າໃຫຍ່ນອກລະດູການ ຕົກລົງມາໃສ່ເປີເປື້ອນໄປດ້ວຍອຸດຈາຣະ ຕັ້ງແຕ່ຫົວຈົນຮອດຕີນຍ້ອນການເອົາຫໍ່ອຸດຈາຣະທູນໃສ່ຫົວຍ່າງໄປ ຊາວບ້ານເຫັນເຂົາຈຶ່ງຖາມວ່າ "ທ່ານເປັນບ້າແມ່ນບໍ ຈິດບໍ່ເຕັມແມ່ນບໍເປັນຫຍັງ? ຈຶ່ງເປີເປື້ອນດ້ວຍອຸດຈາຣະຕັ້ງແຕ່ຫົວຈົນຮອດປາຍຕີນ ຍ້ອນການເອົາຫໍ່ອຸດຈາຣະທູນເທິງຫົວແບບນີ້?"

ບຸຣຸດນັ້ນ ຕອບວ່າ "ພວກທ່ານຕ່າງຫາກທີ່ເປັນບ້າ ພວກທ່ານຕ່າງຫາກທີ່ຈິດບໍ່ເຕັມຄວາມຈິງອຸດຈາຣະເປັນອາຫານຂອງໝູເຮົາ"

ຂໍຖວາຍພຣະພອນມະຫາບໍພິດ ພຣະອົງກໍຄືກັບບຸຣຸດ ຜູ້ທູນຫໍ່ອຸດຈາຣະເອົາໄວ້ເທິງຫົວຍ່າງໄປນັ້ນ ພຣະອົງໂຜດສະລະທິດຖິຊົ່ວນັ້ນເທີ້ນ ປ່ອຍວາງທິດຖິຊົ່ວນັ້ນເທີ້ນ ທິດຖິຊົ່ວແບບນັ້ນຢ່າໄດ້ເກີດມີແກ່ພຣະອົງ ເພື່ອບໍ່ເກື້ອກູນ ເພື່ອຄວາມທຸກຕະຫຼອດກາລະນານເລີຍ"

[໔໓໕] "ທ່ານກັດສະປະເວົ້າແບບນັ້ນກໍຈິງ ແຕ່ຂ້າພະເຈົ້າບໍ່ອາດສະລະທິດຖິຊົ່ວນີ້ໄດ້ພຣະເຈົ້າປະເສນທິໂກສົນ ຫຼື ພຣະຣາຊານອກອານາຈັກຮູ້ຈັກຂ້າພະເຈົ້າແບບນີ້ວ່າ "ເຈົ້າປາຍາສີ ຊົງ

ມິວາທະແບບນີ້ ມີທິດຖິແບບນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

ຫາກຂ້າພະເຈົ້າສະລະທິດຖິຊົ່ວນີ້ ຈະມີຄົນວ່າຂ້າພະເຈົ້າໄດ້ວ່າ "ເຈົ້າປາຍາສິນີ້ຊ່າງໂງ່ຈ້າ ບໍ່ສະຫຼາດ ຢຶດຖືແຕ່ສິ່ງຜິດ ໆ "ຂ້າພະເຈົ້າຈະຖືທິດຖິນັ້ນຕໍ່ໄປ ເພາະຄວາມໂກດເຄືອງ ເພາະຄວາມລົບຫລູ່ ເພາະຄວາມແຂ່ງດີ"

## ອຸບປະມາດ້ວຍນັກເລງສະກາ

[໔໓໔] "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແບບນັ້ນ ອາດຕະມາຈະຍົກອຸບປະມາຖວາຍພຣະອົງໃຫ້ສະດັບຕໍ່ໄປອີກວ່າ ຄົນສະຫຼາດລາງພວກໃນໂລກນີ້ ເຂົ້າໃຈຄວາມໝາຍແຫ່ງຖ້ອຍຄຳໄດ້ດ້ວຍອຸບປະມາໂວຫານດ້ວຍເຫດນີ້ວ່າ ເລື້ອງເຄີຍມີມາແລ້ວ ມີນັກເລງໝາກສະກາ ໒ ຄົນກຳລັງຫຼີ້ນໝາກສະກາກັນຢູ່ ຄົນໜຶ່ງກືນເບ້ຍທີ່ຈະເຮັດໃຫ້ປຣາໄຊ ກືນແລ້ວກືນອີກ ອີກຄົນໜຶ່ງເຫັນແບບນັ້ນຈຶ່ງເວົ້າຂຶ້ນວ່າ"

ໝູ່ເອີຍ ໝູ່ຊະນະຢູ່ຝ່າຍດຽວ ຈົ່ງຄືນໝາກສະກາໃຫ້ເຮົາແດ່ ເຮົາຈະບູຊາ" ນັກເລງໝາກສະກາຄົນນັ້ນ ຮັບຄຳແລ້ວ ມອບໝາກສະກາຄືນ ຕໍ່ມານັກເລງໝາກສະກາຄົນທີ ໒ ເອົາຢາພິດທາໃສ່ລູກໝາກສະກາ ແລ້ວບອກວ່າ "ມາເທີ້ນໝູ່ ເຮົາຈັກຫຼີ້ນໝາກສະກາກັນຕໍ່" ນັກເລງໝາກສະກາຄົນທຳອິດຮັບຄຳແລ້ວ

ແມ່ນເທື່ອທີ ໒ ນັກເລງໝາກສະກາທັງ ໒ ກໍຫຼີ້ນໝາກສະກາກັນຕໍ່ ແມ່ນເທື່ອທີ ໒ ນັກເລງໝາກສະກາຄົນທຳອິດກໍຍັງກືນເບ້ຍທີ່ຈະເຮັດໃຫ້ປຣາໄຊ ກືນແລ້ວກືນອີກ ນັກເລງໝາກສະກາຄົນທີ ໒ ເຫັນນັກເລງຄົນທຳອິດກືນເບ້ຍທີ່ຈະເຮັດໃຫ້ປຣາໄຊໄປຈົນໝົດ ຈຶ່ງໄດ້ເວົ້າກັບນັກເລງໝາກສະກາແບບນີ້ວ່າ

"ເຈົ້າກຳລັງກືນລູກໝາກສະກາເຄືອບຢາພິດ
ຢ່າງແຮງລົງໄປແລ້ວກໍຍັງບໍ່ຮູ້ໂຕ
ເຮີຍເຈົ້ານັກເລງຊົ່ວ ເຈົ້າຈົ່ງກືນເຂົ້າໄປ
ພິດຮ້າຍແຮງຈັກອອກລິດແກ່ເຈົ້າພາຍຫຼັງເອງ"

ຂໍຖວາຍພຣະພອນ ມະຫາບໍພິດ ພຣະອົງກໍເຊັ່ນດຽວກັບນັກເລງໝາກສະການັ້ນ ໂຜດສະລະທິດຖິຊົ່ວນັ້ນເທີ້ນ ປ່ອຍວາງທິດຖິຊົ່ວນັ້ນເທີ້ນ ທິດຖິຊົ່ວແບບນັ້ນຢ່າໄດ້ເກີດມີແກ່ພຣະອົງເພື່ອບໍ່ເກື້ອກູນ ເພື່ອຄວາມທຸກຕະຫຼອດກາລະນານເລີຍ"

[໔๓໕] "ທ່ານກັດສະປະ ເວົ້າແນວນັ້ນກໍຈິງຢູ່ ແຕ່ຂ້າພະເຈົ້າກໍຍັງບໍ່ອາດສະລະທິດຖິຊົ່ວນີ້ໄດ້ພຣະເຈົ້າປະເສນທິໂກສົນ ຫຼື ພຣະຣາຊານອກອານາຈັກຮູ້ຈັກຂ້າພະເຈົ້າແນວນີ້ວ່າ "ເຈົ້າປາຍາສິມີວາທະແນວນີ້ ມີທິດຖິແນວນີ້ວ່າ "ແມ່ນເພາະເຫດນີ້ ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີຜົນວິບາກແຫ່ງກໍາທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ"

ຫາກຂ້າພະເຈົ້າສະລະທິດຖິຊົ່ວນີ້ໄປແລ້ວ ຈະມີຄົນວ່າຂ້າພະເຈົ້າໄດ້ວ່າ "ເຈົ້າປາຍາສິນີ້ຊ່າງໂງ່ຈ້າ ບໍ່ສະຫຼາດ ຍຶດຖືແຕ່ສິ່ງຜິດ ໆ" ຂ້າພະເຈົ້າຈະຍຶດຖືທິດຖິນັ້ນຕໍ່ໄປ ເພາະຄວາມໂກດເຄືອງ ເພາະຄວາມລົບຫລູ່ ເພາະຄວາມແຂ່ງດີ"

## ອຸບປະມາດ້ວຍຄົນຫອບເປືອກປ່ານ

[໔๓໖] ທ່ານພຣະກຸມານກັດສະປະ ຖວາຍພຣະພອນວ່າ "ຂໍຖວາຍພຣະພອນ ມະຫາບໍພິດ ຖ້າເປັນແນວນັ້ນ ອາດຕະມາຈະຍົກອຸບປະມາຖວາຍພຣະອົງໃຫ້ສະດັບຕື່ມອີກວ່າ ຄົນສະຫຼາດລາງພວກໃນໂລກນີ້ ສາມາດເຂົ້າໃຈຄວາມໝາຍແຫ່ງຖ້ອຍຄໍາໄດ້ ດ້ວຍການອຸບປະມາໂວຫານນີ້ວ່າຈັ່ງໃດ ເລື້ອງເຄີຍມີມາແລ້ວໃນເມືອງແຫ່ງໜຶ່ງ ມີສະຫາຍຜູ້ໜຶ່ງຮຽກສະຫາຍມາບອກວ່າ "ມາເທີ້ນໝູ່ ເຮົາຈະເຂົ້າໄປສູ່ເມືອງນັ້ນ ບໍ່ແນ່ລາງເທື່ອເຮົາອາດຈະຫາຊັບໃນເມືອງນັ້ນໄດ້" ສະຫາຍຄົນທີ ໔ ຮັບຄໍາຂອງໝູ່ແລ້ວ ພາກັນເຂົ້າໄປສູ່ຊົນນະບົດ ຮອດຖະໜົນໃນໝູ່ບ້ານແຫ່ງໜຶ່ງ ເຫັນເປືອກປ່ານທີ່ເຂົາຖິ້ມໄວ້ຫຼາຍໃນບ່ອນນັ້ນ ສະຫາຍຄົນທໍາອິດບອກສະຫາຍຄົນທີ ໔ ວ່າ "ໝູ່ເອີຍ ເຂົາຖິ້ມເປືອກປ່ານໄວ້ຫຼາຍ ຖ້າເປັນແນວນັ້ນໝູ່ຈົ່ງມັດເປືອກປ່ານໄປ ໑ ມັດ ເຮົາຈະມັດອີກ ໑ ມັດ ເຮົາ ໔ ຄົນ ຈະຊ່ອຍກັນຂົນເປືອກປ່ານໄປ" ສະຫາຍຄົນທີ ໔ ຮັບຄໍາແລ້ວ ມັດເປືອກປ່ານ ໑ ມັດ ແລ້ວຕ່າງຊ່ອຍກັນຫອບເປືອກປ່ານເຂົ້າໄປສູ່ຖະໜົນໃນຫມູ່ບ້ານອີກສາຍໜຶ່ງ ໄດ້ເຫັນເສັ້ນປ່ານທີ່ເຂົາຖິ້ມໄວ້ຫຼາຍໃນບ່ອນນັ້ນ ສະຫາຍຄົນທໍາອິດຈຶ່ງບອກສະຫາຍອີກຄົນໜຶ່ງວ່າ "ໝູ່ເອີຍ ເຮົາຈະປາຖະໜາເປືອກປ່ານໄປເພື່ອຫຍັງ ນີ້ເສັ້ນປ່ານທີ່ເຂົາຖິ້ມໄວ້ຫຼາຍ ຖ້າເປັນແນວນັ້ນໝູ່ຈົ່ງຖິ້ມມັດເປືອກປ່ານໄປເທີ້ນ ເຮົາກໍຈະຖິ້ມຄືກັນ ເຮົາມາຊ່ອຍກັນນໍາມັດເສັ້ນປ່ານໄປແທນດີກວ່າ" ສະຫາຍຄົນທີ ໔ ຕອບວ່າ "ໝູ່ເອີຍ ເຮົາຫອບມັດເປືອກປ່ານນີ້ມາແຕ່ໄກ ພ້ອມມັດໄວ້ຮຽບຮ້ອຍດີແລ້ວ ເຮົາຈະບໍ່ຖິ້ມໄປເດັດຂາດທ່ານຈົ່ງຮູ້ໄວ້ແນວນີ້ເທີ້ນ"

ລໍາດັບນັ້ນ ສະຫາຍຄົນທໍາອິດໄດ້ຖິ້ມມັດເປືອກປ່ານ ແລ້ວນໍາມັດເສັ້ນປ່ານແທນ

ເມື່ອແລ້ວ ສະຫາຍທັງສອງໄດ້ພາກັນເຂົ້າໄປສູ່ຖະໜົນໃນຫມູ່ບ້ານອີກສາຍໜຶ່ງໄດ້ເຫັນຜ້າປ່ານທີ່ເຂົາຖິ້ມໄວ້ຫຼາຍໃນທີ່ແຫ່ງນັ້ນອີກ ສະຫາຍຄົນທໍາອິດຈຶ່ງບອກສະຫາຍອີກຄົນໜຶ່ງວ່າ "ເຮົາຈະປາຖະໜາເປືອກປ່ານ ແລະ ເສັ້ນປ່ານໄປເພື່ອຫຍັງ ນີ້ຜ້າປ່ານທີ່ເຂົາຖິ້ມໄວ້ມີຫຼາຍ ຖ້າເປັນແນວນັ້ນ ທ່ານຈົ່ງຖິ້ມມັດເປືອກປ່ານໄປສາ ເຮົາກໍຈະຖິ້ມມັດເສັ້ນປ່ານຄືກັນ ພວກເຮົາມາຊ່ອຍກັນນໍາມັດຜ້າປ່ານໄປແທນດີກວ່າ" ສະຫາຍຄົນທີ ໔ ຕອບວ່າ "ໝູ່ເອີຍ ເຮົາຫອບມັດ

ເປືອກປ່ານນີ້ມາຕັ້ງໄກພ້ອມທັງໄດ້ມັດໄວ້ຮຽບຮ້ອຍດີແລ້ວ ເຮົາຈະບໍ່ຖິ້ມໄປເດັດຂາດໝູ່ຈົ່ງຮູ້ແນວນີ້ເທີ້ນ"

ລຳດັບນັ້ນ ສະຫາຍຄົນທຳອິດໄດ້ຖິ້ມມັດເສັ້ນປ່ານໄປ ແລ້ວນຳມັດຜ້າປ່ານໄປແທນ

ຕໍ່ມາອີກ ສະຫາຍທັງສອງພາກັນເຂົ້າໄປສູ່ຖະໜົນໃນໝູ່ບ້ານອີກສາຍໜຶ່ງ ໄດ້ເຫັນເປືອກໄມ້ໂຂມະທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ດ້າຍເປືອກໄມ້ໂຂມະທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ຜ້າເປືອກໄມ້ໂຂມະທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ແກ່ນຝ້າຍທີ່ເຂົາຖິ້ມໄວ້ ຫຼາຍ ໆລໆ ເສັ້ນຝ້າຍທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ຜ້າຝ້າຍທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ເຫຼັກທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ໂລຫະທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ດີບຸກທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ສຳຣິດທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ເງິນທີ່ເຂົາຖິ້ມໄວ້ຫຼາຍ ໆລໆ ຄຳທີ່ເຂົາຖິ້ມໄວ້ຫຼາຍໃນບ່ອນນັ້ນ ສະຫາຍຄົນທຳອິດຈຶ່ງບອກແກ່ສະຫາຍອີກຄົນໜຶ່ງວ່າ "ໝູ່ເອີຍ ເຮົາຈະປາຖະໜາເປືອກປ່ານ ເສັ້ນປ່ານ ຜ້າປ່ານ ເປືອກໄມ້ໂຂມະ ເສັ້ນເປືອກໄມ້ໂຂມະ ຜ້າເປືອກໄມ້ໂຂມະ ແກ່ນຝ້າຍ ເສັ້ນຝ້າຍ ຜ້າຝ້າຍ ເຫຼັກ ໂລຫະ ດີບຸກ ສຳຣິດ ຫຼືເງິນ ໄປເພື່ອຫຍັງກັນ ນີ້ຄຳທີ່ເຂົາຖິ້ມໄວ້ຫຼາຍ ທ່ານຈົ່ງຖິ້ມມັດເປືອກປ່ານສາເທີ້ນ ເຮົາກໍຈະຖິ້ມຫໍ່ເງິນຄືກັນ ພວກເຮົາມາຊ່ອຍກັນນຳຫໍ່ຄຳໄປເທີ້ນ" ສະຫາຍຄົນທີ ໒ ຕອບວ່າ "ໝູ່ເອີຍ ເຮົາຫອບມັດເປືອກປ່ານນີ້ມາຕັ້ງໄກ ອີກທັງໄດ້ມັດໄວ້ຮຽບຮ້ອຍດີແລ້ວ ເຮົາຈະບໍ່ຖິ້ມໄປເດັດຂາດ ທ່ານຈົ່ງຮູ້ໄວ້ແນວນີ້ເທີ້ນ"

ລຳດັບນັ້ນ ສະຫາຍຄົນທຳອິດຖິ້ມຫໍ່ເງິນ ແລ້ວນຳເອົາຫໍ່ຄຳໄປແທນ

ສະຫາຍທັງສອງພາກັນເຂົ້າໄປສູ່ຫມູ່ບ້ານຂອງຕົນ ໃນບັນດາສະຫາຍທັງ ໒ ຄົນນັ້ນ ຄົນທີ່ຫອບມັດເປືອກປ່ານໄປບໍ່ໄດ້ຮັບຄວາມຊົມຊື່ນຍິນດີ ຈາກມານດາ ບິດາ ບໍ່ໄດ້ຮັບຄວາມຊົມຊື່ນຍິນດີຈາກບຸດພັນລະຍາ ບໍ່ໄດ້ຮັບຄວາມຊົມຊື່ນຍິນດີຈາກມິດ ອຳມາດ ອີກທັງບໍ່ໄດ້ຮັບຄວາມສຸກໂສມະນັດທີ່ເກີດຈາກການຫອບເປືອກປ່ານມາແຕ່ໄກ

ສ່ວນສະຫາຍອີກຄົນໜຶ່ງ ທີ່ນຳຫໍ່ຄຳກັບມາໄດ້ຮັບຄວາມຊົມຊື່ນຍິນດີຈາກມານດາ ບິດາ ໄດ້ຮັບຄວາມຊົມຊື່ນຍິນດີຈາກບຸດ ພັນລະຍາ ໄດ້ຮັບຄວາມຊົມຊື່ນຍິນດີຈາກມິດ ອຳມາດ ອີກທັງໄດ້ຮັບຄວາມສຸກໂສມະນັດທີ່ເກີດຈາກການນຳຫໍ່ຄຳກັບມາ

ຂໍຖວາຍພຣະພອນ ມະຫາບໍພິດ ພຣະອົງກໍເຊັ່ນດຽວກັບບຸຣຸດຜູ້ຂົນມັດເປືອກປ່ານນັ້ນ ພຣະອົງໂຜດສະລະທິດຖິຊົ່ວນັ້ນໄປສາເທີ້ນ ປ່ອຍວາງທິດຖິຊົ່ວນັ້ນເທີ້ນ ທິດຖິຊົ່ວແນວນັ້ນ ຢ່າໄດ້ເກີດມີແກ່ພຣະອົງ ເພື່ອບໍ່ເກື້ອກູນ ເພື່ອຄວາມທຸກຕະຫຼອດກາລະນານເລີຍ"

ເຈົ້າປາຍາສິຊົງຮັບສະຣະນະຄົມ

[໔໓໗] ເຈົ້າປາຍາສິຕັດວ່າ "ພຽງອຸບປະມາໂວຫານຂໍ້ເທື່ອທຳອິດ ຂອງທ່ານກັດສະປະທີ່ນັ້ນ ຂ້າພະເຈົ້າກໍພໍໃຈຢ່າງຍິ່ງແລ້ວ ແຕ່ຢາກຈະຟັງປະຕິພານໃນການຕອບບັນຫາທີ່ວິຈິດອີກ ຈຶ່ງທຳທ່າໂຕ້ແຍ້ງທ່ານກັດສະປະໄປແນວນັ້ນເອງ ພາສິດຂອງທ່ານກັດສະປະຊັດແຈ້ງ ມ່ວນຫຼາຍ ພາສິດຂອງທ່ານກັດສະປະຊັດແຈ້ງ ມ່ວນຫຼາຍ ທ່ານກັດສະປະປະກາດທຳຊັດແຈ້ງໂດຍປະການຕ່າງໆ ປຽບຄືບຸກຄົນຫງາຍຂອງທີ່ຂວໍ້າ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພະເຈົ້າຂໍຖືພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງ ເປັນສະຣະນະ ຂໍທ່ານກັດສະປະໂຜດຈື່ຂ້າພະເຈົ້າວ່າເປັນອຸປາສົກຜູ້ຖືສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ ຂ້າພະເຈົ້າປາຖະໜາຈະບູຊາມະຫາຍັນ ຂໍທ່ານກັດສະປະໂຜດຊີ້ແຈ່ງວິທີບູຊາມະຫາຍັນ ອັນເປັນໄປເພື່ອການເກື້ອກູນເພື່ອຄວາມສຸກແກ່ຂ້າພະເຈົ້າ ຕະຫຼອດກາລະນານເທີ້ນ"

## ວ່າດ້ວຍຍັນພິທີ

[໔໓໘] ທ່ານພຣະກຸມານກັດສະປະ ຖວາຍພຣະພອນວ່າ "ຂໍຖວາຍພຣະພອນ ມະຫາບໍພິດ ຍັນທີ່ມີການຂ້າງົວ ຍັນທີ່ມີການຂ້າແບ້ແກະ ຍັນທີ່ມີການຂ້າໄກ່ໝູ ຍັນທີ່ເຮັດໃຫ້ສັດຕ່າງໆໄດ້ຮັບຄວາມເດືອດຮ້ອນ ແລະ ຜູ້ຮັບ (ຍັນ) ກໍເປັນຜູ້ມີມິດສາທິດຖິ ມີມິດສາສັງກັບປະ ມີມິດສາວາຈາ ມີມິດສາກຳມັນຕະ ມີມິດສາອາຊີວະ ມີມິດສາສະຕິ ມີມິດສາສະມາທິແນວນີ້ ບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ບໍ່ມີຄວາມຈະເລີນຮຸ່ງເຮືອງຫຼາຍ ບໍ່ມີຄວາມແຜ່ຫຼາຍແຫ່ງບຸນ ປຽບຄືຊາວນາຖືເມັດພືດ ແລະ ໄຖເຂົ້າໄປປ່າ ແລ້ວຫວ່ານເມັດພືດທີ່ເນົ່າເສຍຍັງບໍ່ສຸກດີລົງໃນນາໄຮ່ທີ່ບໍ່ດີ ມີພື້ນທີ່ບໍ່ເໝາະ ບໍ່ແຜ້ວຖາງຕໍ ແລະ ໜາມໃຫ້ໝົດໄປ ທັງຝົນກໍບໍ່ຕົກຕາມລະດູການ ເມັດພືດເຫຼົ່ານັ້ນຈະຈະເລີນງອກງາມໄດ້ຢູ່ ຫຼື ຊາວນາຈະໄດ້ຮັບຜົນທີ່ໄດ້ລົງແຮງໄປຢູ່ບໍ່"

ເຈົ້າປາຍາສິຕັດຕອບວ່າ "ບໍ່ໄດ້ເລີຍ ທ່ານກັດສະປະ"

ທ່ານພຣະກຸມານກັດສະປະ ຖວາຍພຣະພອນວ່າ "ຂໍຖວາຍພຣະພອນມະຫາບໍພິດ ຍັນທີ່ມີການຂ້າງົວ ຍັນທີ່ມີການຂ້າແບ້ແກະ ຍັນທີ່ມີການຂ້າໄກ່ ໝູ ຍັນທີ່ເຮັດໃຫ້ສັດຕ່າງ ໆ ໄດ້ຮັບຄວາມເດືອດຮ້ອນ ແລະ ຜູ້ຮັບ (ຍັນ) ກໍເປັນຜູ້ມີມິດສາທິດຖິ ມີມິດສາສັງກັບປະ ມີມິດສາວາຈາ ມີມິດສາກຳມັນຕະ ມີມິດສາອາຊີວະ ມີມິດສາວາຍາມະ ມີມິດສາສະຕິ ມີມິດສາສະມາທິແນວນີ້ ຍ່ອມບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ບໍ່ມີຄວາມຈະເລີນຮຸ່ງເຮືອງຫຼາຍ ບໍ່ມີຄວາມແຜ່ຫຼາຍ ແຫ່ງບຸນ" ສ່ວນຍັນທີ່ບໍ່ມີການຂ້າງົວ ຍັນທີ່ບໍ່ມີການຂ້າແບ້ແກະ ຍັນທີ່ບໍ່ມີການຂ້າໄກ່ໝູ ຍັນທີ່ບໍ່ເຮັດໃຫ້ສັດຕ່າງໆໄດ້ຮັບຄວາມເດືອດຮ້ອນ ແລະ ຜູ້ຮັບກໍເປັນຜູ້ມີສຳມາທິດຖິ ມີສຳມາສັງກັບປະມີສຳມາວາຈາ ມີສຳມາກຳມັນຕະ ມີສຳມາອາຊີວະ ມີສຳມາວາຍາມະ ມີສຳມາສະຕິ ມີສຳມາສະມາທິແນວນີ້ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຈະເລີນຮຸ່ງເຮືອງຫຼາຍ ມີຄວາມແຜ່ຫຼາຍແຫ່ງ

ບຸນກຸສົນ ປຽບຄື ຊາວນາຖືເມັດພືດ ແລະ ໄຖເຂົ້າໄປໃນປ່າ ແລ້ວຫວ່ານເມັດພືດທີ່ບໍ່ເນົ່າເສຍ ສຸກດີ ລົງໃນໄຮ່ນາທີ່ດີ ມີພື້ນທີ່ເໝາະ ແຜ້ວຖາງຕໍ ແລະ ໜາມໃຫ້ໝົດໄປ ທັງຝົນກໍຕົກຕາມລະດູການ ພືດເຫຼົ່ານັ້ນຈະສາມາດຈະເລີນງອກງາມໄດ້ຢູ່ບໍ? ຊາວນາຈະໄດ້ຮັບຜົນທີ່ຕົນໄດ້ລົງແຮງເຮັດໄປຢູ່ບໍ?"

ເຈົ້າປາຍາສິຕັດຕອບວ່າ "ໄດ້ຢ່າງແນ່ນອນ ທ່ານກັດສະປະ"

ທ່ານພຣະກຸມານກັດສະປະ ຖວາຍພຣະພອນວ່າ "ຍັນທີ່ບໍ່ມີການຂ້າງົວ ຍັນທີ່ບໍ່ມີການຂ້າແບ້ ແກະ ຍັນທີ່ບໍ່ມີການຂ້າໄກ່ ໝູ ຍັນທີ່ບໍ່ເຮັດໃຫ້ສັດຕ່າງໆໄດ້ຮັບຄວາມເດືອນຮ້ອນ ແລະຜູ້ຮັບກໍເປັນຜູ້ມີສຳມາທິດຖິ ມີສຳມາສັງກັບປະ ມີສຳມາວາຈາ ມີສຳມາກຳມັນຕະ ມີສຳມາອາຊີວະ ມີສຳມາວາຍາມະ ມີສຳມາສະຕິ ມີສຳມາສະມາທິແບບນີ້ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຈະເລີນຮຸ່ງເຮືອງຫຼາຍ ມີຄວາມແຜ່ຫຼາຍແຫ່ງບຸນກຸສົນ"

## ເລື່ອງອຸດຕະຣະມານົບ

[໔໓໙] ຕໍ່ມາເຈົ້າປາຍາສິ ຊົງເລີ່ມໃຫ້ທານແກ່ສະມະນະພາມ ຄົນກຳພ້າ ຄົນເດີນທາງ ວະນິພົກ ແລະ ພວກຍາຈົກ ແຕ່ໃນທານນັ້ນ ພຣະອົງປະທານໂພຊະນະເຫັນປານນີ້ ຄື ເຂົ້າປາຍ ມີນ້ຳສົ້ມຜັກເປັນຂອງກັບ ໄດ້ປະທານຜ້າເນື້ອຫຍາບ ມີສົ້ນຂອດເປັນປຸ້ມ ໆ ໃນການໃຫ້ທານນັ້ນ ມີອຸດຕະຣະມານົບເປັນເຈົ້າໜ້າທີ່ ອຸດຕະຣະມານົບໃຫ້ທານແລ້ວ ອຸທິດແບບນີ້ວ່າ "ດ້ວຍຜົນທານນີ້ ຂ້າພະເຈົ້າຂໍຢູ່ຮ່ວມກັບເຈົ້າປາຍາສິໃນໂລກນີ້ທໍ່ນັ້ນ ຢ່າໄດ້ຢູ່ຮ່ວມກັນອີກໃນໂລກໜ້າເລີຍ"

ເຈົ້າປາຍາສິ ຊົງສະດັບວ່າ "ຮູ້ວ່າ ອຸດຕະຣະມານົບໃຫ້ທານແລ້ວ ອຸທິດແບບນີ້ວ່າ"ດ້ວຍຜົນທານນີ້ ຂ້າພະເຈົ້າຂໍຢູ່ຮ່ວມກັບເຈົ້າປາຍາສິໃນໂລກນີ້ທໍ່ນັ້ນ ຢ່າໄດ້ຢູ່ຮ່ວມກັນອີກໃນໂລກໜ້າເລີຍ" ຕໍ່ມາພຣະອົງຈຶ່ງຮັບສັ່ງໃຫ້ຮຽກອຸດຕະຣະມານົບມາຕັດຖາມວ່າ "ອຸດຕະຣະ ທ່ານໃຫ້ທານແລ້ວ ອຸທິດແບບນີ້ວ່າ "ດ້ວຍຜົນທານນີ້ ຂ້າພະເຈົ້າຂໍຢູ່ຮ່ວມກັບເຈົ້າປາຍາສິໃນໂລກນີ້ທໍ່ນັ້ນ ຢ່າໄດ້ຢູ່ຮ່ວມກັນອີກໃນໂລກໜ້າເລີຍ" ແມ່ນແທ້ບໍ?"

ອຸດຕະຣະມານົບຂາບທູນວ່າ "ເປັນຄວາມຈິງແບບນັ້ນ ຂ້ານ້ອຍ"

ເຈົ້າປາຍາສິຕັດຖາມວ່າ "ອຸດຕະຣະ ກໍເພາະເຫດໃດ? ທ່ານໃຫ້ທານແລ້ວຈຶ່ງອຸທິດແບບນີ້ວ່າ "ດ້ວຍຜົນທານນີ້ ຯລຯ ຢ່າໄດ້ຢູ່ຮ່ວມກັນອີກໃນໂລກໜ້າເລີຍ" ພວກເຮົາຕ້ອງການບຸນຫວັງຜົນແຫ່ງທານບໍ່ແມ່ນບໍ"

ອຸດຕະຣະມານົບຂາບທູນວ່າ "ໃນທານຂອງພຣະອົງ ຍັງມີການປະທານໂພຊະນະອາຫານເຫັນປານນີ້ ມີແຕ່ປາຍເຂົ້າ ນ້ຳສົ້ມຜັກເປັນຂອງກັບ ເຊິ່ງພຣະອົງເອງກໍບໍ່ຊົງປາຖະໜາແມ່ນ

ວ່າແຕະຕ້ອງດ້ວຍພຣະບາດ ບໍ່ຕ້ອງເວົ້າຮອດຈະຊົງສະເຫວີຍໄດ້ ອັນໜຶ່ງ ຜ້າກໍເນື້ອຫຍາບມີສິ້ນຂອດເປັນປຸ້ມ ໆ ເຊິ່ງພຣະອົງເອງກໍບໍ່ຊົງປາຖະໜາແມ່ນວ່າແຕະຕ້ອງດ້ວຍພຣະບາດ ບໍ່ຕ້ອງເວົ້າຮອດຈະຊົງນຸ່ງຫົ່ມໄດ້ ພຣະອົງຊົງເປັນທີ່ຮັກເປັນທີ່ພໍໃຈ ຂອງພວກຂ້າພຣະອົງ ພວກຂ້າພຣະອົງ ຈະບູຊາຜູ້ເຊິ່ງເປັນທີ່ຮັກເປັນທີ່ພໍໃຈ ດ້ວຍສິ່ງທີ່ບໍ່ໜ້າພໍໃຈໄດ້ແນວໃດ"

ເຈົ້າປາຍາສິຕັດວ່າ "ອຸດຕະຣະ ຖ້າເປັນແນວນັ້ນທ່ານຈົ່ງກະກຽມໂພຊະນະຊະອາຫານແນວດຽວກັບທີ່ເຮົາບໍລິໂພກ ຈົ່ງກະກຽມຜ້າແນວດຽວກັບທີ່ເຮົານຸ່ງຫົ່ມເທີ້ນ"

ອຸດຕະຣະມານົບທູນຮັບສະໜອງພຣະດຳຣັດ ແລ້ວກະກຽມໂພຊະນະແນວດຽວກັບທີ່ເຈົ້າປາຍາສິສະເຫວີຍ ແລະ ກະກຽມຜ້າແນວດຽວກັບທີ່ເຈົ້າປາຍາສິຊົງນຸ່ງຫົ່ມ

[໔໔໐] ຕໍ່ມາ ເພາະເຫດທີ່ເຈົ້າປາຍາສິຊົງໃຫ້ທານໂດຍບໍ່ເຄົາຣົບ ບໍ່ຊົງໃຫ້ທານດ້ວຍພຣະຫັດຂອງພຣະອົງເອງ ຊົງໃຫ້ທານໂດຍຄວາມບໍ່ນອບນ້ອມ ແຕ່ຊົງໃຫ້ທານຄືກັບໂຍນຖິ້ມຫຼັງຈາກສິ້ງຊີບແລ້ວ ເຂົ້າເຖິງຜູ້ຢູ່ຮ່ວມກັບພວກເທບຊັ້ນຈາຕຸມະຫາຣາດ ຄື ໄດ້ວິມານວ່າງເປົ່າ ຊື່ ເສຣີສະກະວິມານ"

ສ່ວນອຸດຕະຣະມານົບ ຜູ້ເປັນເຈົ້າໜ້າທີ່ໃນການໃຫ້ທານຂອງເຈົ້າປາຍາສິນັ້ນ ໃຫ້ທານໂດຍເຄົາຣົບ ໃຫ້ທານດ້ວຍມືຂອງຕົນເອງ ໃຫ້ທານໂດຍຄວາມນອບນ້ອມ ບໍ່ແມ່ນໃຫ້ທານຄືກັບໂຍນຖິ້ມ ຫຼັງຈາກຕາຍແລ້ວ ໄປເກີດໃນສຸກຄະຕິໂລກສະຫວັນ ຢູ່ຮ່ວມກັບພວກເທບຊັ້ນຕາວະຕິງສາ

## ປາຍາສິເທບພະບຸດ

[໔໔໑] ສະໄໝຕໍ່ມາ ທ່ານພຣະຄະວັມປະຕິ ພັກກາງເວັນໃນເສຣີສະກະວິມານທີ່ວ່າງເປົ່າຢູ່ເລື້ອຍ ໆ ລຳດັບນັ້ນ ປາຍາສິເທບພະບຸດເຂົ້າໄປຫາທ່ານພຣະຄະວັມປະຕິ ເຖິງບ່ອນຢູ່ ໄຫວ້ແລ້ວຢືນຢູ່ໃນບ່ອນສົມຄວນ ທ່ານພຣະຄະວັມປະຕິ ຖາມປາຍາສິເທບພະບຸດວ່າ "ທ່ານເປັນໃຜ"

ປາຍາສິເທບພະບຸດຕອບວ່າ "ຂ້າພະເຈົ້າ ເຈົ້າປາຍາສິ ຂ້ານ້ອຍ"

ທ່ານພຣະຄະວັມປະຕິຖາມວ່າ "ທ່ານເປັນຜູ້ມີທິດຖິແນວນີ້ວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ແມ່ນແທ້ບໍ?"

ປາຍາສິເທບພະບຸດຕອບວ່າ "ແມ່ນແທ້ ຂ້າພະເຈົ້າເຄີຍມີທິດຖິແນວນັ້ນວ່າ "ແມ່ນເພາະເຫດນີ້ໂລກອື່ນບໍ່ມີ ໂອປະປາຕິກະສັດບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ" ແຕ່ພຣະຜູ້ເປັນເຈົ້າກຸມານກັດສະປະ ໄດ້ຊີ້ນຳໃຫ້ຂ້າພະເຈົ້າອອກຈາກທິດຖິຊົ່ວນັ້ນແລ້ວ"

ທ່ານພຣະຄະວັມປະຕິຖາມວ່າ "ກໍ ອຸດຕະຣະມານົບ ຜູ້ເປັນເຈົ້າໜ້າທີ່ໃນການໃຫ້ທານຂອງທ່ານໄປເກີດບ່ອນໃດ?"

ປາຍາສິເທບພະບຸດຕອບວ່າ "ອຸດຕະຣະມານົບ ຜູ້ເປັນເຈົ້າໜ້າທີ່ໃນການໃຫ້ທານຂອງຂ້າພະເຈົ້າ ໃຫ້ທານໂດຍເຄົາຣົບ ໃຫ້ທານດ້ວຍມືຂອງຕົນ ໃຫ້ທານໂດຍຄວາມນອບນ້ອມບໍ່ແມ່ນໃຫ້ທານຄືກັບໂຍນຖິ້ມ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ ຢູ່ຮ່ວມກັບພວກເທບຊັ້ນຕາວະຕຶງສາ ສ່ວນຂ້າພະເຈົ້າໃຫ້ທານໂດຍບໍ່ເຄົາຣົບ ບໍ່ໃຫ້ທານດ້ວຍມືຂອງຕົນ ໃຫ້ທານໂດຍຄວາມບໍ່ນອບນ້ອມ ໃຫ້ທານຄືກັບໂຍນຖິ້ມ ຫຼັງຈາກຕາຍແລ້ວເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນຈາຕຸມະຫາຣາດ ຄື ໄດ້ວິມານວ່າງເປົ່າ ຊື່ ເສຣີສະກະວິມານ ທ່ານຄວັມປະຕິຂ້ານ້ອຍຂໍທ່ານຈົ່ງໄປສູ່ມະນຸດໂລກ ປະກາດແນວນີ້ວ່າ "ທ່ານທັງຫຼາຍຈົ່ງໃຫ້ທານໂດຍເຄົາຣົບໃຫ້ທານດ້ວຍມືຂອງຕົນເອງ ໃຫ້ທານໂດຍຄວາມນອບນ້ອມ ຢ່າໃຫ້ທານຄືກັບໂຍນຖິ້ມເຈົ້າປາຍາສິຊົງໃຫ້ທານໂດຍບໍ່ເຄົາຣົບ ບໍ່ຊົງໃຫ້ທານດ້ວຍມືຂອງພຣະອົງເອງ ຊົງໃຫ້ທານໂດຍຄວາມບໍ່ນອບນ້ອມ ຊົງໃຫ້ທານຄືກັບໂຍນຖິ້ມ ຫຼັງຈາກໝົດອາຍຸແລ້ວໄດ້ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນຈາຕຸມະຫາຣາດ ຄື ໄດ້ວິມານວ່າງເປົ່ວ ຊື່ ເສຣີສະກະວິມານ ສ່ວນອຸດຕະຣະມານົບຜູ້ເປັນເຈົ້າໜ້າທີ່ໃນການໃຫ້ທານ ຂອງເຈົ້າປາຍາສິນັ້ນໃຫ້ທານໂດຍເຄົາຣົບ ໃຫ້ທານດ້ວຍມືຂອງຕົນ ໃຫ້ທານໂດຍຄວາມນອບນ້ອມ ບໍ່ແມ່ນໃຫ້ທານຄືກັບໂຍນຖິ້ມ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ ຢູ່ຮ່ວມກັບພວກເທບຊັ້ນຕາວະຕຶງສາ"

ຕໍ່ມາ ເມື່ອທ່ານພຣະຄະວັມປະຕິກັບມາສູ່ມະນຸດໂລກ ແລ້ວໄດ້ປະກາດແນວນີ້ວ່າ "ທ່ານທັງຫຼາຍຈົ່ງໃຫ້ທານໂດຍເຄົາຣົບ ໃຫ້ທານດ້ວຍມືຂອງຕົນ ໃຫ້ທານໂດຍຄວາມນອບນ້ອມຢ່າໃຫ້ທານຄືກັບໂຍນຖິ້ມ ເຈົ້າປາຍາສິຊົງໃຫ້ທານໂດຍບໍ່ເຄົາຣົບ ບໍ່ຊົງໃຫ້ທານດ້ວຍພຣະຫັດຂອງພຣະອົງຊົງໃຫ້ທານໂດຍບໍ່ນອບນ້ອມ ຊົງໃຫ້ທານຄືກັບໂຍນຖິ້ມ ຫຼັງຈາກໝົດອາຍຸແລ້ວ ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກເທບຊັ້ນຈາຕຸມະຫາຣາດ ຄື ໄດ້ວິມານວ່າງເປົ່າ ຊື່ ເສຣີສະກະວິມານ ສ່ວນອຸດຕະຣະມານົບຜູ້ເປັນເຈົ້າໜ້າທີ່ໃນການໃຫ້ທານ ຂອງເຈົ້າປາຍາສິໃຫ້ທານໂດຍຄວາມເຄົາຣົບ ໃຫ້ທານດ້ວຍມືຂອງຕົນ ໃຫ້ທານໂດຍຄວາມນອບນ້ອມ ບໍ່ແມ່ນໃຫ້ທານຄືກັບໂຍນຖິ້ມ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ ໄດ້ຢູ່ຮ່ວມກັບພວກເທບຊັ້ນຕາວະຕຶງສາ"

**ປາຍາສິສູດທີ ໑໐ ຈົບ**

# ລວມພຣະສູດທີ່ມີໃນວັກນີ້



ສູດທັງຫຼາຍນີ້ຮຽກວ່າມະຫາວັກ

**ມະຫາວັກຈົບ**